# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໗

## ພຣະວິໄນ

## ເຫຼັ້ມທີ ໗

## ປະຣິວານ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮີບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກ່ຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໗

# ພຣະວິໄນ

## ເຫຼັ້ມທີ ໗

# ປະຣິວານ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

# ໑. ພິກຂຸວິພັງ

### ໂສລະສະມະຫາວາຣະ ຕອນ ໑

## ໑. ກັດຖະປັນຍັດຕິວາຣະ

## ວາຣະວ່າດ້ວຍບັນຍັດຢູ່ໃສ

## ໑. ປາຣາຊິກກັນ

ຄໍາຖາມ - ຄໍາຕອບສະຖານທີ່ບັນຍັດເປັນຕົ້ນໃນປາຣາຊິກກັນ

[໑] ພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກສິກຂາບົດທີ ໑ ຢູ່ໃສ? ຊົງຜາຣົບໃຜ? ຍ້ອນເລື້ອງອັນໃດ?

ໃນປາຣາຊິກສິກຂາບົດທີ ໑ ນັ້ນ ມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະບັນຍັດ ສັບພັດຖະບັນຍັດ ປະເທສະບັນຍັດ ສາທາລະນະບັນຍັດ ອະສາທາລະນະບັນຍັດ ເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ບັນດາປາຕິໂມກຂຸດເທດ ໕ ອຸດເທດ ປາຣາຊິກສິກຂາບົດທີ ໑ ນັ້ນ ຈັດເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ? ມາສູ່ອຸດເທດໂດຍອຸດເທດໃດ?

ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?
ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?
ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?
ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ?
ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ໃນປາຣາຊິກສິກຂາບົດທີ ໑ ນັ້ນ ອັນໃດເປັນພຣະວິໄນ ອັນໃດເປັນອະພິວິໄນ ອັນໃດເປັນ ພຣະປາຕິໂມກ ອັນໃດເປັນອະທິປາຕິໂມກ ອັນໃດເປັນວິບັດ ອັນໃດເປັນສົມບັດ ອັນໃດເປັນຂໍ້ ປະຕິບັດ

ພຣະຜູ້ມີພຣະພາກເຈົ້າຊົງບັນຍັດປາຣາຊິກສິກຂາບົດທີ ໑ ໂດຍຊົງອາໄສອຳນາດປະໂຫຍດ ທີ່ໃດ ໃຜສຶກສາຢູ່ ໃຜສຶກສາສິກຂາຮຽບຮ້ອຍແລ້ວ ສິກຂາບົດນີ້ຕັ້ງຢູ່ໃນໃຜ ໃຜຊົງເອົາໄວ້ ເປັນຄຳເວົ້າຂອງໃຜ ໃຜນຳມາ

## ປາຣາຊິກສິກຂາບົດທີ ໑

[໘] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກສິກຂາບົດທີ ໑ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພຣະສຸທິນກະລັນທະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະສຸທິນກະລັນທະບຸດເສບເມຖຸນທຳກັບອະດີດພັນລະຍາ

ຖາມ : ໃນປາຣາຊິກສິກຂາບົດທີ ໑ ນັ້ນ ມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະບັນຍັດຢູ່ບໍ?

ຕອບ : ໃນປາຣາຊິກສິກຂາບົດທີ ໑ ນັ້ນ ມີ ໑ ພຣະບັນຍັດ ໒ ພຣະອະນຸບັນຍັດ ບໍ່ມີອະນຸປະປັນນະບັນຍັດ

ຖາມ : ມີສັບພັດຖະບັນຍັດ ປະເທສະບັນຍັດຢູ່ບໍ

ຕອບ : ມີສັບພັດຖະບັນຍັດ

ຖາມ : ມີສາທາລະນະບັນຍັດ ອະສາທາລະນະບັນຍັດຢູ່ບໍ?

ຕອບ : ມີສາທາລະນະບັນຍັດ

ຖາມ : ມີເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ຕອບ : ມີອຸພະໂຕບັນຍັດ

ຖາມ : ບັນດາປາຕິໂມກຂຸດເທດ ໕ ອຸດເທດ ປາຣາຊິກສິກຂາບົດທີ ໑ ນັ້ນ ຈັດເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ?

ຕອບ : ຈັດເຂົ້າໃນນິທານຸດເທດ ນັບເນື່ອງໃນນິທານຸດເທດ

ຖອບ : ມາສູ່ອຸດເທດໂດຍອຸດເທດໃດ?

ຕອບ : ມາສູ່ອຸດເທດໂດຍອຸດເທດທີ ໔

ຖາມ : ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ຕອບ : ເປັນສີລະວິບັດ

ຖາມ : ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?

ຕອບ : ເປັນກອງອາບັດປາຣາຊິກ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງ ວາຈາ

ຖາມ : ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ?

ຕອບ : ເປັນອາປັດຕາທິກອນ

ຖາມ : ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທໍ່ໃດ?

ຕອບ : ລະງັບດ້ວຍສະມະຖະ ໔ ຢ່າງຄື(໑) ສຳມຸຂາວິໄນ (໔) ປະຕິນຍາຕະກະຣະນະ

ຖາມ : ໃນປາຣາຊິກສິກຂາບົດທີ ໑ ນັ້ນ ອັນໃດເປັນພຣະວິໄນ ອັນໃດເປັນອະພິວິໄນ

ຕອບ : ພຣະບັນຍັດເປັນພຣະວິໄນ ການຈຳແນກ໌ເປັນອະພິວິໄນ

ຖາມ : ໃນປາຣາຊິກສິກຂາບົດທີ ໑ ນັ້ນ ອັນໃດເປັນພຣະປາຕິໂມກ ອັນໃດເປັນອະທິປາຕິໂມກ

ຕອບ : ພຣະບັນຍັດເປັນພຣະປາຕິໂມກ ການຈຳແນກເປັນອະທິປາຕິໂມກ

ຖາມ : ອັນໃດເປັນວິບັດ

ຕອບ : ຄວາມບໍ່ສັງລວມເປັນວິບັດ

ຖາມ : ອັນໃດເປັນສົມບັດ

ຕອບ : ຄວາມສັງລວມເປັນສົມບັດ

ຖາມ : ອັນໃດເປັນຂໍ້ປະຕິບັດ

ຕອບ : ການທີ່ພິກຂຸສະມາທານອາປານະໂກຕິກສິນ໌ຕະຫຼອດຊີວິດວ່າ "ເຮົາຈະບໍ່ເຮັດກຳ ແນວນີ້ອີກ" ແລ້ວສຶກສາຢູ່ໃນສິກຂາບົດທັງຫຼາຍ ເປັນຂໍ້ປະຕິບັດ

ຖາມ : ພຣະຜູ້ມີພຣະພາກເຈົ້າຊົງບັນຍັດປາຣາຊິກສິກຂາບົດທີ ໑ ໂດຍຊົງອາໄສອຳນາດ ປະໂຫຍດທໍ່ໃດ?

ຕອບ : ຊົງບັນຍັດປາຣາຊິກສິກຂາບົດທີ ໑ ໂດຍຊົງອາໄສອຳນາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໒. ເພື່ອຄວາມຜາສຸກແຫ່ງສົງ
໓. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ
໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ
໕. ເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໖. ເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ
໗. ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ
໘. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ
໙. ເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ
໑໐. ເພື່ອເອື້ອເຟື້ອພຣະວິໄນ

ຖາມ : ໃຜສຶກສາຢູ່

ຕອບ : ພິກຂຸຜູ້ເປັນພຣະເສຂະແລະກັນລະຍານະປຸຖຸຊົນສຶກສາຢູ່

ຖາມ : ໃຜສຶກສາສິກຂາຮຽບຮ້ອຍແລ້ວ

ຕອບ : ພຣະອະຣະຫັນເປັນຜູ້ສຶກສາສິກຂາຮຽບຮ້ອຍແລ້ວ

ຖາມ : ສິກຂາບົດນີ້ຕັ້ງຢູ່ໃນໃຜ

ຕອບ : ຕັ້ງຢູ່ໃນສິກຂາການມະບຸກຄົນ(ບຸກຄົນຜູ້ຕ້ອງການສຶກສາ)

ຖາມ : ໃຜຊົງເອົາໄວ້

ຕອບ : ພຣະເຖຣະທັງຫຼາຍຜູ້ຊົງຈຳປາຣາຊິກສິກຂາບົດທີ ໑ ໄດ້ຊົງເອົາໄວ້

ຖາມ : ເປັນຄຳເວົ້າຂອງໃຜ

ຕອບ : ເປັນພຣະດຳຣັດຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າ

ຖາມ : ໃຜນຳມາ

ຕອບ : ພຣະເຖຣະທັງຫຼາຍນຳສືບ ໆ ກັນມາ

## ຣາຍນາມພຣະເຖຣະຜູ້ຊົງຈຳພຣະວິໄນສືບກັນມາ

[໓] ພຣະເຖຣະເຫຼົ່ານີ້ ຄື ພຣະອຸບາລີ ພຣະຂ້າທາສະກະ ພຣະໂສນະກະ ພຣະສິກຄະວະ ແລະພຣະໂມກຄັນລີບຸດ ລວມເປັນ ໕ ອົງ ເປັນຜູ້ນຳພຣະວິໄນສືບ ໆ ກັນມາໃນຊົມພູທະວີບອັນມີສີຣິ

ຈາກນັ້ນ ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຄື ພຣະມະຫິນທະ ພຣະອິດຕິຍະ ພຣະອຸດຕິຍະ ພຣະສຳພະລະ ແລະພຣະພັດທະບັນດິດ ເດີນທາງຈາກຊົມພູທະວີບມາທີ່ເກາະສິງຫົນນີ້ ທ່ານເຫຼົ່ານັ້ນສອນພຣະວິໄນປິດົກທີ່ເກາະຕາມພະປັນນິ ສອນນິກາຍ ໕ ແລະປະກອນ ໗

ຈາກນັ້ນພຣະອະຣິດຖະຜູ້ມີປັນຍາ ພຣະຕິດສະທັນຕະບັນດິດ ພຣະກາສຸມະນະ ຜູ້ຊ່ຽວຊານ ພຣະທີຄະເຖຣະ ແລະພຣະທີຄະສຸມະນະບັນດິດ

ຕໍ່ມາ ພຣະກາສຸມະນະ ພຣະນາຄະເຖຣະ ພຣະພຸດທະຣັກຂິຕະ ພຣະຕິດສະເຖຣະຜູ້ມີປັນຍາ ແລະພຣະເທວະເຖຣະຜູ້ເປັນບັນດິດ

ຕໍ່ມາ ພຣະສຸມະນະຜູ້ມີປັນຍາແລະຊ່ຽວຊານໃນພຣະວິໄນ ພຣະຈູລະນາຄະເປັນພະຫູສູດ ຄືຊ້າງຕົກມັນ ພຣະທຳມະປາລິຕະ ເປັນຜູ້ອັນສາທຸຊົນໃນໂຣຫະນະຊົນນະບົດພາກັນບູຊາເປັນຢ່າງດີ ສິດຂອງພຣະທຳມະປາລິຕະນັ້ນ ມີປັນຍາຫຼາຍຊື່ວ່າເຂມະ ຊົງຈຳພຣະໄຕຣປິດົກໄດ້ຮຸ່ງເຮືອງຢູ່ໃນເກາະດ້ວຍປັນຍາ ຄືດວງຈັນຮຸ່ງເຮືອງຢູ່

ພຣະອຸປະຕິດສະຜູ້ມີປັນຍາ ພຣະປຸດສະເທວະຜູ້ເປັນມະຫາທຳມະກະຖຶກ

ຕໍ່ມາ ພຣະສຸມະນະຜູ້ມີປັນຍາ ພຣະມະຫາປະທຸມະ[໑] ເປັນພະຫູສູດ ພຣະມະຫາສີວະຜູ້ເປັນມະຫາທຳມະກະຖຶກ ສະຫຼາດໃນພຣະປິດົກທັງໝົດ

ຕໍ່ມາ ພຣະອຸບາລີຜູ້ມີປັນຍາ ຊ່ຽວຊານໃນພຣະວິໄນ ພຣະມະຫານາຄະຜູ້ມີປັນຍາຫຼາຍ ສະຫຼາດໃນວົງພຣະສັດທຳ

ຕໍ່ມາ ພຣະອະພະຍະຜູ້ມີປັນຍາ ສະຫຼາດໃນພຣະປິດົກທັງໝົດ ພຣະຕິດສະເຖຣະຜູ້ມີປັນຍາຊ່ຽວຊານໃນພຣະວິໄນ ພຣະສຸມະນະ[໒]ມີປັນຍາຫຼາຍຜູ້ເປັນສິດຂອງພຣະຕິດສະເຖຣະນັ້ນ ເປັນພະຫູສູດ ຮັກສາພຣະສາດສະໜາຕໍ່ກັນມາຢູ່ໃນຊົມພູທະວີບ

ພຣະຈູລາພະຍະຜູ້ມີປັນຍາແລະຊ່ຽວຊານໃນພຣະວິໄນ ພຣະຕິດສະເຖຣະຜູ້ມີປັນຍາສະຫຼາດໃນວົງພຣະສັດທຳ ພຣະຈູລະເທວະຜູ້ມີປັນຍາແລະຊ່ຽວຊານໃນພຣະວິໄນ

ແລະພຣະສີວະເຖຣະຜູ້ມີປັນຍາ ສະຫຼາດໃນພຣະວິໄນທັງໝົດ
ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຮູ້ພຣະວິໄນ
ສະຫຼາດໃນມັກ ໄດ້ປະກາດພຣະວິໄນປິດົກໄວ້ໃນເກາະຕາມພະປັນນີ

## ປາຣາຊິກສິກຂາບົດທີ ໒

[໒] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກສິກຂາບົດທີ ໒ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພຣະທະນິຍະກຸມພະກາຣະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະທະນິຍະກຸມພະກາຣະບຸດ ຖືເອົາໄມ້ຂອງຫຼວງທີ່ຍັງບໍ່ໄດ້ພຣະຣາດຊະທານ

ໃນປາຣາຊິກສິກຂາບົດທີ ໒ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບໍ່ມີອະນຸປະປັນນະບັນຍັດ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາ ກັບຈິດ ຯລຯ

## ປາຣາຊິກສິກຂາບົດທີ ໓

[໕] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກສິກຂາບົດທີ ໓ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງ ຂ້າກັນແລະກັນ

ໃນປາຣາຊິກສິກຂາບົດທີ ໓ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບໍ່ມີອະນຸປະປັນນະບັນຍັດ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ ໆລໆ

## ປາຣາຊິກສິກຂາບົດທີ ໔

[໖] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກສິກຂາບົດທີ ໔ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາ ກ່າວອວດອຸດຕະຣິມະນຸດສະທຳ ຂອງກັນແລະກັນແກ່ພວກຄະລືຫັດ

ໃນປາຣາຊິກສິກຂາບົດທີ ໔ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບໍ່ມີອະນຸປະປັນນະບັນຍັດ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດ ທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ ໆລໆ

### ປາຣາຊິກ ໔ ສິກຂາບົດ ຈົບ

## ລວມສິກຂາບົດທີ່ມີໃນປາຣາຊິກກັນ

ປາຣາຊິກສິກຂາບົດທີ ໑ ວ່າດ້ວຍການເສບເມຖຸນທຳ

ປາຣາຊິກສິກຂາບົດທີ ໒ ວ່າດ້ວຍການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້

ປາຣາຊິກສິກຂາບົດທີ ໓ ວ່າດ້ວຍການພາກກາຍມະນຸດ

ປາຣາຊິກສິກຂາບົດທີ ໔ ວ່າດ້ວຍການກ່າວອວດອຸດຕະຣິມະນຸດສະທຳ

ປາຣາຊິກ ໔ ສິກຂາບົດເຫຼົ່ານີ້ເປັນມູນແຫ່ງການຕັດຂາດ

(ຂາດຈາກຄວາມເປັນພິກຂຸ) ຢ່າງບໍ່ຕ້ອງສົງໄສ

# ៨. ສັງຄາທິເສສະກັນ

ຄຳຖາມ - ຄຳຕອບສະຖານທີ່ບັນຍັດເປັນຕົ້ນໃນສັງຄາທິເສສະກັນ

[ໆ] ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ ຢູ່ໄສ? ຊົງຜາຣົບໃຜ ຍ້ອນເລື້ອງອັນໃດ?

ໃນສຸກກະວິສັດຖິສິກຂາບົດທີ ໑ ນັ້ນ ມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະບັນຍັດ ສັບພັດຖະບັນຍັດ ປະເທສະບັນຍັດ ສາທາລະນະບັນຍັດ ອະສາທາລະນະບັນຍັດ ເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ່?

ບັນດາປາຕິໂມກຂຸດເທດ ៥ ອຸດເທດ ສຸກກະວິສັດຖິສິກຂາບົດນັ້ນຈັດເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ? ມາສູ່ອຸດເທດໂດຍອຸດເທດໃດ?

ບັນດາວິບັດ ៤ ຢ່າງ ເປັນວິບັດແນວໃດ?
ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?
ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?
ບັນດາອະທິກອນ ៤ ຢ່າງ ເປັນອະທິກອນແນວໃດ?
ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ໃນສຸກກະວິສັດຖິສິກຂາບົດທີ ໑ ນັ້ນ ອັນໃດເປັນພຣະວິໄນ ອັນໃດເປັນອະພິວິໄນ ອັນໃດເປັນ ພຣະປາຕິໂມກ ອັນໃດເປັນອະທິປາຕິໂມກ ອັນໃດເປັນວິບັດ ອັນໃດເປັນສົມບັດ ອັນໃດເປັນຂໍ້ປະຕິບັດ

ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນໂດຍຊົງອາໄສອຳນາດປະໂຫຍດທີ່ໃດ? ໃຜສຶກສາຢູ່ ໃຜສຶກສາສິກຂາຮຽບຮ້ອຍແລ້ວ ສິກຂາບົດນີ້ຕັ້ງຢູ່ໃນໃຜ ໃຜຊົງເອົາໄວ້ ເປັນຄຳເວົ້າຂອງໃຜ ໃຜນຳມາ

## ໑. ສຸກກະວິສັດຖິສິກຂາບົດ

[໘] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ ຢູ່ໄສ?
ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະເສີຍຍະສະກະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະເສີຍຍະສະກະພະຍາຍາມໃຊ້ມືເຮັດນ້ຳອະສຸຈິໃຫ້ເຄື່ອນ

ຖາມ : ໃນສຸກກະວິສັດຖິສິກຂາບົດນັ້ນ ມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະບັນຍັດຢູ່ບໍ?

ຕອບ : ໃນສຸກກະວິສັດຖິສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບໍ່ມີອະນຸປະປັນນະບັນຍັດ

ຖາມ : ມີສັບພັດຖະບັນຍັດ ປະເທສະບັນຍັດຢູ່ບໍ

ຕອບ : ມີສັບພັດຖະບັນຍັດ

ຖາມ : ມີສາທາລະນະບັນຍັດ ອະສາທາລະນະບັນຍັດຢູ່ບໍ?

ຕອບ : ມີອະສາທາລະນະບັນຍັດ

ຖາມ : ມີເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ຕອບ : ມີເອກະໂຕບັນຍັດ

ຖາມ : ບັນດາປາຕິໂມກຂຸດເທດ ໕ ອຸດເທດ ສຸກກະວິສັດຖິສິກຂາບົດນັ້ນຈັດເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ?

ຕອບ : ຈັດເຂົ້າໃນນິທານຸດເທດ ນັບເນື່ອງໃນນິທານຸດເທດ

ຖາມ : ມາສູ່ອຸດເທດໂດຍອຸດເທດໃດ?

ຕອບ : ມາສູ່ອຸດເທດໂດຍອຸດເທດທີ ໓

ຖາມ : ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ຕອບ : ເປັນສີລະວິບັດ

ຖາມ : ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?

ຕອບ : ເປັນກອງອາບັດສັງຄາທິເສດ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ຖາມ : ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ?

ຕອບ : ເປັນອາປັດຕາທິກອນ

ຖາມ : ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ລະງັບດ້ວຍສະມະຖະ ໔ ຢ່າງຄື(໑) ສຳມຸຂາວິໄນ (໔) ປະຕິນຍາຕະກະຣະນະ

ຖາມ : ໃນສຸກກະວິສັດຖິສິກຂາບົດນັ້ນ ອັນໃດເປັນພຣະວິໄນ ອັນໃດເປັນອະພິວິໄນ

ຕອບ : ພຣະບັນຍັດເປັນພຣະວິໄນ ການຈຳແນກເປັນອະພິວິໄນ

ຖາມ : ໃນສຸກກະວິສັດຖິສິກຂາບົດນັ້ນ ອັນໃດເປັນພຣະປາຕິໂມກ ອັນໃດເປັນອະທິປາຕິໂມກ

ຕອບ : ພຣະບັນຍັດເປັນພຣະປາຕິໂມກ ການຈຳແນກເປັນອະທິປາຕິໂມກ

ຖາມ : ອັນໃດເປັນວິບັດ

ຕອບ : ຄວາມບໍ່ສັງລວມເປັນວິບັດ

ຖາມ : ອັນໃດເປັນສົມບັດ

ຕອບ : ຄວາມສັງລວມເປັນສົມບັດ

ຖາມ : ອັນໃດເປັນຂໍ້ປະຕິບັດ

ຕອບ : ການທີ່ພິກຂຸສະມາທານອາປານະໂກຕິກສີນຕະຫຼອດຊີວິດວ່າ "ເຮົາຈະບໍ່ເຮັດກຳແນວນີ້ອີກ" ແລ້ວສຶກສາຢູ່ໃນສິກຂາບົດທັງຫຼາຍ ເປັນຂໍ້ປະຕິບັດ

ຖາມ : ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ ໂດຍຊົງອາໄສອຳນາດປະໂຫຍດທໍ່ໃດ?

ຕອບ : ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ ໂດຍຊົງອາໄສອຳນາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໒. ເພື່ອຄວາມຜາສຸກແຫ່ງສົງ
໓. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ
໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ
໕. ເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໖. ເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ
໗. ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ
໘. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ
໙. ເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ
໑໐. ເພື່ອເອື້ອເຟື້ອພຣະວິໄນ

ຖາມ : ໃຜສຶກສາຢູ່

ຕອບ : ພຣະເສຂະແລະກັນລະຍານະປຸຖຸຊົນສຶກສາຢູ່

ຖາມ : ໃຜສຶກສາສິກຂາຮຽບຮ້ອຍແລ້ວ

ຕອບ : ພຣະອະຣະຫັນເປັນຜູ້ສຶກສາສິກຂາຮຽບຮ້ອຍແລ້ວ

ຖາມ : ສິກຂາບົດນີ້ຕັ້ງຢູ່ໃນໃຜ

ຕອບ : ຕັ້ງຢູ່ໃນສິກຂາການະບຸກຄົນ

ຖາມ : ໃຜຊົງເອົາໄວ້

ຕອບ : ພຣະເຖຣະທັງຫຼາຍຜູ້ຊົງຈຳສຸກກະວິສັດຖີສິກຂາບົດທີ ໑ ໄດ້ຊົງເອົາໄວ້

ຖາມ : ເປັນຄຳເວົ້າຂອງໃຜ

ຕອບ : ເປັນພຣະດຳຣັດຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າ

ຖາມ : ໃຜນຳມາ

ຕອບ : ພຣະເຖຣະທັງຫຼາຍນຳສືບ ໆ ກັນມາ

## ຣາຍນາມພຣະເຖຣະຜູ້ຊົງຈຳພຣະວິໄນສືບກັນມາ

ພຣະເຖຣະເຫຼົ່ານີ້ ຄື ພຣະອຸບາລີ ພຣະຂ້າທາສະກະ ພຣະໂສນະກະ
ພຣະສິກຄະວະ ແລະພຣະໂມກຄັນລີບຸດ ລວມເປັນ ໕ ອົງ
ເປັນຜູ້ນຳພຣະວິໄນສືບ ໆ ກັນມາໃນຊົມພູທະວີບອັນມີສີຣີ

ຈາກນັ້ນ ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຄື
ພຣະມະຫິນທະ ພຣະອິດຕິຍະ ພຣະອຸດຕິຍະ ພຣະສຳພະລະ
ແລະພຣະພັດທະບັນດິດ ເດີນທາງຈາກຊົມພູທະວີບມາທີ່ເກາະສິງຫົນນີ້
ທ່ານເຫຼົ່ານັ້ນສອນພຣະວິໄນປິດົກທີ່ເກາະຕາມພະປັນນີ
ສອນນິກາຍ ໕ ແລະປະກອນ ໗

ຈາກນັ້ນພຣະອະຣິດຖະຜູ້ມີປັນຍາ ພຣະຕິດສະທັນຕະບັນດິດ
ພຣະກາສຸມະນະ ຜູ້ຊ່ຽວຊານ ພຣະທີຄະເຖຣະ ແລະພຣະທີຄະສຸມະນະບັນດິດ

ຕໍ່ມາ ພຣະກາສຸມະນະ ພຣະນາຄະເຖຣະ ພຣະພຸດທະຣັກຂິຕະ
ພຣະຕິດສະເຖຣະຜູ້ມີປັນຍາ ແລະພຣະເທວະເຖຣະຜູ້ເປັນບັນດິດ

ຕໍ່ມາ ພຣະສຸມະນະຜູ້ມີປັນຍາແລະຊ່ຽວຊານໃນພຣະວິໄນ
ພຣະຈູລະນາຄະເປັນພະຫູສູດ ຄືຊ້າງຕົກມັນ ພຣະທຳມະປາລິຕະ
ເປັນຜູ້ອັນສາທຸຊົນໃນໂຣທະນະຊົນນະບົດພາກັນບູຊາເປັນຢ່າງດີ
ສິດຂອງພຣະທຳມະປາລິຕະນັ້ນ ມີປັນຍາຫຼາຍຊື່ວ່າເຂມະ
ຊົງຈຳພຣະໄຕຣປິດົກໄດ້ຮຸ່ງເຮືອງຢູ່ໃນເກາະດ້ວຍປັນຍາ
ຄືດວງຈັນຮຸ່ງເຮືອງຢູ່
ພຣະອຸປະຕິດສະຜູ້ມີປັນຍາ ພຣະປຸດສະເທວະຜູ້ເປັນມະຫາທຳມະກະຖຶກ

ຕໍ່ມາ ພຣະສຸມະນະຜູ້ມີປັນຍາ ພຣະມະຫາປະທຸມະ[໑] ເປັນພະຫູສູດ
ພຣະມະຫາສີວະຜູ້ເປັນມະຫາທຳມະກະຖຶກ ສະຫຼາດໃນພຣະປິດົກທັງໝົດ

ຕໍ່ມາ ພຣະອຸບາລີຜູ້ມີປັນຍາ ຊ່ຽວຊານໃນພຣະວິໄນ

ພຣະມະຫານາຄະຜູ້ມີປັນຍາຫຼາຍ ສະຫຼາດໃນວົງພຣະສັດທຳ

ຕໍ່ມາ ພຣະອະພະຍະຜູ້ມີປັນຍາ ສະຫຼາດໃນພຣະປິດົກທັງໝົດ

ພຣະຕິດສະເຖຣະຜູ້ມີປັນຍາຊ່ຽວຊານໃນພຣະວິໄນ

ພຣະສຸມະນະ^ມີປັນຍາຫຼາຍຜູ້ເປັນສິດຂອງພຣະຕິດສະເຖຣະນັ້ນ ເປັນພະຫູສູດ

ຮັກສາພຣະສາດສະໜາຕໍ່ກັນມາຢູ່ໃນຊົມພູທະວີບ

ພຣະຈູລາພະຍະຜູ້ມີປັນຍາແລະຊ່ຽວຊານໃນພຣະວິໄນ

ພຣະຕິດສະເຖຣະຜູ້ມີປັນຍາສະຫຼາດໃນວົງພຣະສັດທຳ

ພຣະຈູລະເທວະຜູ້ມີປັນຍາແລະຊ່ຽວຊານໃນພຣະວິໄນ

ແລະພຣະສິວະເຖຣະຜູ້ມີປັນຍາ ສະຫຼາດໃນພຣະວິໄນທັງໝົດ

ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຮູ້ພຣະວິໄນ

ສະຫຼາດໃນມັກ ໄດ້ປະກາດພຣະວິໄນປິດົກໄວ້ໃນເກາະຕາມພະປັນນີ

## ໘. ກາຍະສັງສັກຄະສິກຂາບົດ

[໙] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ຖືກຕ້ອງກາຍກັບມາຕຸຄາມ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີຖືກຕ້ອງກາຍກັບມາຕຸຄາມ

ໃນກາຍະສັງສັກຄະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ໖. ທຸດຖຸນລະວາຈາສິກຂາບົດ

[໑໐] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບ

ໃນທຸດຖຸນລະວາຈາສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ ฯລฯ

## ໔. ອັດຕະກາມະປາຣິຈະຣິຍະສິກຂາບົດ

[໑໑] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ກ່າວສັນເສີນການປິ່ນເປີຄວາມຕ້ອງການຂອງຕົນຕໍ່ໜ້າມາຕຸຄາມ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີກ່າວສັນເສີນການປິ່ນເປີຄວາມຕ້ອງການຂອງຕົນຕໍ່ໜ້າມາຕຸຄາມ

ໃນອັດຕະກາມະປາຣິຈະຣິຍະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ฯລฯ

## ໕. ສັນຈະຣິດຕະສິກຂາບົດ

[໑໒] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ເຮັດໜ້າທີ່ຊັກສື່ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີເຮັດໜ້າທີ່ຊັກສື່

ໃນສັນຈະຣິດຕະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຄື (໑) ເກີດທາງກາຍ

ບໍ່ແມ່ນ ເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (๔) ເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ (๑) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (๔) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (๕) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (๖) ເກີດທາງກາຍວາຈາກັບຈິດ ຯລຯ

## ๖. ກຸຕິການະສິກຂາບົດ

[๑๑] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ສ້າງກຸດຕິດ້ວຍເຄື່ອງອຸປະກອນທີ່ຂໍມາເອງຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ເມືອງອາລະວີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸຊາວເມືອງອາລະວີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸຊາວເມືອງອາລະວີສ້າງກຸດຕິດ້ວຍເຄື່ອງອຸປະກອນທີ່ຂໍມາເອງ

ໃນກຸຕິການະສິກຂາບົດນັ້ນ ມີ ๑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານ ๖ ສະມຸດຖານ ຯລຯ

## ๗. ວິຫາຣະການະສິກຂາບົດ

[๑๔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ໃຫ້ສ້າງວິຫານໃຫຍ່ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນໂກສຳພີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະສັນນະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະສັນນະແຜ້ວຖາງພື້ນທີ່ສ້າງວິຫານ ສັ່ງໃຫ້ຕັດໄມ້ຣຸກຂະເຈດີ ຕົ້ນໜຶ່ງ

ໃນວິຫາຣະການະສິກຂາບົດນັ້ນມີ ๑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານ ๖ ສະມຸດຖານ ຯລຯ

## ໗. ປະຖະມະທຸດຖະໂທສະສິກຂາບົດ

[໑໕] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກບໍ່ມີມູນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພຣະເມດຕິຍະແລະພຣະພຸມມະຊະກະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະເມດຕິຍະແລະພຣະພຸມມະຊະກະໃສ່ຄວາມທ່ານພຣະທັບພະມັນລະ ບຸດດ້ວຍອາບັດປາຣາຊິກບໍ່ມີມູນ

ໃນປະຖະມະທຸດຖະໂທສະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໘. ທຸຕິຍະທຸດຖະໂທສະສິກຂາບົດ

[໑໖] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນເປັນເລດໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກບໍ່ມີມູນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພຣະເມດຕິຍະແລະພຣະພຸມມະຊະກະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະເມດຕິຍະແລະພຣະພຸມມະຊະກະອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນເປັນເລດໃສ່ຄວາມທ່ານພຣະທັບພະມັນລະບຸດດ້ວຍອາບັດປາຣາຊິກບໍ່ມີມູນ

ໃນທຸຕິຍະທຸດຖະໂທສະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໑໐. ສັງຄະເພທະສິກຂາບົດ

[໑໗] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ເຮັດສົງໃຫ້ແຕກກັນ ບໍ່ສະລະກຳຈົນວ່າສົງ ສູດສະມະ

ນຸພາດຄົບ ໓ ຄັ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພຣະເທວະທັດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະເທວະທັດພຽນພະຍາຍາມເພື່ອທຳລາຍສົງຜູ້ພ້ອມພຽງກັນ

ໃນສັງຄະເພທະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

## ໑໑. ສັງຄະເພທານຸວັດຕະກະສິກຂາບົດ

[໑໗] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸທີ່ປະພຶດຕາມກ່າວສະໜັບສະໜູນພິກຂຸຜູ້ທຳລາຍສົງ ບໍ່ສະລະກຳຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງປະພຶດຕາມສະໜັບສະໜູນພຣະເທວະທັດຜູ້ພະຍາຍາມ ທຳລາຍສົງ

ໃນສັງຄະເພທານຸວັດຕະກະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

## ໑໘. ທຸບພະຈະສິກຂາບົດ

[໑໙] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸເປັນຄົນວ່າຍາກ ບໍ່ສະລະກຳຈົນວ່າສົງສູດ ສະມະນຸພາດຄົບ ໓ ຄັ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນໂກສຳພີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະສັນນະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະສັນນະອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຖືກຕ້ອງ ຕາມທຳ ກັບເຮັດຕົນໃຫ້ເປັນຄົນທີ່ວ່າກ່າວຕັກເຕືອນບໍ່ໄດ້

ໃນທຸບພະຈະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

## ໑໓. ກຸລະທູສະກະສິກຂາບົດ

[໔໐] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸຜູ້ປະທຸດສະຮ້າຍຕະກູນ ບໍ່ສະລະກຳຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພຣະອັດສະຊິແລະພຣະປຸນັບພະສຸກະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະອັດສະຊິແລະພຣະປຸນັບພະສຸກະຖືກສົງລົງປັບພາຊະນີຍະກຳ ແລ້ວກັບກ່າວຫາວ່າ ພວກພິກຂຸລຳອຽງຍ້ອນຮັກ ລຳອຽງຍ້ອນຊັງ ລຳອຽງຍ້ອນຫຼົງ ລຳອຽງຍ້ອນຢ້ານ

ໃນກຸລະທູສະກະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

**ສັງຄາທິເສດ ໑໓ ສິກຂາບົດ ຈົບ**

## ລວມສິກຂາບົດທີ່ມີໃນສັງຄາທິເສສະກັນ

| | |
|---|---|
| ໑. ສຸກກະວິສັດຖິສິກຂາບົດ | ວ່າດ້ວຍການຈົງໃຈເຮັດນ້ຳອະສຸຈິໃຫ້ເຄື່ອນ |
| ໒. ກາຍະສັງສັກຄະສິກຂາບົດ | ວ່າດ້ວຍການຖືກຕ້ອງກາຍກັບມາຕຸຄາ |
| ໓. ທຸດຖຸນລະວາຈາສິກຂາບົດ | ວ່າດ້ວຍການເວົ້າກ້ຽວມາຕຸຄາມ |
| ໔. ອັດຕະກາມະປາຣິຈະຣິຍະສິກຂາບົດ | ວ່າດ້ວຍການໃຫ້ບົນເປີຄວາມຕ້ອງການຂອງຕົນ |
| ໕. ສັນຈະຣິດຕະສິກຂາບົດ | ວ່າດ້ວຍການຊັກສື່ |
| ໖. ກຸຕິກາຣະສິກຂາບົດ | ວ່າດ້ວຍການກໍ່ສ້າງກຸດຕິ |
| ໗. ວິຫາຣະກາຣະສິກຂາບົດ | ວ່າດ້ວຍການກໍ່ສ້າງວິຫານ |
| ໘. ປະຖະມະທຸດຖະໂທສະສິກຂາບົດ | ວ່າດ້ວຍພິກຂຸຂັດເຄືອງມີໂທສະສິກຂາບົດທີ ໑ |
| ໙. ທຸຕິຍະທຸດຖະໂທສະສິກຂາບົດ | ວ່າດ້ວຍພິກຂຸຂັດເຄືອງມີໂທສະສິກຂາບົດທີ ໒ |

| | |
|---|---|
| ๑๐. สังฆะเพทะสิกขาบิด | ว่าด้วยการเຮັດສົງໃຫ້ແຕກກັນ |
| ๑๑. สังฆะเพทานุวัดตะกะสิกขาบิด | ว่าด้วยพิกขุປະພຶດຕາມກ່າວສະໜັບສະໜູນ พิกขุผู้ທຳລາຍສົງ |
| ๑๒. ทุบพะจะสิกขาบิด | ว่าด้วยพิกขุເປັນຄົນວ່າຍາກ |
| ๑๓. กุละทูสะกะสิกขาบิด | ว่าด้วยพิกขุผู้ປະທຸດສະຮ້າຍຕະກູນ |

## ๓. ອະນິຍະຕະກັນ

ຄຳຖາມ - ຄຳຕອບສະຖານທີ່ບັນຍັດເປັນຕົ້ນໃນອະນິຍະຕະກັນ

[໔໑] ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປະຖົມອະນິຍະຕະສິກຂາບົດ ຢູ່ໃສ? ຊົງຜາຣົບໃຜ? ຍ້ອນເລື້ອງອັນໃດ?

ໃນປະຖົມອະນິຍະຕະສິກຂາບົດນັ້ນ ມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະບັນຍັດ ສັບພັດຖະບັນຍັດ ປະເທສະບັນຍັດ ສາທາລະນະບັນຍັດ ອະສາທາລະນະບັນຍັດ ເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ບັນດາປາຕິໂມກຂຸດເທດ ໕ ອຸດເທດ ປະຖົມອະນິຍະຕະສິກຂາບົດນັ້ນຈັດເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ? ມາສູ່ອຸດເທດໂດຍອຸດເທດໃດ?

ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທໍ່ໃດ?

ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ?

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທໍ່ໃດ?

ໃນປະຖົມອະນິຍະຕະສິກຂາບົດນັ້ນ ອັນໃດເປັນພຣະວິໄນ ອັນໃດເປັນອະພິວິໄນ ອັນໃດເປັນພຣະປາຕິໂມກ ອັນໃດເປັນອະທິປາຕິໂມກ ອັນໃດເປັນວິບັດ ອັນໃດເປັນສົມບັດ ອັນໃດເປັນຂໍ້ປະຕິບັດ

ພຣະຜູ້ມີພຣະພາກເຈົ້າຊົງບັນຍັດປະຖົມອະນິຍະຕະສິກຂາບົດ ໂດຍອາໄສອຳນາດປະໂຫຍດທໍ່ໃດ? ໃຜສຶກສາຢູ່ ໃຜສຶກສາສິກຂາຮຽບຮ້ອຍແລ້ວ ສິກຂາບົດນີ້ຕັ້ງຢູ່ໃນໃຜ ໃຜຊົງເອົາໄວ້ ເປັນຄຳເວົ້າຂອງໃຜ ໃຜນຳມາ

## ໑. ປະຖົມອະນິຍະຕະສິກຂາບົດ

[໔໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປະຖົມອະນິຍະຕະສິກຂາບົດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີນັ່ງເທິງອາສະນະທີ່ກໍາບັງໃນບ່ອນລັບພໍຈະທໍາການໄດ້ ກັບມາຕຸຄາມສອງຕໍ່ສອງ

ຖາມ : ໃນປະຖົມອະນິຍະຕະສິກຂາບົດນັ້ນ ມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະບັນຍັດຢູ່ບໍ?

ຕອບ : ໃນປະຖົມອະນິຍະຕະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບໍ່ມີພຣະອະນຸບັນຍັດ ແລະ ອະນຸປະປັນນະບັນຍັດ

ຖາມ : ມີສັບພັດຖະບັນຍັດ ປະເທສະບັນຍັດຢູ່ບໍ

ຕອບ : ມີສັບພັດຖະບັນຍັດ

ຖາມ : ມີສາທາລະນະບັນຍັດ ອະສາທາລະນະບັນຍັດຢູ່ບໍ?

ຕອບ : ມີອະສາທາລະນະບັນຍັດ

ຖາມ : ມີເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ຕອບ : ມີເອກະໂຕບັນຍັດ

ຖາມ : ບັນດາປາຕິໂມກຂຸດເທດ ໕ ອຸດເທດ ປະຖົມອະນິຍະຕະສິກຂາບົດນີ້ຈັດເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ?

ຕອບ : ຈັດເຂົ້າໃນນິທານຸດເທດ ນັບເນື່ອງໃນນິທານຸດເທດ

ຖາມ : ມາສູ່ອຸດເທດ ໂດຍອຸດເທດໃດ?

ຕອບ : ມາສູ່ອຸດເທດ ໂດຍອຸດເທດທີ ໔

ຖາມ : ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ຕອບ : ເປັນສີລະວິບັດກໍມີ ເປັນອາຈາຣະວິບັດກໍມີ

ຖາມ : ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?

ຕອບ : ເປັນກອງອາບັດປາຣາຊິກກໍມີ ເປັນກອງອາບັດສັງຄາທິເສດກໍມີ ເປັນກອງອາບັດ ປາຈິດຕີກໍມີ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ຖາມ : ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ?

ຕອບ : ເປັນອາປັດຕາທິກອນ

ຖາມ : ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທໍ່ໃດ?

ຕອບ : ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນແລະຕິນະວັດຖາຣະກະ

ຖາມ : ໃນປະຖົມອະນິຍະຕະສິກຂາບົດນັ້ນ ອັນໃດເປັນພຣະວິໄນ ອັນໃດເປັນອະພິວິໄນ

ຕອບ : ພຣະບັນຍັດເປັນພຣະວິໄນ ການຈຳແນກເປັນອະພິວິໄນ

ຖາມ : ໃນປະຖົມອະນິຍະຕະສິກຂາບົດນັ້ນ ອັນໃດເປັນພຣະປາຕິໂມກ ອັນໃດເປັນອະທິປາຕິໂມກ

ຕອບ : ພຣະບັນຍັດເປັນພຣະປາຕິໂມກ ການຈຳແນກເປັນອະທິປາຕິໂມກ

ຖາມ : ອັນໃດເປັນວິບັດ

ຕອບ : ຄວາມບໍ່ສັງລວມເປັນວິບັດ

ຖາມ : ອັນໃດເປັນສົມບັດ

ຕອບ : ຄວາມສັງລວມເປັນສົມບັດ

ຖາມ : ອັນໃດເປັນຂໍ້ປະຕິບັດ

ຕອບ : ການທີ່ພິກຂຸສະມາທານອາປານະໂກຕິກສິນຕະຫຼອດຊີວິດວ່າ "ເຮົາຈະບໍ່ເຮັດແນວນີ້ອີກ" ແລ້ວສຶກສາຢູ່ໃນສິກຂາບົດທັງຫຼາຍ ເປັນຂໍ້ປະຕິບັດ

ຖາມ : ພຣະຜູ້ມີພຣະພາກເຈົ້າຊົງບັນຍັດປະຖົມອະນິຍະຕະສິກຂາບົດນີ້ ໂດຍຊົງອາໄສອຳນາດ ປະໂຫຍດທໍ່ໃດ?

ຕອບ : ພຣະຜູ້ມີພຣະພາກເຈົ້າຊົງບັນຍັດປະຖົມອະນິຍະຕະສິກຂາບົດນີ້ ໂດຍຊົງອາໄສອຳນາດ ປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ

໒. ເພື່ອຄວາມຜາສຸກແຫ່ງສົງ

໓. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ

໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ

໕. ເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໖. ເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ

໗. ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ

໙. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ

໙. ເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ

໑໐. ເພື່ອເອື້ອເຟື້ອພຣະວິໄນ

ຖາມ : ໃຜສຶກສາຢູ່

ຕອບ : ພຣະເສຂະແລະກັນລະຍານະປຸຖຸຊົນສຶກສາຢູ່

ຖາມ : ໃຜສຶກສາສິກຂາຮຽບຮ້ອຍແລ້ວ

ຕອບ : ພຣະອະຣະຫັນເປັນຜູ້ສຶກສາສິກຂາຮຽບຮ້ອຍແລ້ວ

ຖາມ : ສິກຂາບົດນີ້ຕັ້ງຢູ່ໃນໃຜ

ຕອບ : ຕັ້ງຢູ່ໃນສິກຂາກາມະບຸກຄົນ

ຖາມ : ໃຜຊົງເອົາໄວ້

ຕອບ : ພຣະເຖຣະທັງຫຼາຍຜູ້ຊົງຈຳປະຖົມອະນິຍະຕະສິກຂາບົດໄດ້ຊົງເອົາໄວ້

ຖາມ : ເປັນຄຳເວົ້າຂອງໃຜ

ຕອບ : ເປັນພຣະດຳຣັດຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າ

ຖາມ : ໃຜນຳມາ

ຕອບ : ພຣະເຖຣະທັງຫຼາຍນຳສືບ ໆ ກັນມາ

## ຣາຍນາມພຣະເຖຣະຜູ້ຊົງຈຳພຣະວິໄນສືບກັນມາ

ພຣະເຖຣະເຫຼົ່ານີ້ ຄື ພຣະອຸບາລີ ພຣະຂ້າທາສະກະ ພຣະໂສນະກະ ພຣະສິກຄະວະ ແລະພຣະໂມກຄັນລີບຸດ ລວມເປັນ ໕ ອົງ ເປັນຜູ້ນຳພຣະວິໄນສືບ ໆ ກັນມາໃນຊົມພູທະວີບອັນມີສີຣີ

ຈາກນັ້ນ ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຄື ພຣະມະຫິນທະ ພຣະອິດຕິຍະ ພຣະອຸດຕິຍະ ພຣະສຳພະລະ ແລະພຣະພັດທະບັນດິດ ເດີນທາງຈາກຊົມພູທະວີບມາທີ່ເກາະສິງຫົນນີ້ ທ່ານເຫຼົ່ານັ້ນສອນພຣະວິໄນປິດົກທີ່ເກາະຕາມພະປັນນິ ສອນນິກາຍ ໕ ແລະປະກອນ ກ

ຈາກນັ້ນພຣະອະຣິດຖະຜູ້ມີປັນຍາ ພຣະຕິດສະທັນຕະບັນດິດ ພຣະກາສຸມະນະ ຜູ້ຊ່ຽວຊານ ພຣະທີຄະເຖຣະ ແລະພຣະທີຄະສຸມະນະບັນດິດ

ຕໍ່ມາ ພຣະກາສຸມະນະ ພຣະນາຄະເຖຣະ ພຣະພຸດທະຮັກຂິຕະ ພຣະຕິດສະເຖຣະຜູ້ມີປັນຍາ ແລະພຣະເທວະເຖຣະຜູ້ເປັນບັນດິດ

ຕໍ່ມາ ພຣະສຸມະນະຜູ້ມີປັນຍາແລະຊ່ຽວຊານໃນພຣະວິໄນ ພຣະຈູລະນາຄະເປັນພະຫູສູດ ຄືຊ້າງຕົກມັນ ພຣະທຳມະປາລິຕະ

ເປັນຜູ້ອັນສາທຸຊົນໃນໂຮຫະນະຊົນນະບົດພາກັນບູຊາເປັນຢ່າງດີ
ສິດຂອງພຣະທຳມະປາລິຕະນັ້ນ ມີປັນຍາຫຼາຍຊື່ວ່າເຂມະ
ຊົງຈຳພຣະໄຕຣປິດົກໄດ້ຮຸ່ງເຮືອງຢູ່ໃນເກາະດ້ວຍປັນຍາ
ຄືດວງຈັນຮຸ່ງເຮືອງຢູ່
ພຣະອຸປະຕິດສະຜູ້ມີປັນຍາ ພຣະປຸດສະເທວະຜູ້ເປັນມະຫາທຳມະກະຖຶກ

ຕໍ່ມາ ພຣະສຸມະນະຜູ້ມີປັນຍາ ພຣະມະຫາປະທຸມະ[๑] ເປັນພະຫູສູດ
ພຣະມະຫາສີວະຜູ້ເປັນມະຫາທຳມະກະຖຶກ ສະຫຼາດໃນພຣະປິດົກທັງໝົດ

ຕໍ່ມາ ພຣະອຸບາລີຜູ້ມີປັນຍາ ຊ່ຽວຊານໃນພຣະວິໄນ
ພຣະມະຫານາຄະຜູ້ມີປັນຍາຫຼາຍ ສະຫຼາດໃນວົງພຣະສັດທຳ

ຕໍ່ມາ ພຣະອະພະຍະຜູ້ມີປັນຍາ ສະຫຼາດໃນພຣະປິດົກທັງໝົດ
ພຣະຕິດສະເຖຣະຜູ້ມີປັນຍາຊ່ຽວຊານໃນພຣະວິໄນ
ພຣະສຸມະນະ[๒]ມີປັນຍາຫຼາຍຜູ້ເປັນສິດຂອງພຣະຕິດສະເຖຣະນັ້ນ ເປັນພະຫູສູດ
ຮັກສາພຣະສາດສະໜາຕໍ່ກັນມາຢູ່ໃນຊົມພູທະວີບ

ພຣະຈູລາພະຍະຜູ້ມີປັນຍາແລະຊ່ຽວຊານໃນພຣະວິໄນ
ພຣະຕິດສະເຖຣະຜູ້ມີປັນຍາສະຫຼາດໃນວົງພຣະສັດທຳ
ພຣະຈູລະເທວະຜູ້ມີປັນຍາແລະຊ່ຽວຊານໃນພຣະວິໄນ
ແລະພຣະສີວະເຖຣະຜູ້ມີປັນຍາ ສະຫຼາດໃນພຣະວິໄນທັງໝົດ

ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຮູ້ພຣະວິໄນ
ສະຫຼາດໃນມັກ ໄດ້ປະກາດພຣະວິໄນປິດົກໄວ້ໃນເກາະຕາມພະປັນນິ

## ໔. ທຸຕິຍະອະນິຍະຕະສິກຂາບົດ

[໔໙] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດທຸຕິຍະອະນິຍະຕະສິກຂາບົດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີນັ່ງໃນບ່ອນລັບກັບມາຕຸຄາມສອງຕໍ່ສອງ

ຖາມ : ໃນທຸຕິຍະອະນິຍະຕະສິກຂາບົດນັ້ນ ມີພຣະບັນຍັດ ພຣະອະນຸບັນຍັດແລະອະນຸປະປັນນະ ບັນຍັດຢູ່ບໍ

ຕອບ : ໃນທຸຕິຍະອະນິຍະຕະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບໍ່ມີພຣະອະນຸບັນຍັດ ແລະອະນຸປະປັນນະບັນຍັດ

ຖາມ : ມີສັບພັດຖະບັນຍັດ ປະເທສະບັນຍັດຢູ່ບໍ

ຕອບ : ມີສັບພັດຖະບັນຍັດ

ຖາມ : ມີສາທາລະນະບັນຍັດ ອະສາທາລະນະບັນຍັດຢູ່ບໍ?

ຕອບ : ມີອະສາທາລະນະບັນຍັດ

ຖາມ : ມີເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ຕອບ : ມີເອກະໂຕບັນຍັດ

ຖາມ : ບັນດາປາຕິໂມກຂຸດເທດ ໕ ອຸດເທດ ທຸຕິຍະອະນິຍະຕະສິກຂາບົດນີ້ຈັດເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ?

ຕອບ : ຈັດເຂົ້າໃນນິທານຸດເທດ ນັບເນື່ອງໃນນິທານຸດເທດ

ຖາມ : ມາສູ່ອຸດເທດໂດຍອຸດເທດໃດ?

ຕອບ : ມາສູ່ອຸດເທດໂດຍອຸດເທດທີ ໔

ຖາມ : ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ຕອບ : ເປັນສີລະວິບັດກໍມີ ເປັນອາຈາຣະວິບັດກໍມີ

ຖາມ : ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?

ຕອບ : ເປັນກອງອາບັດສັງຄາທິເສດກໍມີ ເປັນກອງອາບັດປາຈິດຕີກໍມີ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາ ກັບຈິດ

ຖາມ : ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ?

ຕອບ : ເປັນອາປັດຕາທິກອນ

ຖາມ : ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທໍ່ໃດ?

ຕອບ : ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນກັບຕິນະວັດຖາຣະກະ ຯລຯ

**ອະນິຍະຕະ ໒ ສິກຂາບົດ ຈົບ**

## ລວມສິກຂາບົດທີ່ມີໃນອະນິຍະຕະກັນ

໑. ປະຖົມອະນິຍະຕະສິກຂາບົດ ວ່າດ້ວຍການນັ່ງໃນບ່ອນລັບຕາກັບຍິງສອງຕໍ່ສອງ
໒. ທຸຕິຍະອະນິຍະຕະສິກຂາບົດ ວ່າດ້ວຍການນັ່ງໃນບ່ອນລັບຫູກັບຍິງສອງຕໍ່ສອງ

ພຣະຜູ້ມີພຣະພາກເຈົ້າຜູ້ປະເສີດແລະຜູ້ມີຄວາມຕັ້ງໝັ້ນ ຊົງບັນຍັດໄວ້ດີແລ້ວ

# ໔. ນິດສັກຄິຍະກັນ

ຄໍາຖາມ - ຄໍາຕອບສະຖານທີ່ບັນຍັດເປັນຕົ້ນໃນນິດສັກຄິຍະກັນ

## ໑. ກະຖິນະວັກ (ຈີວອນວັກ)

### ໑. ປະຖົມກະຖິນສິກຂາບົດ

[໔໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ຊົງອະຕິເຣກຈີວອນໄວ້ເກີນ ໑໐ ມື້ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຊົງອະຕິເຣກຈີວອນ

ໃນປະຖົມກະຖິນສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ຄື (໑) ເກີດທາງກາຍກັບວາຈາ ບໍ່ແມ່ນທາງຈິດ (໒) ເກີດທາງກາຍວາຈາກັບຈິດ ຯລຯ

### ໒. ອຸດໂທສິຕະສິກຂາບົດ

[໔໕] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ຢູ່ປາສະຈາກໄຕຣຈີວອນ ສິ້ນຣາຕີໜຶ່ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຝາກຈີວອນໄວ້ກັບພວກພິກຂຸ ມີພຽງອຸດຕະຣາສົງ ກັບອັນຕະຣະວາສົກ ອອກຈາຣິກໄປສູ່ຊົນນະບົດ

ໃນອຸດໂທສິຕະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງກາຍກັບ ວາຈາ ບໍ່ແມ່ນເກີດທາງຈິດ (໔) ເກີດທາງກາຍວາຈາກັບຈິດ ໆລໆ

## ໓. ຕະຕິຍະກະຖິນະສິກຂາບົດ

[໔໖] ຖາມ : ຊົງບັນຍັດນິດສັກຄີຍະປາຈິດຕິແກ່ພິກຂຸຜູ້ຮັບຜ້າທີ່ເປັນອະກາລະຈີວອນ ແລ້ວ ເກັບໄວ້ເກີນ ໑ ເດືອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງ ຮັບຜ້າທີ່ເປັນອະກາລະຈີວອນແລ້ວ ເກັບໄວ້ເກີນ ໑ ເດືອນ

ໃນຕະຕິຍະກະຖິນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງກາຍກັບ ວາຈາ ບໍ່ແມ່ນເກີດທາງຈິດ (໔) ເກີດທາງກາຍວາຈາກັບຈິດ ໆລໆ

## ໔. ປຸຣານະຈີວະຣະສິກຂາບົດ

[໔໗] ຖາມ : ຊົງບັນຍັດນິດສັກຄີຍະປາຈິດຕິແກ່ພິກຂຸຜູ້ໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ ຊັກຈີວອນເກົ່າ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກຈີວອນເກົ່າ

ໃນປຸຣານະຈີວະຣະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໆລໆ

## ໕. ຈີວະຣະປະຕິກຄະຫະນະສິກຂາບົດ

[໔໗] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ຮັບຈີວອນຈາກມືພິກຂຸນີຜູ້ບໍ່ແມ່ນຍາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີຮັບຈີວອນຈາກມືພິກຂຸນີຜູ້ບໍ່ແມ່ນຍາດ

ໃນຈີວະຣະປະຕິກຄະຫະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາ ສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໖. ອັນຍາຕະກະວິນຍັດຕິສິກຂາບົດ

[໔໘] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ອອກປາກຂໍຈີວອນຈາກຄະລຶຫັດຊາຍຫຼືຄະລຶຫັດຍິງ ຜູ້ບໍ່ແມ່ນຍາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດອອກປາກຂໍຈີວອນຈາກບຸດເສດຖີ ຜູ້ບໍ່ແມ່ນຍາດ

ໃນອັນຍາຕະກະວິນຍັດຕິສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາ ສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໗. ຕະຕຸດຕະຣິສິກຂາບົດ

[໕໐] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ອອກປາກຂໍຈີວອນເກີນກວ່ານັ້ນຈາກຄະລຶຫັດຊາຍ ຫຼືຄະລຶຫັດຍິງຜູ້ບໍ່ແມ່ນຍາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີບໍ່ຮູ້ຈັກປະມານ ອອກປາກຂໍຈີວອນເປັນຈຳນວນຫຼາຍ

ໃນຕະຕຸດຕະຣີສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໗. ອຸປັກຂະຕະສິກຂາບົດ

[໖໑] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕີແກ່ພິກຂຸຜູ້ທີ່ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນເຂົ້າໄປຫາຄະລີຫັດຜູ້ບໍ່ແມ່ນຍາດ ແລ້ວກຳນົດຊະນິດຈີວອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດທີ່ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນເຂົ້າ ໄປຫາຄະລີຫັດຜູ້ບໍ່ແມ່ນຍາດ ແລ້ວກຳນົດຊະນິດຈີວອນ

ໃນອຸປັກຂະຕະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໙. ທຸຕິຍະອຸປັກຂະຕະສິກຂາບົດ

[໖໔] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕີແກ່ພິກຂຸຜູ້ທີ່ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນເຂົ້າໄປຫາພວກຄະລີຫັດຜູ້ບໍ່ແມ່ນຍາດ ແລ້ວກຳນົດຊະນິດຈີວອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດທີ່ເຂົາບໍ່ໄດ້ປະວາຣະນາເອົາໄວ້ກ່ອນ ເຂົ້າໄປຫາພວກຄະລີຫັດຜູ້ບໍ່ແມ່ນຍາດ ແລ້ວກຳນົດຊະນິດຈີວອນ

ໃນທຸຕິຍະອຸປັກຂະຕະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໑໐. ຣາຊະສິກຂາບົດ

[໓໓] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕີແກ່ພິກຂຸຜູ້ໃຫ້ເຂົາຈັດຈີວອນສຳເລັດໄດ້ດ້ວຍ ການທວງເກີນ ໓ ຄັ້ງ ຢືນເກີນ ໖ ຄັ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດອັນອຸປາສົກບອກວ່າ "ໂຜດຖ້າວັນໜຶ່ງເທີ້ນ ຂ້ານ້ອຍ" ກໍບໍ່ຍອມຖ້າ

ໃນຣາຊະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

**ກະຖິນະວັກທີ ໑ ຈົບ**

## ລວມສິກຂາບົດທີ່ມີໃນກະຖິນະວັກ

| | |
|---|---|
| ໑. ປະຖົມກະຖິນສິກຂາບົດ | ວ່າດ້ວຍກະຖິນເດາະຂໍ້ທີ ໑ |
| ໒. ອຸດໂທສິຕະສິກຂາບົດ | ວ່າດ້ວຍພິກຂຸມ້ຽນຈີວອນໄວ້ໃນໂຮງມ້ຽນເຄື່ອງ (ວ່າດ້ວຍກະຖິນເດາະຂໍ້ທີ ໒) |
| ໓. ຕະຕິຍະກະຖິນະສິກຂາບົດ | ວ່າດ້ວຍກະຖິນເດາະຂໍ້ທີ ໓ |
| ໔. ປຸຣານະຈີວະຣະສິກຂາບົດ | ວ່າດ້ວຍການໃຫ້ຊັກຈີວອນເກົ່າ |
| ໕. ຈີວະຣະປະຕິກຄະຫະນະສິກຂາບົດ | ວ່າດ້ວຍການຮັບຈີວອນ |
| ໖. ອັນຍາຕະກະວິນຍັດຕິສິກຂາບົດ | ວ່າດ້ວຍການອອກປາກຂໍຄະລືຫັດຜູ້ບໍ່ແມ່ນຍາດ |
| ໗. ຕະຕຸດຕະຣິສິກຂາບົດ | ວ່າດ້ວຍການອອກປາກຂໍຈີວອນເກີນ |
| ໘. ອຸປັກຂະຕະສິກຂາບົດ | ວ່າດ້ວຍຄົນກະກຽມຊັບເປັນຄ່າຈີວອນ |
| ໙. ທຸຕິຍະອຸປັກຂະຕະສິກຂາບົດ | ວ່າດ້ວຍຄົນກະກຽມຊັບເປັນຄ່າຈີວອນຂໍ້ທີ ໒ |
| ໑໐. ຣາຊະສິກຂາບົດ | ວ່າດ້ວຍຊັບເປັນຄ່າຈີວອນທີ່ພຣະຣາຊາເປັນຕົ້ນໃຫ້ທູດນຳມາຖວາຍ |

# ໔. ໂກສິຍະວັກ

## ໑. ໂກສິຍະສິກຂາບົດ

[໓໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດນິດສັກຄີຍະປາຈິດຕິແກ່ພິກຂຸຜູ້ໃຊ້ໃຫ້ເຮັດສັນຖັດປະສົມໃຍໄໝ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ເມືອງອາລະວີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີເຂົ້າໄປຫາພວກຊ່າງທໍຜ້າໄໝ ກ່າວແນວນີ້ວ່າ "ທ່ານທັງຫຼາຍ ພວກທ່ານຈົ່ງຕົ້ມໂຕໄໝຈຳນວນຫຼາຍ ໃຫ້ແກ່ພວກອາດມາແດ່ ພວກອາດຕະມາຕ້ອງການຈະເຮັດສັນຖັດປະສົມໃຍໄໝ

ໃນໂກສິຍະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໒. ສຸດທະກາລະກະສິກຂາບົດ

[໓໕] ຖາມ : ຊົງບັນຍັດນິດສັກຄີຍະປາຈິດຕິແກ່ພິກຂຸຜູ້ໃຊ້ໃຫ້ເຮັດສັນຖັດຂົນຈຽມດຳລ້ວນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໃຊ້ໃຫ້ເຮັດສັນຖັດຂົນຈຽມດຳລ້ວນ

ໃນສຸດທະກາລະກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໓. ທະເວພາຄະສິກຂາບົດ

[໓໖] ຖາມ : ຊົງບັນຍັດນິດສັກຄີຍະປາຈິດຕິແກ່ພິກຂຸຜູ້ບໍ່ເອົາຂົນຈຽມດຳລ້ວນ ໒ ສ່ວນ ຂົນຈຽມຂາວ ໑ ສ່ວນ ຂົນຈຽມແດງ ໑ ສ່ວນມາປົນແລ້ວໃຫ້ເຮັດສັນຖັດໃໝ່ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໃຫ້ນຳຂົນຈຽມຂາວໜ້ອຍໜຶ່ງປົນໄວ້ທີ່ຊາຍສັນຖັດ ແລ້ວໃຫ້ເຮັດສັນຖັດຂົນຈຽມດຳລ້ວນຄືເກົ່າ

ໃນທະເວພາຄະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໔. ສັບພັດສະສິກຂາບົດ

[໖໗] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ໃຊ້ໃຫ້ເຮັດສັນຖັດທຸກປີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງໃຊ້ໃຫ້ເຮັດສັນຖັດທຸກປີ

ໃນສັບພັດສະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໕. ນິສີທະນະສັນຖະຕະສິກຂາບົດ

[໖໘] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ບໍ່ເອົາສັນຖັດເກົ່າ ໑ ຄືບ ສຸຄົດໂດຍຮອບມາປົນ ແລ້ວໃຊ້ໃຫ້ເຮັດສັນຖັດຮອງນັ່ງໃໝ່ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຖິ້ມສັນຖັດແລ້ວພາກັນສະມາທານອາຣັນຍິກະທຸດົງ ປິນດະປາຕິກະທຸດົງ ປັງສຸກູລິກະທຸດົງ

ໃນນິສີທະນະສັນຖະຕະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ៧. ເອລະກະໂລມະສິກຂາບົດ

[៣៧] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ຮັບຂົນຈຽມມາແລ້ວເດີນທາງໄກເກີນ ៣ ໂຍດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸອົງໜຶ່ງຮັບຂົນຈຽມແລ້ວນຳໄປເກີນ ៣ ໂຍດ

ໃນເອລະກະໂລມະສິກຂາບົດນັ້ນ ມີ ១ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ៦ ສະມຸດຖານ ເກີດດ້ວຍສະມຸດຖານ ២ ສະມຸດຖານ ຄື (១) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (២) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

## ៨. ເອລະກະໂລມະໂທວາປະນະສິກຂາບົດ

[៤០] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກຂົນຈຽມ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ແຄວ້ນສັກກະ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກຂົນຈຽມ

ໃນເອລະກະໂລມະໂທວາປະນະສິກຂາບົດນັ້ນ ມີ ១ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ៦ ສະມຸດຖານ ເກີດດ້ວຍສະມຸດຖານ ៦ ສະມຸດຖານ ฯลฯ

## ៩. ຣູປິຍະສິກຂາບົດ

[៤១] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ຮັບຣູປິຍະ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄື

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດຮັບຣູປິຍະ

ໃນຣູປິຍະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໙. ຣູປິຍະສັງໂວຫາຣະສິກຂາບົດ

[໔໘] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕີແກ່ພິກຂຸຜູ້ກະທຳການແລກປ່ຽນກັນດ້ວຍຣູປິຍະຊະນິດຕ່າງ ໆ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ກະທຳການແລກປ່ຽນກັນດ້ວຍຣູປິຍະຊະນິດຕ່າງ ໆ

ໃນຣູປິຍະສັງໂວຫາຣະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໑໐. ກະຍະວິກກະຍະສິກຂາບົດ

[໔໙] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕີແກ່ພິກຂຸຜູ້ກະທຳການຊື້ຂາຍມີປະການຕ່າງ ໆ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດທຳການຊື້ຂາຍກັບປະຣິພາຊົກ

ໃນກະຍະວິກກະຍະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

**ໂກສິຍະວັກທີ ໒ ຈົບ**

## ລວມສິກຂາບົດທີ່ມີໃນໂກສິຍະວັກ

| | |
|---|---|
| ໑. ໂກສິຍະສິກຂາບົດ | ວ່າດ້ວຍການເຮັດສັນຖັດປະສົມໃຍໄໝ |
| ໒. ສຸດທະກາລະກະສິກຂາບົດ | ວ່າດ້ວຍການເຮັດສັນຖັດໂດຍໃຊ້ຂົນຈຽມດຳລ້ວນ |
| ໓. ທະເວພາຄະສິກຂາບົດ | ວ່າດ້ວຍການເຮັດສັນຖັດໂດຍໃຊ້ຂົນຈຽມດຳ ໒ ສ່ວນ |
| ໔. ສັບພັດສະສິກຂາບົດ | ວ່າດ້ວຍການເກັບສັນຖັດໄວ້ ໖ ປີ |
| ໕. ນິສີທະນະສັນຖັດສິກຂາບົດ | ວ່າດ້ວຍການເຮັດສັນຖັດສຳລັບຮອງນັ່ງ |
| ໖. ເອລະກະໂລມະສິກຂາບົດ | ວ່າດ້ວຍການຮັບຂົນຈຽມ |
| ໗. ເອລະກະໂທວາປະນະສິກຂາບົດ | ວ່າດ້ວຍການໃຫ້ຊັກຂົນຈຽມ |
| ໘. ຣູປິຍະສິກຂາບົດ | ວ່າດ້ວຍການຮັບຣູປິຍະ |
| ໙. ຣູປິຍະສັງໂວຫາຣະສິກຂາບົດ | ວ່າດ້ວຍການແລກປ່ຽນຣູປິຍະ |
| ໑໐. ກະຍະວິກກະຍະສິກຂາບົດ | ວ່າດ້ວຍການຊື້ຂາຍ |

## ໓. ປັດຕະວັກ

### ໑. ປັດຕະສິກຂາບົດ

[໔໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດນິດສັກຄີຍະປາຈິດຕີແກ່ພິກຂຸຜູ້ຊົງອະຕິເຣກບາດໄວ້ເກີນ ໑໐ ມື້ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຊົງອະຕິເຣກບາດ

ໃນປັດຕະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງ ອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ຄື (໑) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍວາຈາກັບຈິດ ຯລຯ

### ໒. ອູນະປັດຈະພັນທະນະສິກຂາບົດ

[໔໕] ຖາມ : ຊົງບັນຍັດນິດສັກຄີຍະປາຈິດຕີແກ່ພິກຂຸຜູ້ມີບາດທີ່ມີຮອຍຊ່ອມ ຍ່ອນກວ່າ ໕ ແຫ່ງ ຂໍບາດໃໝ່ໜ່ວຍອື່ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ແຄວ້ນສັກກະ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີມີບາດແຕກພຽງເລັກໜ້ອຍແດ່ ກະເທາະ ພຽງເລັກໜ້ອຍແດ່ ມີຮອຍຂູດຂີດພຽງເລັກໜ້ອຍແດ່ ກໍອອກປາກຂໍບາດໃໝ່ເປັນຈຳນວນຫຼາຍ

ໃນອູນະປັດຈະພັນທະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໓. ເພສັດຊະສິກຂາບົດ

[໔໖] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕີແກ່ພິກຂຸຜູ້ຮັບປະເຄນເພສັດແລ້ວເກັບໄວ້ເກີນ ໗ ມື້ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຮັບປະເຄນເພສັດແລ້ວເກັບໄວ້ເກີນ ໗ ມື້

ໃນເພສັດຊະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ[1] ຯລຯ

## ໔. ວັດສິກະສາຕິກະສິກຂາບົດ

[໔໗] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕີແກ່ພິກຂຸຜູ້ສະແຫວງຫາຜ້າອາບນ້ຳຝົນເມື່ອລະດູຮ້ອນຍັງເຫຼືອເກີນກວ່າ ໑ ເດືອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີສະແຫວງຫາຈີວອນຄືຜ້າອາບນ້ຳຝົນ ເມື່ອລະດູຮ້ອນຍັງເຫຼືອເກີນກວ່າ ໑ ເດືອນ

ໃນວັດສິກະສາຕິກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໕. ຈີວະຣະອັດສິນທະນະສິກຂາບົດ

[໔໘] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ໃຫ້ຈີວອນແກ່ພິກຂຸເອງແລ້ວໂກດ ບໍ່ພໍໃຈຍາດເອົາຄືນມາ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດໃຫ້ຈີວອນແກ່ພິກຂຸເອງແລ້ວຄຽດບໍ່ພໍໃຈຍາດເອົາຄືນມາ

ໃນຈີວະຣະອັດສິນທະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໖. ສຸດຕະວິນຍັດຕິສິກຂາບົດ

[໔໙] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ອອກປາກຂໍດ້າຍມາເອງແລ້ວໃຊ້ຊ່າງຫູກໃຫ້ຕ່ຳຈີວອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີອອກປາກຂໍດ້າຍມາເອງແລ້ວໃຊ້ຊ່າງຫູກໃຫ້ຕ່ຳຈີວອນ

ໃນສຸດຕະວິນຍັດຕິສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໗. ມະຫາເປສະກາຣະສິກຂາບົດ

[໕໐] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ທີ່ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນເຂົ້າໄປຫາຊ່າງຫູກຂອງຄະລືຫັດຜູ້ບໍ່ແມ່ນຍາດແລ້ວກຳນົດຊະນິດຈີວອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດທີ່ເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຊ່າງຫູກຂອງຄະລຶຫັດຜູ້ບໍ່ແມ່ນຍາດແລ້ວກຳນົດຊະນິດຈີວອນ

ໃນມະຫາເປສະກາຣະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໙. ອັດເຈກະຈີວະຣະສິກຂາບົດ

[໕໑] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ຮັບອັດເຈກະຈີວອນແລ້ວເກັບໄວ້ເກີນສະໄໝຈີວອນການ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຮັບອັດເຈກະຈີວອນແລ້ວເກັບໄວ້ເກີນສະໄໝຈີວອນການ

ໃນອັດເຈກະຈີວະຣະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ຯລຯ

## ໑໐. ສາສັງກະສິກຂາບົດ

[໕໔] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸຜູ້ເກັບໄຕຣຈີວອນຜືນໃດຜືນໜຶ່ງໄວ້ໃນບໍລິເວນບ້ານ ແລ້ວຢູ່ປາສະຈາກເກີນ ໖ ຄືນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງເກັບໄຕຣຈີວອນຜືນໃດຜືນໜຶ່ງໄວ້ໃນບໍລິເວນບ້ານແລ້ວ ຢູ່ປາສະຈາກເກີນ ໖ ຄືນ

ໃນສາສັງກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ໆລໆ

## ໑໐. ປະຣິນະຕະສິກຂາບົດ

[໔໗] ຖາມ : ຊົງບັນຍັດນິດສັກຄິຍະປາຈິດຕີແກ່ພິກຂຸຜູ້ຮູ້ຢູ່ ນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງມາເພື່ອຕົນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖອບ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຮູ້ຢູ່ນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງມາເພື່ອຕົນ

ໃນປະຣິນະຕະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໆລໆ

**ປັດຕະວັກທີ ໓ ຈົບ**

## ລວມສິກຂາບົດທີ່ມີໃນປັດຕະວັກ

| | |
|---|---|
| ໑. ປັດຕະສິກຂາບົດ | ວ່າດ້ວຍບາດ |
| ໒. ອູນະປັດຈະພັນທະນະສິກຂາບົດ | ວ່າດ້ວຍບາດມີຮອຍຊ່ອມຍ່ອນກວ່າ ໕ ແຫ່ງ |
| ໓. ເພສັດຊະສິກຂາບົດ | ວ່າດ້ວຍເພສັດ |
| ໔. ວັດສິກະສາຕິກະສິກຂາບົດ | ວ່າດ້ວຍຜ້າອາບນ້ຳຝົນ |
| ໕. ຈີວະຣະອັດສິນທະນະສິກຂາບົດ | ວ່າດ້ວຍການໃຫ້ຈີວອນແລ້ວຍາດເອົາຄືນ |
| ໖. ສຸດຕະວິນຍັດຕິສິກຂາບົດ | ວ່າດ້ວຍການອອກປາກຂໍດ້າຍ |
| ໗. ມະຫາເປສະກາຣະສິກຂາບົດ | ວ່າດ້ວຍການສັ່ງຊ່າງຫູກຕ່ຳຈີວອນ |
| ໘. ອັດເຈກະຈີວະຣະສິກຂາບົດ | ວ່າດ້ວຍອັດເຈກະຈີວອນ |
| ໙. ສາສັງກະສິກຂາບົດ | ວ່າດ້ວຍເສນາສະນະປ່າທີ່ໜ້າຫວາດຣະແວງ |
| ໑໐. ປະຣິນະຕະສິກຂາບົດ | ວ່າດ້ວຍການນ້ອມລາບ |

**ນິດສັກຄິຍະປາຈິດຕີ ໓໐ ສິກຂາບົດ ຈົບ**

# ໕. ປາຈິດຕິຍະກັນ

ຄຳຖາມ - ຄຳຕອບສະຖານທີ່ບັນຍັດເປັນຕົ້ນໃນປາຈິດຕິຍະກັນ

## ໑. ມຸສາວາທະວັກ

## ໑. ມຸສາວາທະສິກຂາບົດ

[໕໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຈິດຕິຍ້ອນກ່າວຕົວະທັງທີ່ຮູ້ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະຫັດຖະກະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະຫັດຖະກະສາກະຍະບຸດເຈລະຈາກັບພວກເດຍຣະຖີ ປະຕິເສດແລ້ວຮັບ ຮັບແລ້ວປະຕິເສດ

ໃນມຸສາວາທະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດ ທາງອາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ ຯລຯ

## ໒. ໂອມະສະວາທະສິກຂາບົດ

[໕໕] ຖາມ : ຊົງບັນຍັດປາຈິດຕິຍ້ອນກ່າວສຽດສີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຜິດຖຽງກັບພິກຂຸຜູ້ມີສິນດີງາມທັງຫຼາຍ ກ່າວ ສຽດສີພິກຂຸຜູ້ມີສິນດີງາມທັງຫຼາຍ

ໃນໂອມະສະວາທະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໓. ເປສຸນຍະສິກຂາບົດ

[໕໖] ຖາມ : ຊົງບັນຍັດປາຈິດຕີຍ້ອນກ່າວສັບສໍ່ພິກຂຸ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ໄປຍຸແຍ່ພວກພິກຂຸຜູ້ໝາງໃຈກັນ ຜິດຖຽງກັນ ວິວາດກັນ

ໃນເປສຸນຍະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໔. ປະທະໂສທຳມະສິກຂາບົດ

[໕໗] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ສອນອະນຸປະສຳບັນໃຫ້ກ່າວທຳແຂ່ງກັນເປັນບົດ ໆ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີສອນພວກອຸປາສົກໃຫ້ກ່າວທຳແຂ່ງກັນເປັນບົດ ໆ

ໃນປະທະໂສທຳມະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ຄື (໑) ເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ຯລຯ

## ໕. ສະຫະເສີຍຍະສິກຂາບົດ

[໕໘] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ນອນຮ່ວມກັບອະນຸປະສຳບັນເກີນ ໒-໓ ຄືນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ເມືອງອາລະວີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງນອນຮ່ວມກັບອະນຸປະສຳບັນ

ໃນສະຫະເສີຍຍະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໔) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ໖. ທຸຕິຍະສະຫະເສີຍຍະສິກຂາບົດ

[໕໙] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ນອນຮ່ວມກັບມາຕຸຄາມ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອະນຸຣຸດທະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອະນຸຣຸດທະນອນຮ່ວມກັບມາຕຸຄາມ

ໃນທຸຕິຍະສະຫະເສີຍຍະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

## ໗. ທຳມະເທສະນາສິກຂາບົດ

[໖໐] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ສະແດງທຳແກ່ມາຕຸຄາມເກີນ ໕-໖ ຄຳ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີສະແດງທຳແກ່ມາຕຸຄາມ

ໃນທຳມະເທສະນາສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໒ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ເປັນປະທະໂສທຳມະສະມຸດຖານ ຯລຯ

## ໗. ພູຕາໂຣຈະນະສິກຂາບົດ

[໖໑] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ບອກອຸດຕະຣິມະນຸດສະທຳທີ່ມີຈິງແກ່ ອະນຸປະສຳບັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງຜາຣິບໃຜ?

ຕອບ : ຊົງຜາຣິບພວກພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາກ່າວອວດອຸດຕະຣິມະນຸດສະທຳ ຂອງກັນແລະກັນໃຫ້ພວກຄະລິຫັດຟັງ

ໃນພູຕາໂຣຈະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ (໓) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ ຯລຯ

## ໘. ທຸດຖຸນລາໂຣຈະນະສິກຂາບົດ

[໖໒] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ບອກອາບັດຊົ່ວຫຍາບຂອງພິກຂຸແກ່ອະນຸປະສຳບັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣິບໃຜ?

ຕອບ : ຊົງຜາຣິບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີບອກອາບັດຊົ່ວຫຍາບຂອງພິກຂຸແກ່ອະນຸປະສຳບັນ

ໃນທຸດຖຸນລາໂຣຈະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ເປັນອະທິນນາທານສະມຸດຖານ ຯລຯ

## ໑໐. ປະຖະວີຂະນະນະສິກຂາບົດ

[໖໓] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ຂຸດດິນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ເມືອງອາລະວີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸຊາວເມືອງອາລະວີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸຊາວເມືອງອາລະວີຂຸດດິນ

ໃນປະຖະວີຂະນະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

**ມຸສາວາທະວັກທີ ໑ ຈົບ**

## ລວມສິກຂາບົດທີ່ມີໃນມຸສາວາທະວັກ

| | |
|---|---|
| ໑. ມຸສາວາທະສິກຂາບົດ | ວ່າດ້ວຍການກ່າວຕົວະ |
| ໒. ໂອມະສະວາທະສິກຂາບົດ | ວ່າດ້ວຍການກ່າວສຽດສີ |
| ໓. ເປສຸນຍະສິກຂາບົດ | ວ່າດ້ວຍການກ່າວສັບສໍ່ |
| ໔. ປະທະໂສທຳມະສິກຂາບົດ | ວ່າດ້ວຍການສອນໃຫ້ກ່າວທຳແຂ່ງກັນເປັນບົດ ໆ |
| ໕. ສະຫະເສີຍຍະສິກຂາບົດ | ວ່າດ້ວຍການນອນຮ່ວມກັນ |
| ໖. ທຸຕິຍະສະຫະເສີຍຍະສິກຂາບົດ | ວ່າດ້ວຍການນອນຮ່ວມກັນຂໍ້ທີ ໒ |
| ໗. ທຳມະເທສະນາສິກຂາບົດ | ວ່າດ້ວຍການສະແດງທຳ |
| ໘. ພູຕາໂຣຈະນະສິກຂາບົດ | ວ່າດ້ວຍການບອກອຸດຕະຣິມະນຸດສະທຳທີ່ມີຈິງ |
| ໙. ທຸດຖຸນລາໂຣຈະນະສິກຂາບົດ | ວ່າດ້ວຍການບອກອາບັດຊົ່ວຫຍາບ |
| ໑໐. ປະຖະວີຂະນະນະສິກຂາບົດ | ວ່າດ້ວຍການຂຸດດິນ |

# ໔. ພູຕະຄາມວັກ

## ໑. ພູຕະຄາມະສິກຂາບົດ

[໖໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຈິດຕິຍ້ອນພາກພູຕະຄາມ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ເມືອງອາລະວີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຊາວເມືອງອາລະວີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຊາວເມືອງອາລະວີຕັດຕົ້ນໄມ້

ໃນພູຕະຄາມະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ໒. ອັນຍະວາທະກະສິກຂາບົດ

[໖໕] ຖາມ : ຊົງບັນຍັດປາຈິດຕິຍ້ອນນຳເອົາເລື້ອງອື່ນມາກ່າວປົກປິດ ຍ້ອນເຮັດສົງໃຫ້ລຳບາກ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນໂກສຳພີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະສັນນະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະສັນນະຖືກສອບສວນອາບັດທ່າມກາງສົງກັບນຳເອົາເລື້ອງອື່ນມາກ່າວປົກປິດ

ໃນອັນຍະວາທະກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ໓. ອຸດຊາປະນະກະສິກຂາບົດ

[໖໖] ຖາມ : ຊົງບັນຍັດປາຈິດຕິຍ້ອນກ່າວໃຫ້ຜູ້ອື່ນເພ່ງໂທດ ຍ້ອນຈົ່ມວ່າ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພຣະເມດຕິຍະແລະພຣະພຸມມະຊະກະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະເມດຕິຍະແລະພຣະພຸມມະຊະກະກ່າວໃຫ້ພິກຂຸທັງຫຼາຍເພ່ງໂທດ ທ່ານພຣະທັບພະມັນລະບຸດ

ໃນອຸດຊາປະນະກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ໔. ປະຖົມເສນາສະນະສິກຂາບົດ

[໖໗] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ວາງຕຽງ ຕັ່ງ ຟູກ ຫຼື ຕັ່ງອີ້ຂອງສົງໃນບ່ອນກາງແຈ້ງແລ້ວ ບໍ່ມ້ຽນບໍ່ບອກມອບໝາຍແລ້ວພາກັນຈາກໄປ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຈັດຕັ້ງເສນາສະນະຂອງສົງໃນບ່ອນກາງແຈ້ງແລ້ວບໍ່ມ້ຽນ ບໍ່ບອກມອບໝາຍແລ້ວພາກັນຈາກໄປ

ໃນປະຖົມເສນາສະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ໗ລ໗

## ໕. ທຸຕິຍະເສນາສະນະສິກຂາບົດ

[໖໘] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ປູບ່ອນນອນໃນວິຫານຂອງສົງແລ້ວບໍ່ມ້ຽນ ບໍ່ບອກມອບໝາຍແລ້ວຈາກໄປ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັດຕະຣະສະວັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັດຕະຣະສະວັກຄີປູບ່ອນນອນໃນວິຫານຂອງສົງແລ້ວບໍ່ມ້ຽນ ບໍ່ບອກມອບໝາຍແລ້ວພາກັນຈາກໄປ

ໃນທຸຕິຍະເສນາສະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ຯລຯ

## ໖. ອະນຸປະຂັດຊະສິກຂາບົດ

[໖໙] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຮູ້ຢູ່ ເຂົ້າໄປນອນແຊກແຊງພິກຂຸຜູ້ເຂົ້າໄປຢູ່ໃນວິຫານຂອງສົງກ່ອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີເຂົ້າໄປນອນແຊກແຊງພວກພິກຂຸຜູ້ເຖຣະ

ໃນອະນຸປະຂັດຊະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ໗. ນິກກັດທະນະສິກຂາບົດ

[໗໐] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໂກດ ບໍ່ພໍໃຈລາກພິກຂຸອອກຈາກວິຫານຂອງສົງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໂກດ ບໍ່ພໍໃຈ ລາກພິກຂຸທັງຫຼາຍ ອອກຈາກວິຫານຂອງສົງ

ໃນນິກກັດທະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໘. ເວຫາສະກຸຕິສິກຂາບົດ

[໗໑] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ນັ່ງເທິງຕຽງ ຫຼືເທິງຕັ່ງອັນມີຕີນສຽບເທິງກຸດຕິຊັ້ນລອຍໃນວິຫານຂອງສົງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸອົງໜຶ່ງນັ່ງຢ່າງແຮງເທິງຕຽງທີ່ມີຕີນສຽບເທິງກຸດຕິຊັ້ນລອຍໃນວິຫານຂອງສົງ

ໃນເວຫາສະກຸຕິສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໔) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ໙. ມະຫັນລະກະວິຫາຣະສິກຂາບົດ

[໗໔] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ດຳເນີນການມຸງຫຼັງຄາ(ວິຫານ) ໔-໓ ຊັ້ນແລ້ວດຳເນີນການເກີນກວ່ານັ້ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນໂກສຳພີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະສັນນະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະສັນນະໃຫ້ມຸງໃຫ້ສາບທາວິຫານທີ່ສ້າງສຳເລັດແລ້ວຫຼາຍ ໆ ຄັ້ງ ວິຫານມີນ້ຳໜັກຫຼາຍ ຈຶ່ງພັງລົງມາ

ໃນມະຫັນລະກະວິຫາຣະສິກຂາບົດນີ້ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໑໐. ສັບປານະກະສິກຂາບົດ

[໗໓] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຮູ້ຢູ່ວ່ານ້ຳມີສິ່ງມີຊີວິດ ຫົດຫຍ້າ ຫຼື ດິນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ເມືອງອາລະວີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸຊາວເມືອງອາລະວີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຊາວເມືອງອາລະວີຮູ້ຢູ່ວ່ານ້ຳມີສິ່ງມີຊີວິດ ທົດຫຍ້າຫຼືດິນ

ໃນສັບປານະກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໆລໆ

**ພູຕະຄາມວັກທີ ໒ ຈົບ**

## ລວມສິກຂາບົດທີ່ມີໃນພູຕະຄາມວັກ

| | |
|---|---|
| ໑. ພູຕະຄາມະສິກຂາບົດ | ວ່າດ້ວຍການພາກພູຕະຄາມ |
| ໒. ອັນຍະວາທະກະສິກຂາບົດ | ວ່າດ້ວຍການກ່າວປົກປິດ |
| ໓. ອຸດຊາປະນະກະສິກຂາບົດ | ວ່າດ້ວຍການກ່າວໃຫ້ເພ່ງໂທດ |
| ໔. ປະຖົມເສນາສະນະສິກຂາບົດ | ວ່າດ້ວຍເສນາສະນະຂໍ້ທີ ໑ |
| ໕. ທຸຕິຍະເສນາສະນະສິກຂາບົດ | ວ່າດ້ວຍເສນາສະນະຂໍ້ທີ ໒ |
| ໖. ອະນຸປະຂັດຊະສິກຂາບົດ | ວ່າດ້ວຍການເຂົ້າໄປແຊກແຊງ |
| ໗. ນິກກັດທະນະສິກຂາບົດ | ວ່າດ້ວຍການລາກອອກ |
| ໘. ເວຫາສະກຸຕິສິກຂາບົດ | ວ່າດ້ວຍກຸດຕິຊັ້ນລອຍ |
| ໙. ມະຫັນລະກະວິຫາຣະສິກຂາບົດ | ວ່າດ້ວຍການສ້າງວິຫານໃຫຍ່ |
| ໑໐. ສັບປານະກະສິກຂາບົດ | ວ່າດ້ວຍສິ່ງມີຊີວິດ |

## ໓. ໂອວາທະວັກ

## ໑. ໂອວາທະສິກຂາບົດ

[໗໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ບໍ່ໄດ້ຮັບແຕ່ງຕັ້ງ ສັ່ງສອນພິກຂຸນີທັງຫຼາຍ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງປາຣົບໃຜ?

ຕອບ : ຊົງປາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີບໍ່ໄດ້ຮັບແຕ່ງຕັ້ງສັ່ງສອນພິກຂຸນີທັງຫຼາຍ

ຖາມ : ໃນໂອວາທະສິກຂາບົດນັ້ນ ມີພຣະບັນຍັດ ພຣະອະນຸບັນຍັດແລະອະນຸປະປັນນະບັນຍັດ ຢູ່ບໍ

ຕອບ : ໃນໂອວາທະສິກຂາບົດນັ້ນມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບໍ່ມີອະນຸປະປັນນະບັນຍັດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ (໔) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ຯລຯ

## ໔. ອັດຖັງຄະຕະສິກຂາບົດ

[໗໕] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ເມື່ອດວງອາທິດອັດສະດົງແລ້ວ ຍັງສັ່ງສອນພິກຂຸນີທັງຫຼາຍຢູ່ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະຈູລະປັນຖະກະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະຈູລະປັນຖະກະເມື່ອດວງອາທິດອັດສະດົງແລ້ວຍັງສັ່ງສອນພິກຂຸນີ ທັງຫຼາຍຢູ່

ໃນອັດຖັງຄະຕະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນປະທະໂສທຳມະສະມຸດຖານ ຯລຯ

## ໖. ພິກຂຸນູປັດສະຍະສິກຂາບົດ

[໗໖] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ເຂົ້າໄປທີ່ສຳນັກພິກຂຸນີແລ້ວສັ່ງສອນພິກຂຸນີທັງຫຼາຍ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ແຄວ້ນສັກກະ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີເຂົ້າໄປທີ່ສຳນັກພິກຂຸນີແລ້ວສັ່ງສອນພິກຂຸນີທັງຫຼາຍ

ໃນພິກຂຸນູປັດສະຍະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ຯລຯ

## ໔. ອາມິສະສິກຂາບົດ

[໗໗] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ກ່າວວ່າ "ພິກຂຸ(ຜູ້ເຖຣະ)ທັງຫຼາຍ ສັ່ງສອນພິກຂຸນີທັງຫຼາຍຍ້ອນເຫັນແກ່ອາມິດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີກ່າວວ່າ "ພິກຂຸ(ຜູ້ເຖຣະ)ທັງຫຼາຍສັ່ງສອນ ພິກຂຸນີທັງຫຼາຍຍ້ອນເຫັນແກ່ອາມິດ

ໃນອາມິສະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ๆลๆ

## ໕. ຈີວະຣະທານະສິກຂາບົດ

[໗໘] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ໃຫ້ຈີວອນແກ່ພິກຂຸນີຜູ້ບໍ່ແມ່ນຍາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸອົງໜຶ່ງໄດ້ໃຫ້ຈີວອນແກ່ພິກຂຸນີຜູ້ບໍ່ແມ່ນຍາດ

ໃນຈີວະຣະທານະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ๆลๆ

## ໖. ຈີວະຣະສິບພະນະສິກຂາບົດ

[໗໙] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ຫຍິບຈີວອນໃຫ້ພິກຂຸນີຜູ້ບໍ່ແມ່ນຍາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີຫຍິບຈີວອນໃຫ້ພິກຂຸນີຜູ້ບໍ່ແມ່ນຍາດ

ໃນຈີວະຣະສີບພະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໗. ສັງວິທານະສິກຂາບົດ

[໗໐] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຊັກຊວນກັນເດີນທາງໄກຮ່ວມກັນກັບພິກຂຸນີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຊັກຊວນກັນເດີນທາງໄກຮ່ວມກັນກັບພິກຂຸນີ

ໃນສັງວິທານະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໓) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໔) ເກີດທາງກາຍວາຈາກັບຈິດ ຯລຯ

## ໘. ນາວາພິຣູຫະນະສິກຂາບົດ

[໗໑] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຊັກຊວນພິກຂຸນີໂດຍສານເຮືອລຳດຽວກັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຊັກຊວນພິກຂຸນີໂດຍສານເຮືອລຳດຽວກັນ

ໃນນາວາພິຣູຫະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຯລຯ

## ໙. ປະຣິປາຈິຕະສິກຂາບົດ

[໗໘] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຮູ້ຢູ່ ສັນບິນທະບາດທີ່ພິກຂຸນີແນະນໍາ ໃຫ້ຈັດ ກຽມ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພຣະເທວະທັດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະເທວະທັດຮູ້ຢູ່ ສັນບິນທະບາດທີ່ພິກຂຸນີແນະນໍາໃຫ້ຈັດກຽມ

ໃນປະຣິປາຈິຕະສິກຂາບົດນັ້ນມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດ ຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິ ດ ບໍ່ແມ່ນເກີດທາງວາຈາ ຯລຯ

## ໑໐. ຣະໂຫນິສັດຊະສິກຂາບົດ

[໗໙] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ນັ່ງໃນບ່ອນລັບກັບພິກຂຸນີສອງຕໍ່ສອງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີນັ່ງໃນບ່ອນລັບກັບພິກຂຸນີສອງຕໍ່ສອງ

ໃນຣະໂຫນິສັດຊະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງ ວາຈາ ຯລຯ

### ໂອວາທະວັກທີ ໓ ຈົບ

## ລວມສິກຂາບົດທີ່ມີໃນໂອວາທະວັກ

໑. ໂອວາທະສິກຂາບົດ ວ່າດ້ວຍການສັ່ງສອນພິກຂຸນີ

໒. ອັດຖັງຄະຕະສິກຂາບົດ ວ່າດ້ວຍການສັ່ງສອນພິກຂຸນີໃນເວລາທີ່ດວງອາທິດ ອັດສະດົງແລ້ວ

໓. ພິກຂຸນູປັດສະຍະສິກຂາບົດ ວ່າດ້ວຍການໄປສັ່ງສອນພິກຂຸນີເຖິງທີ່ສໍານັກ

໔. ອາມິສະສິກຂາບົດ ວ່າດ້ວຍການສັ່ງສອນພິກຂຸນີຍ້ອນເຫັນແກ່ອາມິດ
໕. ຈີວະຣະທານະສິກຂາບົດ ວ່າດ້ວຍການຖວາຍຈີວອນ
໖. ຈີວະຣະສິບພະນະສິກຂາບົດ ວ່າດ້ວຍການຫຍິບຈີວອນໃຫ້ພິກຂຸນີ
໗. ສັງວິທານະສິກຂາບົດ ວ່າດ້ວຍການຊັກຊວນເດີນທາງຮ່ວມກັນ
໘. ນາວາພິຣູຫະນະສິກຂາບົດ ວ່າດ້ວຍການໂດຍສານເຮືອລຳດຽວກັນ
໙. ປະຣິປາຈິຕະສິກຂາບົດ ວ່າດ້ວຍການສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມ
໑໐. ຣະໂຫນິສັດຊະສິກຂາບົດ ວ່າດ້ວຍການນັ່ງໃນບ່ອນລັບ

## ໔. ໂພຊະນະວັກ

### ໑. ອາວະສະຖະປິນດະສິກຂາບົດ

[໙໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຢູ່ສັນພັດຕາຫານໃນບ່ອນພັກແຮມເກີນກວ່າໜຶ່ງຄາບ ຢູ່ໄສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຢູ່ສັນພັດຕາຫານໃນບ່ອນພັກແຮມເປັນປະຈຳ

ໃນອາວະສະຖະປິນດະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

### ໒. ຄະນະໂພຊະນະສິກຂາບົດ

[໙໕] ຖາມ : ຊົງບັນຍັດປາຈິດຕິ ຍ້ອນສັນຄະນະໂພຊະນະ ຢູ່ໄສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພຣະເທວະທັດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະເທວະທັດພ້ອມດ້ວຍບໍລິສັດພາກັນອອກປາກຂໍພັດຕາຫານໃນຕະກູນທັງຫຼາຍມາສັນ

ໃນຄະນະໂພຊະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໆ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ฯລฯ

## ໓. ປະຣຳປະຣະໂພຊະນະສິກຂາບົດ

[໘໖] ຖາມ : ຊົງບັນຍັດປາຈິດຕິ ຍ້ອນສັນປະຣຳປະຣະໂພຊະນະ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຮັບນິມົນໄວ້ໃນບ່ອນໜຶ່ງແລ້ວ ໄປສັນໃນອີກບ່ອນໜຶ່ງ

ໃນປະຣຳປະຣະໂພຊະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໕ ພຣະອະນຸບັນຍັດ[๑] ບັນດາ ສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ฯລฯ

## ໕. ການະມາຕຸສິກຂາບົດ

[໘໗] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຮັບເຂົ້າໜົມເຕັມ ໔-໓ ບາດແລ້ວຮັບເກີນກວ່ານັ້ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຮັບໂດຍບໍ່ຮູ້ປະມານ

ໃນການະມາຕຸສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ฯລฯ

## ໕. ປະຖົມປະວາຣະນາສິກຂາບົດ

[໗໗] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ສັນແລ້ວ ບອກຫ້າມພັດຕາຫານແລ້ວ ສັນຂອງຫຍ້ຳຫຼືຂອງສັນທີ່ບໍ່ເປັນເຈື່ອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງສັນແລ້ວ ບອກຫ້າມພັດຕາຫານແລ້ວໄປສັນທີ່ອື່ນອີກ

ໃນປະຖົມປະວາຣະນາສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ຯລຯ

## ໖. ທຸຕິຍະປະວາຣະນາສິກຂາບົດ

[໗໘] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ນຳຂອງຫຍ້ຳຫຼືຂອງສັນທີ່ບໍ່ເປັນເຈື່ອນ ໄປປະວາຣະນາພິກຂຸຜູ້ສັນແລ້ວບອກຫ້າມພັດຕາຫານແລ້ວ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸອົງໜຶ່ງນຳຂອງສັນທີ່ບໍ່ເປັນເຈື່ອນໄປປະວາຣະນາພິກຂຸຜູ້ສັນແລ້ວ ບອກຫ້າມພັດຕາຫານແລ້ວ(ໃຫ້ສັນອີກ)

ໃນທຸຕິຍະປະວາຣະນາສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໗. ວິກາລະໂພຊະນະສິກຂາບົດ

[໘໐] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ສັນຂອງຫຍ້ຳຫຼືຂອງສັນໃນເວລາວິການ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງປາຣົບພວກພິກຂຸສັດຕະຣະສະວັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັດຕະຣະສະວັກຄີສັນພັດຕາຫານໃນເວລາວິການ

ໃນວິກາລະໂພຊະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

## ໗. ສັນນິທິກາຣະກະສິກຂາບົດ

[໗໑] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ສັນຂອງຫຍໍ້າຫຼືຂອງສັນທີ່ເກັບສະສົມໄວ້ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງປາຣົບໃຜ?

ຕອບ : ຊົງປາຣົບທ່ານພຣະເວລັດຖະສີສະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະເວລັດຖະສີສະສັນໂພຊະນະທີ່ເກັບສະສົມໄວ້

ໃນສັນນິທິກາຣະກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

## ໘. ປະນີຕະໂພຊະນະສິກຂາບົດ

[໗໔] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ອອກປາກຂໍໂພຊະນະອັນປະນີດມາເພື່ອຕົນ ແລ້ວສັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງປາຣົບໃຜ?

ຕອບ : ຊົງປາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີອອກປາກຂໍໂພຊະນະອັນປະນີດມາເພື່ອຕົນ ແລ້ວສັນ

ໃນປະນີຕະໂພຊະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະ ມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຯລຯ

## ໑໐. ທັນຕະໂປນະສິກຂາບົດ

[໙໓] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ກິນອາຫານທີ່ຍັງບໍ່ມີຜູ້ຖວາຍໃຫ້ລ່ວງ ລຳຄໍ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸອົງໜຶ່ງກິນອາຫານທີ່ຍັງບໍ່ມີຜູ້ຖວາຍ ໃຫ້ລ່ວງລຳຄໍ

ໃນທັນຕະໂປນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

### ໂພຊະນະວັກທີ ໔ ຈົບ

## ລວມສິກຂາບົດທີ່ມີໃນໂພຊະນະວັກ

| | |
|---|---|
| ໑. ອາວະສະຖະປິນດະສິກຂາບົດ | ວ່າດ້ວຍການສັນພັດຕາຫານໃນບ່ອນພັກແຮມ |
| ໒. ຄະນະໂພຊະນະສິກຂາບົດ | ວ່າດ້ວຍການສັນຄະນະໂພຊະນະ |
| ໓. ປະຣຳປະຣະໂພຊະນະສິກຂາບົດ | ວ່າດ້ວຍການສັນປະຣຳປະຣະໂພຊະນະ |
| ໔. ການະມາຕຸສິກຂາບົດ | ວ່າດ້ວຍມານດາຂອງນາງການາ |
| ໕. ປະຖົມປະວາຣະນາສິກຂາບົດ | ວ່າດ້ວຍການບອກຫ້າມພັດຕາຫານຂໍ້ທີ ໑ |
| ໖. ທຸຕິຍະປະວາຣະນາສິກຂາບົດ | ວ່າດ້ວຍການບອກຫ້າມພັດຕາຫານຂໍ້ທີ ໒ |
| ໗. ວິກາລະໂພຊະນະສິກຂາບົດ | ວ່າດ້ວຍການສັນໂພຊະນະໃນເວລາວິການ |
| ໘. ສັນນິທິກາຣະກະສິກຂາບົດ | ວ່າດ້ວຍການສະສົມໂພຊະນະ |
| ໙. ປະນີຕະໂພຊະນະສິກຂາບົດ | ວ່າດ້ວຍການອອກປາກຂໍໂພຊະນະອັນປະນີດ |
| ໑໐. ທັນຕະໂປນະສິກຂາບົດ | ວ່າດ້ວຍການຮັບປະເຄນອາຫານນອກຈາກນ້ຳ ແລະໄມ້ຖູແຂ້ວ |

# ໕. ອະເຈລະກະວັກ

## ໑. ອະເຈລະກະສິກຂາບົດ

[໗໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໃຫ້ຂອງຫຍ້ຳຫຼືຂອງສັນແກ່ອະເຈລະກະປະຣິພາຊົກຫຼືປະຣິພາຊິກາດ້ວຍມືຕົນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອານົນ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອານົນແຈກເຂົ້າໜົມໃຫ້ປະຣິພາຊິກາຄົນໜຶ່ງ ໒ ອັນ ດ້ວຍ ສຳຄັນວ່າເປັນອັນດຽວ

ໃນອະເຈລະກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

## ໒. ອຸຍໂຍຊະນະສິກຂາບົດ

[໗໕] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ກ່າວຊັກຊວນພິກຂຸວ່າ "ທ່ານຈົ່ງມາເທີ້ນ ພວກເຮົາຈະເຂົ້າໄປບິນທະບາດໃນໝູ່ບ້ານຫຼືໃນນິຄົມ" ແລ້ວໃຫ້ທາຍົກຖວາຍ ຫຼືບໍ່ໃຫ້ທາຍົກຖວາຍແກ່ພິກຂຸນັ້ນແລ້ວນິມົນກັບ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດກ່າວຊັກຊວນພິກຂຸວ່າ "ທ່ານຈົ່ງ ມາເທີ້ນ ພວກເຮົາຈະເຂົ້າໄປບິນທະບາດໃນໝູ່ບ້ານຫຼືໃນນິຄົມ" ແລ້ວບໍ່ໃຫ້ທາຍົກຖວາຍແກ່ ພິກຂຸນັ້ນ ແລ້ວນິມົນກັບ

ໃນອຸຍໂຍຊະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໓. ສະໂພຊະນະສິກຂາບົດ

[໙໖] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ເຂົ້າໄປນັ່ງແຊກແຊງໃນຕະກູນທີ່ມີຄົນ ໘ ຄົນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດເຂົ້າໄປນັ່ງແຊກແຊງໃນຕະກູນທີ່ມີ ຄົນ ໘ ຄົນ

ໃນສະໂພຊະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ໔. ຣະໂຫປະຕິດສັນນະສິກຂາບົດ

[໙໗] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ນັ່ງເທິງອາສະນະທີ່ກຳບັງໃນບ່ອນລັບກັບມາຕຸຄາມ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດນັ່ງເທິງອາສະນະທີ່ກຳບັງໃນບ່ອນລັບກັບມາຕຸຄາມ

ໃນຣະໂຫປະຕິດສັນນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ໕. ຣະໂຫນິສັດຊະສິກຂາບົດ

[໙໘] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ນັ່ງໃນບ່ອນລັບກັບມາຕຸຄາມສອງຕໍ່ສອງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດນັ່ງໃນບ່ອນລັບກັບມາຕຸຄາມສອງຕໍ່ສອງ

ໃນຣະໂຫນິສັດຊະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ໖. ຈາຣິດຕະສິກຂາບົດ

[໙໙] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຮັບນິມົນໄວ້ແລ້ວ ມີພັດຕາຫານຢູ່ແລ້ວ ບໍ່ບອກລາພິກຂຸທີ່ມີຢູ່ ທ່ຽວສັນຈອນໄປໃນຕະກູນທັງຫຼາຍກ່ອນເວລາສັນພັດຕາຫານ ຫຼື ຫຼັງເວລາສັນພັດຕາຫານ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄື

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດຮັບນິມົນໄວ້ແລ້ວ ມີພັດຕາຫານຢູ່ແລ້ວ ຍັງທ່ຽວສັນຈອນໄປໃນຕະກູນທັງຫຼາຍ ກ່ອນເວລາສັນພັດຕາຫານ ຫຼັງເວລາສັນພັດຕາຫານ

ໃນຈາຣິດຕະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໔ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ຯລຯ

## ໗. ມະຫານາມະສິກຂາບົດ

[໑໐໐] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ອອກປາກຂໍເພສັດເກີນກວ່າກຳນົດນັ້ນຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ແຄວ້ນສັກກະ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະເຈົ້າມະຫານາມະສາກະຍະຂໍຮ້ອງພວກພິກຂຸສັບພັກຄີວ່າ "ພຣະຜູ້ເປັນເຈົ້າທັງຫຼາຍ ມື້ນີ້ ພຣະຜູ້ເປັນເຈົ້າໂຜດຖ້າກ່ອນ" ກໍຖ້າບໍ່ໄດ້

ໃນມະຫານາມະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໗. ອຸຍຍຸດຕະເສນາສິກຂາບົດ

[໑໐໗] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໄປເບິ່ງກອງທັບທີ່ເຄື່ອນຂະບວນອອກຣົບຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໄປເບິ່ງກອງທັບທີ່ເຄື່ອນຂະບວນຣົບ

ໃນອຸຍຍຸດຕະເສນາສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

## ໘. ເສນາວາສະສິກຂາບົດ

[໑໐໔] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຢູ່ພັກແຮມໃນກອງທັບເກີນກວ່າ ໓ ຄືນຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຢູ່ພັກແຮມໃນກອງທັບເກີນກວ່າ ໓ ຄືນ

ໃນເສນາວາສະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

## ໑໐. ອຸຍໂຍທິກະສິກຂາບົດ

[໑໐໓] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໄປສູ່ສະໜາມຮົບ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໄປສູ່ສະໜາມຮົບ

ໃນອຸຍໂຍທິກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ໗ລ໗

**ອະເຈລະກະວັກທີ ໕ ຈົບ**

## ລວມສິກຂາບົດທີ່ມີໃນອະເຈລະກະວັກ

໑. ອະເຈລະກະສິກຂາບົດ ວ່າດ້ວຍນັກບວດເປືອຍ
໒. ອຸຍໂຍຊະນະສິກຂາບົດ ວ່າດ້ວຍການສົ່ງກັບ
໓. ສະໂພຊະນະສິກຂາບົດ ວ່າດ້ວຍການເຂົ້າໄປແຊກແຊງໃນບ່ອນທີ່ມີຄົນ ໒ ຄົນ
໔. ຣະໂຫປະຕິດສັນນະສິກຂາບົດ ວ່າດ້ວຍການນັ່ງໃນບ່ອນລັບທີ່ມີສິ່ງກຳບັງ
໕. ຣະໂຫນິສັດຊະສິກຂາບົດ ວ່າດ້ວຍການນັ່ງໃນບ່ອນລັບ
໖. ຈາຣິດຕະສິກຂາບົດ ວ່າດ້ວຍການທ່ຽວສັນຈອນໄປ
໗. ມະຫານາມະສິກຂາບົດ ວ່າດ້ວຍພຣະເຈົ້າມະຫານາມະສາກະຍະ
໘. ອຸຍຍຸດຕະເສນາສິກຂາບົດ ວ່າດ້ວຍກອງທັບທີ່ເຄື່ອນຂະບວນອອກຮົບ
໙. ເສນາວາສະສິກຂາບົດ ວ່າດ້ວຍການພັກຢູ່ໃນກອງທັບ
໑໐. ອຸຍໂຍທິກະສິກຂາບົດ ວ່າດ້ວຍການໄປສູ່ສະໜາມຮົບ

## ໖. ສຸຣາປານະວັກ

### ໑. ສຸຣາປານະສິກຂາບົດ

[໑໐໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຈິດຕິຍ້ອນດື່ມສຸຣາແລະເມໄຣ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນໂກສຳພີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະສາຄະຕະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະສາຄະຕະດື່ມນ້ຳເມົາ

ໃນສຸຣາປານະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯລฯ

### ໒. ອັງຄຸລິປະໂຕທະກະສິກຂາບົດ

[໑໐໕] ຖາມ : ຊົງບັນຍັດປາຈິດຕິຍ້ອນໃຊ້ນີ້ວມືຈີ້ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໃຊ້ນີ້ວມືຈີ້ພິກຂຸໃຫ້ຫົວ

ໃນອັງຄຸລິປະໂຕທະກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯລฯ

### ໓. ຫັດສະທຳມະສິກຂາບົດ

[໑໐໖] ຖາມ : ຊົງບັນຍັດປາຈິດຕິຍ້ອນຫຼິ້ນນ້ຳ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັດຕະຣະສະວັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັດຕະຣະສະວັກຄີຫຼິ້ນນ້ຳໃນແມ່ນ້ຳອະຈິຣະວະດີ

ໃນຫັດສະທຳມະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ໔. ອະນາທະຣິຍະສິກຂາບົດ

[໑໐໗] ຖາມ : ຊົງບັນຍັດປາຈິດຕີຍ້ອນບໍ່ເອື້ອເຟື້ອ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນໂກສຳພີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະສັນນະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະສັນນະກະທຳຄວາມບໍ່ເອື້ອເຟື້ອ

ໃນອະນາທະຣິຍະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໆລໆ

## ໕. ພິງສາປະນະສິກຂາບົດ

[໑໐໘] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ເຮັດໃຫ້ພິກຂຸຕົກໃຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີເຮັດໃຫ້ພິກຂຸຕົກໃຈ

ໃນພິງສາປະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໆລໆ

## ໖. ໂຊຕິກະສິກຂາບົດ

[໑໐໙] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ດັງໄຟຜີງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ພັກຄະຊົນນະບົດ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຊ່ອຍກັນດັງໄຟຜີງ

ໃນໂຊຕິກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໔ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ກ. ນະຫານະສິກຂາບົດ

[໑໑໐] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ເມື່ອຍັງບໍ່ເຖິງເຄິ່ງເດືອນ ອາບນ້ຳ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງ ແມ່ນເຫັນພຣະຣາຊາແລ້ວກໍຍັງອາບນ້ຳບໍ່ຮູ້ຄວາມພໍດີ

ໃນນະຫານສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໖ ພຣະອະນຸບັນຍັດ

ຖາມ : ມີສັບພັດຖະບັນຍັດ ປະເທສະບັນຍັດຢູ່ບໍ

ຕອບ : ມີປະເທສະບັນຍັດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນ ເອລະກະໂລມະສະມຸດຖານ ໗ລ໗

## ຖ. ທຸບພັນນະກະຣະນະສິກຂາບົດ

[໑໑໑] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໄດ້ຈີວອນໃໝ່ແລ້ວ ບໍ່ໃຊ້ວັດຖຸທີ່ເຮັດໃຫ້ເສຍສີ ໓ ຊະນິດແນວໃດແນວໜຶ່ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຈື່ຈີວອນຂອງຕົນບໍ່ໄດ້

ໃນທຸບພັນນະກະຣະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

## ໙. ວິກັບປະນະສິກຂາບົດ

[໑໑໔] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ວິກັບຈີວອນດ້ວຍຕົນເອງໃຫ້ແກ່ພິກຂຸ ຫຼືແກ່ພິກຂຸນີ ຫຼືແກ່ສິກຂະມານາ ຫຼືແກ່ສາມະເນນ ຫຼືແກ່ສາມະເນຣີ ແລ້ວໃຊ້ສອຍຈີວອນ ທີ່ຍັງບໍ່ໄດ້ປັດຈຸດທອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດວິກັບຈີວອນດ້ວຍຕົນເອງແກ່ພິກຂຸແລ້ວ ໃຊ້ສອຍຈີວອນທີ່ຍັງບໍ່ໄດ້ປັດຈຸດທອນ

ໃນວິກັບປະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ຯລຯ

## ໑໐. ຈີວະຣະປະນິທານະສິກຂາບົດ

[໑໑໕] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ເອົາບາດ ຫຼືຈີວອນ ຜ້າປູນັ່ງ ກ່ອງເຂັມ ຫຼືສາຍແອວຂອງພິກຂຸໄປເຊື່ອງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີເອົາບາດແດ່ ຈີວອນແດ່ ຜ້າປູນັ່ງແດ່ ກ່ອງເຂັມແດ່ ສາຍແອວແດ່ຂອງພິກຂຸໄປເຊື່ອງ

ໃນຈີວະຣະປະນິທານະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

**ສຸຣາເມຣະຍະວັກທີ ໖ ຈົບ**

## ລວມສິກຂາບົດທີ່ມີໃນສຸຣາປານະວັກ

໑. ສຸຣາປານະສິກຂາບົດ ວ່າດ້ວຍການດື່ມສຸຣາແລະເມໄຣ
໒. ອັງຄຸລິປະໂຕທະກະສິກຂາບົດ ວ່າດ້ວຍການໃຊ້ນິ້ວມືຈີ້ກັນແລະກັນ
໓. ຫັດສະທຳມະສິກຂາບົດ ວ່າດ້ວຍການຫຼິ້ນນ້ຳ
໔. ອະນາທະຣິຍະສິກຂາບົດ ວ່າດ້ວຍການບໍ່ເອື້ອເຟື້ອຕໍ່ຄຳຕັກເຕືອນ
໕. ພິງສາປະນະສິກຂາບົດ ວ່າດ້ວຍການເຮັດໃຫ້ຕົກໃຈ
໖. ໂຊຕິກະສິກຂາບົດ ວ່າດ້ວຍການດັງໄຟຜີງ
໗. ນະຫານະສິກຂາບົດ ວ່າດ້ວຍການອາບນ້ຳນອກສະໄໝ
໘. ທຸບພັນນະກະຣະນະສິກຂາບົດ ວ່າດ້ວຍການເຮັດຈີວອນໃໝ່ໃຫ້ເສຍສີ
໙. ວິກັບປະນະສິກຂາບົດ ວ່າດ້ວຍການວິກັບຈີວອນ
໑໐. ຈີວະຣະປະນິທານະສິກຂາບົດ ວ່າດ້ວຍການເຊື່ອງຈີວອນ

## ໗. ສັບປານະກະວັກ

## ໑. ສັນຈິດຈະສິກຂາບົດ

[໑໑໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຈົງໃຈປົງຊີວິດສັດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີຈົງໃຈປົງຊີວິດສັດ

ໃນສັນຈິດຈະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໒. ສັບປານະກະສິກຂາບົດ

[໑໑໕] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຮູ້ຢູ່ວ່ານ້ຳມີສັດມີຊີວິດ ກໍຍັງບໍຣິໂພກຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຮູ້ຢູ່ວ່ານໍ້າມີສັດມີຊີວິດ ຍັງບໍຣິໂພກ

ໃນສັບປານະກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໓. ອຸກໂກຕະນະສິກຂາບົດ

[໑໑໖] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຮູ້ຢູ່ ຮື້ຟື້ນອະທິກອນທີ່ຕັດສິນໄປ ແລ້ວຢ່າງຖືກຕ້ອງ ເພື່ອພິຈາລະນາໃໝ່ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖອບ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຮູ້ຢູ່ ຮື້ຟື້ນອະທິກອນທີ່ຕັດສິນໄປແລ້ວຢ່າງ ຖືກຕ້ອງ ເພື່ອພິຈາລະນາໃໝ່

ໃນອຸກໂກຕະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໔. ທຸດຖຸນລະສິກຂາບົດ

[໑໑໗] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຮູ້ຢູ່ ປົກປິດອາບັດຊົ່ວຫຍາບ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸອົງໜຶ່ງຮູ້ຢູ່ ປົກປິດອາບັດຊົ່ວຫຍາບຂອງພິກຂຸ

ໃນທຸດຖຸນລະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

## ໕. ອູນະວິສະຕິວັດສະສິກຂາບົດ

[໑໑໗] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ຮູ້ຢູ່ ອຸປະສົມບົດໃຫ້ບຸກຄົນຜູ້ມີອາຍຸ ຢ່ອນກວ່າ ໒໐ ປີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຮູ້ຢູ່ ອຸປະສົມບົດໃຫ້ບຸກຄົນຜູ້ມີອາຍຸຢ່ອນກວ່າ ໒໐ ປີ

ໃນອູນະວິສະຕິວັດສະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໖. ເຖີຍຍະສັດຖະສິກຂາບົດ

[໑໑໘] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ຮູ້ຢູ່ ຊັກຊວນກັນເດີນທາງໄກຮ່ວມ ກັບກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸອົງໜຶ່ງຮູ້ຢູ່ ຊັກຊວນກັນເດີນທາງໄກຮ່ວມກັນກັບກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ

ໃນເຖີຍຍະສັດຖະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງກາຍວາຈາກັບຈິດ ຯລຯ

## ໗. ສັງວິທານະສິກຂາບົດ

[໑໒໐] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ຊັກຊວນກັນເດີນທາງໄກຮ່ວມກັນກັບມາຕຸຄາມ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸອົງໜຶ່ງຊັກຊວນກັນເດີນທາງໄກຮ່ວມກັນກັບມາຕຸຄາມ

ໃນສັງວິທານະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ຝ ສະມຸດຖານ ເກີດດ້ວຍສະມຸດຖານ ๔ ສະມຸດຖານ ຯລຯ

## ໗. ອະຣິດຖະສິກຂາບົດ

[໑໔໑] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ບໍ່ສະລະທິດຖິບາບ ຈົນວ່າສົງ ສູດສະມະນຸພາດຄົບ ໓ ຄັ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸຊື່ອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້າມົກແຮ້ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຊື່ອະຣິດຖະຜູ້ມີບັນພະບຸຣຸດເປັນນາຍພານຂ້າມົກແຮ້ງບໍ່ສະລະທິດຖິບາບ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ

ໃນອະຣິດຖະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ຝ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

## ໘. ອຸກຂິດຕະສຳໂພຄະສິກຂາບົດ

[໑໔໔] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຮູ້ຢູ່ກໍຍັງຄົບຫາກັບພິກຂຸຜູ້ກ່າວຕູ່ ແນວນັ້ນຜູ້ທີ່ສົງຍັງບໍ່ໄດ້ເຮັດທຳອັນສົມຄວນ ຜູ້ຍັງບໍ່ຍອມສະລະທິດຖິນັ້ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຮູ້ຢູ່ກໍຍັງຄົບຫາກັບພິກຂຸອະຣິດຖະຜູ້ກ່າວຕູ່ແນວນັ້ນຜູ້ທີ່ສົງຍັງບໍ່ໄດ້ເຮັດທຳອັນສົມຄວນ ຜູ້ຍັງບໍ່ສະລະທິດຖິນັ້ນ

ໃນອຸກຂິດຕະສຳໂພຄະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໑໐. ກັນຕະກະສິກຂາບົດ

[໑໘໓] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ຮູ້ຢູ່ກໍຍັງປອບໂຍນສະມະນຸດເທດຜູ້ຖືກສົງນາສະນະແລ້ວແນວນັ້ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຮູ້ຢູ່ກໍຍັງປອບໂຍນສະມະນຸດເທດຊື່ກັນຕະກະຜູ້ຖືກສົງນາສະນະແລ້ວແນວນັ້ນ

ໃນກັນຕະກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

**ສັບປານະກະວັກທີ ໗ ຈົບ**

## ລວມສິກຂາບົດທີ່ມີໃນສັບປານະກະວັກ

| | |
|---|---|
| ໑. ສັນຈິດຈະສິກຂາບົດ | ວ່າດ້ວຍຄວາມຈົງໃຈປົງຊີວິດສັດ |
| ໒. ສັບປານະກະສິກຂາບົດ | ວ່າດ້ວຍການບໍຣິໂພກນ້ຳທີ່ມີສັດມີຊີວິດ |
| ໓. ອຸກໂກຕະນະສິກຂາບົດ | ວ່າດ້ວຍການຮື້ຟື້ນອະທິກອນຂຶ້ນມາພິຈາລະນາໃໝ່ |
| ໔. ທຸດຖຸນລະສິກຂາບົດ | ວ່າດ້ວຍການປົກປິດອາບັດຊົ່ວຫຍາບ |
| ໕. ອູນະວີສະຕິວັດສະສິກຂາບົດ | ວ່າດ້ວຍການອຸປະສົມບົດໃຫ້ບຸກຄົນມີອາຍຸຍ່ອນກວ່າ ໒໐ ປີ |
| ໖. ເຖີຍຍະສັດຖະສິກຂາບົດ | ວ່າດ້ວຍການເດີນທາງໄກຮ່ວມກັບພໍ່ຄ້າກວຽນຜູ້ເປັນໂຈນ |
| ໗. ສັງວິທານະສິກຂາບົດ | ວ່າດ້ວຍການຊັກຊວນເດີນທາງໄກຮ່ວມກັບມາຕຸຄາມ |
| ໘. ອະຣິດຖະສິກຂາບົດ | ວ່າດ້ວຍພຣະອະຣິດຖະກ່າວຕູ່ພຣະຜູ້ມີພຣະພາກເຈົ້າ |
| ໙. ອຸກຂິດຕະສຳໂພຄະ- | ວ່າດ້ວຍການຄົບຫາພິກຂຸທີ່ຖືກສົງລົງອຸກເຂປະນີຍະກຳສິກຂາບົດ |
| ໑໐. ກັນຕະກະສິກຂາບົດ | ວ່າດ້ວຍສະມະນຸດເທດຊື່ກັນຕະກະຖືກສົງນາສະນະ |

## ๗. ສະຫະທຳມິກະວັກ

### ១. ສະຫະທຳມິກະສິກຂາບົດ

[១៨៤] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນຢູ່ໂດຍຊອບທຳ ກັບກ່າວວ່າ "ທ່ານທັງຫຼາຍ ຂ້ານ້ອຍຈະຍັງບໍ່ສຶກສາໃນສິກຂາບົດນີ້ ຈົນກວ່າຈະໄດ້ ສອບຖາມພິກຂຸອົງອື່ນຜູ້ສະຫຼາດ ຜູ້ເປັນວິໄນທອນ" ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນໂກສຳພີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະສັນນະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະສັນນະຜູ້ອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນຢູ່ໂດຍຖືກຕ້ອງຕາມທຳກັບກ່າວວ່າ "ທ່ານທັງຫຼາຍ ຂ້ານ້ອຍຈະຍັງບໍ່ສຶກສາໃນສິກຂາບົດນີ້ ຈົນກວ່າຈະໄດ້ ສອບຖາມພິກຂຸອົງອື່ນຜູ້ສະຫຼາດ ຜູ້ເປັນວິໄນທອນ

ໃນສະຫະທຳມິກະສິກຂາບົດນັ້ນ ມີ ១ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ៦ ສະມຸດຖານ ເກີດດ້ວຍສະມຸດຖານ ៦ ສະມຸດຖານ ៗລៗ

### ២. ວິເລຂະນະສິກຂາບົດ

[១៨៥] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ດູໝິ່ນພຣະວິໄນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີດູໝິ່ນພຣະວິໄນ

ໃນວິເລຂະນະສິກຂາບົດນັ້ນ ມີ ១ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ៦ ສະມຸດຖານ ເກີດດ້ວຍສະມຸດຖານ ៦ ສະມຸດຖານ ៗລៗ

### ៣. ໂມຫະນະສິກຂາບົດ

[១៨៦] ຖາມ : ຊົງບັນຍັດປາຈິດຕີຍ້ອນແກ້ງເຮັດຜູ້ອື່ນໃຫ້ຫຼົງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີແກ້ງເຮັດຜູ້ອື່ນໃຫ້ຫຼົງ

ໃນໂມຫະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ៦ ສະມຸດຖານ ເກີດດ້ວຍສະມຸດຖານ ៣ ສະມຸດຖານ ຯລຯ

## ៤. ປະຫາຣະສິກຂາບົດ

[໑៨៣] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ໂກດ ບໍ່ພໍໃຈ ທຳຮ້າຍພິກຂຸ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໂກດ ບໍ່ພໍໃຈ ທຳຮ້າຍພິກຂຸ

ໃນປະຫາຣະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ៦ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ៥. ຕະລະສັດຕິກະສິກຂາບົດ

[໑៨៤] ຖາມ : ຊົງບັນຍັດປາຈິດຕີແກ່ພິກຂຸຜູ້ໂກດ ບໍ່ພໍໃຈ ເງື້ອຫອກຄືຝາມື ໃສ່ພິກຂຸ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໂກດ ບໍ່ພໍໃຈ ເງື້ອຫອກຄືຝາມືໃສ່ພິກຂຸ

ໃນຕະລະສັດຕິກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ៦ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ໖. ອະມູລະກະສິກຂາບົດ

[໑໘໙] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໃສ່ຄວາມພິກຂຸດ້ວຍອາບັດສັງຄາທິເສດທີ່ບໍ່ມີມູນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ໃສ່ຄວາມພິກຂຸດ້ວຍອາບັດສັງຄາທິເສດທີ່ ບໍ່ມີມູນ

ໃນອະມູລະກະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໗. ສັນຈິດຈະສິກຂາບົດ

[໑໙໐] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຈິງໃຈກໍ່ຄວາມລຳຄານໃຫ້ແກ່ພິກຂຸ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຈິງໃຈກໍ່ຄວາມລຳຄານໃຫ້ແກ່ພິກຂຸ

ໃນສັນຈິດຈະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໘. ອຸປັດສຸຕິສິກຂາບົດ

[໑໙໑] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຢືນຈອບຟັງພິກຂຸທັງຫຼາຍຜູ້ໝາງໃຈ ຜິດຖຽງ ວິວາດກັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຍືນຈອບຟັງພິກຂຸທັງຫຼາຍຜູ້ໝາງໃຈ ຜິດຖຽງ ວິວາດກັນ

ໃນອຸປັດສຸຕິສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດ ທາງ ວາຈາ (໔) ເກີດທາງກາຍວາຈາກັບຈິດ ໆລໆ

## ໙. ກຳມະປະຕິພາຫະນະສິກຂາບົດ

[໑໘໔] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໃຫ້ສັນທະເພື່ອກຳທີ່ເຮັດຖືກຕ້ອງແລ້ວ ກັບຕິຕຽນໃນພາຍຫຼັງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໃຫ້ສັນທະເພື່ອກຳທີ່ເຮັດຖືກຕ້ອງແລ້ວກັບ ຕິຕຽນໃນພາຍຫຼັງ

ໃນກຳມະປະຕິພາຫະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໆລໆ

## ໑໐. ສັນທະອະທັດຕະວາຄະມະນະສິກຂາບົດ

[໑໘໓] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ເມື່ອຍັງມີເລື້ອງທີ່ຕ້ອງວິນິດໄສຢູ່ໃນສົງ ບໍ່ໃຫ້ສັນທະແລ້ວ ລຸກຈາກອາສະນະຫຼີກໄປ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸອົງໜຶ່ງ ເມື່ອຍັງມີເລື້ອງທີ່ຕ້ອງວິນິດໄສຢູ່ໃນສົງ ບໍ່ໃຫ້ສັນທະ ແລ້ວ ລຸກຈາກອາສະນະຫຼີກໄປ

ໃນສັນທະອະທັດຕະວາຄະມະນະສິກຂາບົດ ນັ້ນ ມີ ໑ ພຣະບັນຍັດບັນດາສະມຸດຖານແຫ່ງ

ອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

## ໑໑. ທັບພະສິກຂາບົດ

[໑໖໔] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຮ່ວມກັບສົງຜູ້ພ້ອມພຽງກັນໃຫ້ຈີວອນໄປແລ້ວກັບຕິຕຽນໃນພາຍຫຼັງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ຮ່ວມກັບສົງຜູ້ພ້ອມພຽງກັນໃຫ້ຈີວອນ ໄປແລ້ວກັບຕິຕຽນໃນພາຍຫຼັງ

ໃນທັບພະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໑໔. ປະຣິນາມະນະສິກຂາບົດ

[໑໖໕] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ຮູ້ຢູ່ ນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງ ໄປເພື່ອບຸກຄົນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຮູ້ຢູ່ ນ້ອມລາບທີ່ເຂົານ້ອມໄວ້ເປັນຂອງທີ່ຈະຖວາຍສົງ ໄປເພື່ອບຸກຄົນ

ໃນປະຣິນາມະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

**ສະຫະທຳມິກະວັກທີ ໘ ຈົບ**

## ລວມສິກຂາບົດທີ່ມີໃນສະຫະທໍາມິກະວັກ

໑. ສະຫະທໍາມິກະສິກຂາບົດ ວ່າດ້ວຍການກ່າວຕັກເຕືອນຜູ້ຮ່ວມປະພຶດທໍາ ໂດຍຖືກຕ້ອງຕາມທໍາ
໒. ວິເລຂະນະສິກຂາບົດ ວ່າດ້ວຍຄວາມຫຍຸ້ງຍາກແຫ່ງສິກຂາບົດ
໓. ໂມຫະນະສິກຂາບົດ ວ່າດ້ວຍການເຮັດໃຫ້ຜູ້ອື່ນຫຼົງ

໔. ປະຫາຣະສິກຂາບົດ ວ່າດ້ວຍການທໍາຮ້າຍເພື່ອນພິກຂຸ
໕. ຕະລະສັດຕິກະສິກຂາບົດ ວ່າດ້ວຍການເງື້ອຫອກຄືຝາມືຂຶ້ນເຮັດຄືວ່າຈະທໍາຮ້າຍ
໖. ອະມູລະກະສິກຂາບົດ ວ່າດ້ວຍການໃສ່ຄວາມດ້ວຍອາບັດສັງຄາທິເສດທີ່ບໍ່ມີມູນ
໗. ສັນຈິດຈະສິກຂາບົດ ວ່າດ້ວຍການຈົງໃຈກໍ່ຄວາມລໍາຄານ
໘. ອຸປັດສຸຕິສິກຂາບົດ ວ່າດ້ວຍການຈອບຟັງພິກຂຸຜິດຖຽງກັນ
໙. ກໍາມະປະຕິພາຫະນະສິກຂາບົດ ວ່າດ້ວຍການຄັດຄ້ານກໍາທີ່ຖືກຕ້ອງ
໑໐. ສັນທະອະທັດຕະວາຄະມະນະສິກຂາບົດ ວ່າດ້ວຍການບໍ່ໃຫ້ສັນທະແລ້ວໄປສາ
໑໑. ທັບພະສິກຂາບົດ ວ່າດ້ວຍການຖວາຍຈີວອນແກ່ພຣະທັບພະມັນລະບຸດ
໑໒. ປະຣິນາມະນະສິກຂາບົດ ວ່າດ້ວຍການນ້ອມລາບສົງໄປເພື່ອບຸກຄົນ

## ໙. ຣາຊະວັກ (ຣະຕະນະວັກ)

## ໑. ອັນເຕປຸຣະສິກຂາບົດ

[໑໓໖] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ບໍ່ໄດ້ຮັບແຈ້ງລ່ວງໜ້າ ເຂົ້າໄປພຣະຣາດຊະຖານຊັ້ນໃນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອານົນ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອານົນຍັງບໍ່ໄດ້ຮັບແຈ້ງລ່ວງໜ້າ ເຂົ້າໄປພຣະຣາດຊະຖານ ຊັ້ນໃນ

ໃນອັນເຕປຸຣະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ຯລຯ

## ໔. ຣະຕະນະສິກຂາບົດ

[໑໖໑] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ເກັບຣັດຕະນະ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸອົງໜຶ່ງເກັບຣັດຕະນະ

ໃນຣະຕະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໔ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໕. ວິກາລະຄາມະປະເວສະນະສິກຂາບົດ

[໑໖໗] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ບໍ່ບອກລາພິກຂຸທີ່ມີຢູ່ແລ້ວ ເຂົ້າໝູ່ບ້ານໃນເວລາວິການ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີບໍ່ບອກລາພິກຂຸທີ່ມີຢູ່ແລ້ວ ເຂົ້າໝູ່ບ້ານ ໃນເວລາວິການ

ໃນວິກາລະຄາມະປະເວສະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໓ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ຯລຯ

## ໔. ສູຈິຄະຣະສິກຂາບົດ

[໑໓໙] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໃຫ້ເຮັດກ່ອງເຂັມດ້ວຍກະດູກ ດ້ວຍງາ ຫຼື ດ້ວຍເຂົາ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ແຄວ້ນສັກກະ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງບໍ່ຮູ້ຈັກປະມານອອກປາກຂໍກ່ອງເຂັມເປັນຈຳນວນຫຼາຍ

ໃນສູຈິຄະຣະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໕. ມັນຈະປີຖະສິກຂາບົດ

[໑໔໐] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໃຫ້ເຮັດຕຽງຫຼືຕັ່ງເກີນຂະໜາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະອຸປະນັນທະສາກະຍະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸປະນັນທະສາກະຍະບຸດນອນເທິງຕຽງສູງ

ໃນມັນຈະປີຖະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໖. ຕູໂລນັດທະສິກຂາບົດ

[໑໔໑] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໃຫ້ເຮັດຕຽງຫຼືຕັ່ງຫຸ້ມນຸ່ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໃຫ້ເຮັດຕຽງຫຼືຕັ່ງຫຸ້ມດ້ວຍນຸ່ນ

ໃນຕູໂລມັດທະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໗. ນິສີທະນະສິກຂາບົດ

[໑໘໘] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໃຫ້ເຮັດຜ້າຮອງນັ່ງເກີນຂະໜາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໃຊ້ຜ້າຮອງນັ່ງບໍ່ໄດ້ຂະໜາດ

ໃນນິສີທະນະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໘. ກັນທຸປະຕິດສາທິສິກຂາບົດ

[໑໘໙] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໃຫ້ເຮັດຜ້າອັດຝີເກີນຂະໜາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໃຊ້ຜ້າອັດຝີບໍ່ໄດ້ຂະໜາດ

ໃນກັນທຸປະຕິດສາທິສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໙. ວັດສິກະສາຕິກາສິກຂາບົດ

[໑໘໘] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໃຫ້ເຮັດຜ້າອາບນ້ຳຝົນເກີນຂະໜາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີໃຊ້ຜ້າອາບນໍ້າຝົນບໍ່ໄດ້ຂະໜາດ

ໃນວັດສິກະສາຕິກາສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໑໐. ນັນທະສິກຂາບົດ

[໑໔໕] ຖາມ : ຊົງບັນຍັດປາຈິດຕິແກ່ພິກຂຸຜູ້ໃຫ້ເຮັດຈີວອນມີຂະໜາດທໍ່ກັບສຸຄົດຈີວອນຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະນັນທະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະນັນທະຫົ່ມຈີວອນມີຂະໜາດທໍ່ກັບສຸຄົດຈີວອນ

ໃນນັນທະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

**ຣາຊະວັກທີ ໙ ຈົບ**

## ລວມສິກຂາບົດທີ່ມີໃນຣາຊະວັກ

| | |
|---|---|
| ໑. ອັນເຕປຸຣະສິກຂາບົດ | ວ່າດ້ວຍການເຂົ້າເຂດພຣະຣາດຊະຖານຊັ້ນໃນ |
| ໒. ຣະຕະນະສິກຂາບົດ | ວ່າດ້ວຍການເກັບຣັດຕະນະທີ່ເຈົ້າຂອງລືມໄວ້ |
| ໓. ວິກາລະຄາມະປະເວສະນະສິກຂາບົດ | ວ່າດ້ວຍການເຂົ້າບ້ານໃນເວລາວິການ |
| ໔. ສູຈິຄະຣະສິກຂາບົດ | ວ່າດ້ວຍການເຮັດກ່ອງເຂັມດ້ວຍກະດູກເປັນຕົ້ນ |
| ໕. ມັນຈະປີຖະສິກຂາບົດ | ວ່າດ້ວຍການເຮັດຕຽງແລະຕັ່ງ |
| ໖. ຕູໂລນັດທະສິກຂາບົດ | ວ່າດ້ວຍການເຮັດຕຽງແລະຕັ່ງຫຸ້ມນຸ່ນ |
| ໗. ນິສີທະນະສິກຂາບົດ | ວ່າດ້ວຍການເຮັດຜ້າຮອງນັ່ງ |
| ໘. ກັນທຸປະຕິດສາທິສິກຂາບົດ | ວ່າດ້ວຍການເຮັດຜ້າອັດຝີ |
| ໙. ວັດສິກະສາຕິກາສິກຂາບົດ | ວ່າດ້ວຍການເຮັດຜ້າອາບນໍ້າຝົນ |
| ໑໐. ນັນທະສິກຂາບົດ | ວ່າດ້ວຍທ່ານພຣະນັນທະ |

**ປາຈິດຕິ ໙໒ ສິກຂາບົດ ຈົບ**

**ຂຸດທະກະສິກຂາບົດ ຈົບບໍລິບູນ**

## ລວມວັກທີ່ມີໃນປາຈິດຕິຍະກັນ

໑. ມຸສາວາທະວັກ ໝວດວ່າດ້ວຍການກ່າວຕົວະ
໒. ພູຕະຄາມວັກ ໝວດວ່າດ້ວຍພູຕະຄາມ
໓. ໂອວາທະວັກ ໝວດວ່າດ້ວຍໂອວາດ
໔. ໂພຊະນະວັກ ໝວດວ່າດ້ວຍໂພຊະນະ
໕. ອະເຈລະກະວັກ ໝວດວ່າດ້ວຍນັກບວດເປືອຍ
໖. ສຸຣາປານະວັກ ໝວດວ່າດ້ວຍການດື່ມສຸຣາ
໗. ສັບປານະກະວັກ ໝວດວ່າດ້ວຍສັດມີຊີວິດ
໘. ສະຫະທຳມິກະວັກ ໝວດວ່າດ້ວຍຜູ້ຮ່ວມປະພຶດທຳ
໙. ຣາຊະວັກ ໝວດວ່າດ້ວຍພຣະຣາຊາ

# ໖. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບສະຖານທີ່ບັນຍັດເປັນຕົ້ນໃນປະຕິເທສະນີຍະກັນ

## ໑. ປະຖົມປະຕິເທສະນີຍະສິກຂາບົດ

[໑໔໖] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປະຕິເທສະນີຍະແກ່ພິກຂຸຜູ້ຮັບຂອງຫຍ້ຳຫຼືຂອງສັນດ້ວຍມືຕົນຈາກມື ຂອງພິກຂຸນີຜູ້ບໍ່ແມ່ນຍາດຜູ້ເຂົ້າໄປໃນບໍລິເວນເຮືອນແລ້ວສັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸອົງໜຶ່ງຮັບອາມິດຈາກມື ຂອງພິກຂຸນີຜູ້ບໍ່ແມ່ນຍາດຜູ້ເຂົ້າໄປສູ່ບໍລິເວນເຮືອນ

ໃນປະຕິເທສະນີຍະສິກຂາບົດທີ ໑ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໗໑໗

## ໒. ທຸຕິຍະປະຕິເທສະນີຍະສິກຂາບົດ

[໑໔໗] ຖາມ : ຊົງບັນຍັດປະຕິເທສະນີຍະແກ່ພິກຂຸຜູ້ບໍ່ຫ້າມພິກຂຸນີມາຢືນບົງການ (ທາຍົກ)ສັນຢູ່ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີບໍ່ຫ້າມພິກຂຸນີຜູ້ມາຢືນບົງການ

ໃນປະຕິເທສະນີຍະສິກຂາບົດທີ ໒ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ຄື (໑) ເກີດທາງກາຍກັບວາຈາ ບໍ່ແມ່ນ ເກີດທາງຈິດ (໒) ເກີດທາງກາຍວາຈາກັບຈິດ ຯລຯ

## ໓. ຕະຕິຍະປະຕິເທສະນີຍະສິກຂາບົດ

[໑໔໘] ຖາມ : ຊົງບັນຍັດປະຕິເທສະນີຍະແກ່ພິກຂຸຜູ້ຮັບຂອງຫຍ້ຳຫຼືຂອງສັນໃນຕະກູນທີ່ໄດ້ຮັບສົມມຸດເປັນເສຂະ ດ້ວຍມືຕົນເອງແລ້ວສັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຮັບພັດຕາຫານໂດຍບໍ່ຮູ້ຈັກປະມານ

ໃນປະຕິເທສະນີຍະສິກຂາບົດທີ ໓ ນັ້ນ ມີ ໑ ພຣະບັນຍັດ ໒ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ໔. ຈະຕຸດຖະປະຕິເທສະນີຍະສິກຂາບົດ

[໑໔໙] ຖາມ : ຊົງບັນຍັດປະຕິເທສະນີຍະແກ່ພິກຂຸຜູ້ຮັບຂອງຫຍ້ຳຫຼືຂອງສັນທີ່ບໍ່ໄດ້ຮັບແຈ້ງໄວ້ກ່ອນດ້ວຍມືຕົນເອງໃນອາຣາມໃນເສນາສະນະປ່າແລ້ວສັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ແຄວ້ນສັກກະ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງບໍ່ບອກວ່າໂຈນອາໄສຢູ່ໃນອາຮາມ

ໃນປະຕິເທສະນີຍະສິກຂາບົດທີ ໔ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໒ ສະມຸດຖານ ຄື (໑) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍວາຈາກັບຈິດ ຯລຯ

**ປະຕິເທສະນີຍະ ໔ ສິກຂາບົດ ຈົບ**

## ລວມສິກຂາບົດທີ່ມີໃນປະຕິເທສະນີຍະກັນ

| | |
|---|---|
| ໑. ປະຖົມປະຕິເທສະນີຍະສິກຂາບົດ | ວ່າດ້ວຍການຮັບຂອງຫຍໍ້າຂອງສັນຈາກມືພິກຂຸນີຜູ້ບໍ່ແມ່ນຍາດ |
| ໒. ທຸຕິຍະປະຕິເທສະນີຍະສິກຂາບົດ | ວ່າດ້ວຍການບໍ່ຫ້າມພິກຂຸນີຜູ້ຖ້າບົງການ |
| ໓. ຕະຕິຍະປະຕິເທສະນີຍະສິກຂາບົດ | ວ່າດ້ວຍການຮັບຂອງຫຍໍ້າຂອງສັນໃນບ່ອນທີ່ບໍ່ໄດ້ຮັບນິມົນໄວ້ກ່ອນ |
| ໔. ຈະຕຸດຖະປະຕິເທສະນີຍະສິກຂາບົດ | ວ່າດ້ວຍການຮັບຂອງຫຍໍ້າຂອງສັນຈາກທາຍົກທີ່ບໍ່ໄດ້ແຈ້ງໄວ້ກ່ອນ |

ພຣະສຳມາສຳພຸດທະເຈົ້າຊົງປະກາດໄວ້ແລ້ວ

# ກ. ເສຂິຍະກັນ

ຄຳຖາມ - ຄຳຕອບສະຖານທີ່ບັນຍັດເປັນຕົ້ນໃນເສຂິຍະກັນ

## ໑. ປະຣິມັນທະລະວັກ

### ສິກຂາບົດທີ ໑

[໑໕໐] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຄອງອັນຕະຣະວາສົກຍ້ອຍທາງໜ້າແດ່ ທາງຫຼັງແດ່ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຄອງອັນຕະຣະວາສົກຍ້ອຍທາງໜ້າແດ່ ຂ້າງຫຼັງແດ່

ໃນສິກຂາບົດທີ ໑ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

### ສິກຂາບົດທີ ໘

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຄອງອຸດຕະຣາສົງຍ້ອຍທາງໜ້າແດ່ ທາງຫຼັງແດ່ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຄອງອຸດຕະຣາສົງຍ້ອຍທາງໜ້າແດ່ຂ້າງຫຼັງແດ່

ໃນສິກຂາບົດທີ ໘ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດ ຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໓

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງເປີດກາຍໄປໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຍ່າງເປີດກາຍໄປໃນບໍລິເວນເຮືອນ

ໃນສິກຂາບົດທີ ໓ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໔

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງເປີດກາຍໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີນັ່ງເປີດກາຍໃນບໍລິເວນເຮືອນ

ໃນສິກຂາບົດທີ ໔ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໕

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຄະນອງມືແດ່ ຄະນອງຕີນ ແດ່ ໄປໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ຍ່າງຄະນອງມືແດ່ ຄະນອງຕີນແດ່ ໄປໃນບໍລິເວນເຮືອນ

ໃນສິກຂາບົດທີ ໕ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໖

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຄະນອງມືແດ່ ຄະນອງຕີນແດ່ ນັ່ງໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ຄະນອງມືແດ່ ຄະນອງຕີນແດ່ ນັ່ງໃນບໍລິເວນເຮືອນ

ໃນສິກຂາບົດທີ ໖ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ເປັນປະຖົມປາຣາຊິກສະມຸດຖານ ฯลฯ

## ສິກຂາບົດທີ ๗

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງແນມເບິ່ງໃນບ່ອນນັ້ນ ໆ ໄປໃນບໍລິເວນເຮືອນ ฯลฯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຍ່າງແນມເບິ່ງບ່ອນນັ້ນ ໆ ໄປໃນບໍລິເວນເຮືອນ

ໃນສິກຂາບົດທີ ๗ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

## ສິກຂາບົດທີ ๘

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງແນມເບິ່ງບ່ອນນັ້ນ ໆ ໃນບໍລິເວນເຮືອນ ฯลฯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ນັ່ງແນມເບິ່ງບ່ອນນັ້ນ ໆ ໃນບໍລິເວນເຮືອນ

ໃນສິກຂາບົດທີ ๘ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

## ສິກຂາບົດທີ ๙

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຈ້ອນຜ້າໄປໃນບໍລິເວນເຮືອນ ฯลฯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ຍ່າງຈ້ອນຜ້າໄປໃນບໍລິເວນເຮືອນ

ໃນສິກຂາບົດທີ ๙ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

## ສິກຂາບົດທີ ໑໐

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຈ້ອນຜ້າໃນບໍລິເວນເຮືອນ ฯลฯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ນັ່ງຈ້ອນຜ້າໃນບໍລິເວນເຮືອນ

ໃນສິກຂາບົດທີ ໑໐ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

**ປະຣິມັນທະລະວັກທີ ໑ ຈົບ**

# ๔. ອຸດຊັກຄິກະວັກ

## ສິກຂາບົດທີ ໑

[໑๕໑] ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຫົວສຽງດັງ ໄປໃນບໍລິເວນເຮືອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ຍ່າງຫົວສຽງດັງໄປໃນບໍລິເວນເຮືອນ

ໃນສິກຂາບົດທີ ໑ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ฯลฯ

## ສິກຂາບົດທີ ๔

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຫົວສຽງດັງໃນບໍລິເວນເຮືອນ ຢູ່ໃສ? ฯลฯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ນັ່ງຫົວສຽງດັງໃນບໍລິເວນເຮືອນ

ໃນສິກຂາບົດທີ ๔ ນັ້ນ ມີ ໑ ພຣະບັນຍັດ ฯลฯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ฯลฯ

## ສິກຂາບົດທີ ໓

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຮ້ອງສຽງດັງໄປໃນບໍລິເວນ ເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ຍ່າງຮ້ອງສຽງດັງ ໄປໃນບໍລິເວນເຮືອນ

ໃນສິກຂາບົດທີ ໓ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

## ສິກຂາບົດທີ ໔

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຮ້ອງສຽງດັງໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ນັ່ງຮ້ອງສຽງດັງໃນບໍລິເວນເຮືອນ

ໃນສິກຂາບົດທີ ໔ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

## ສິກຂາບົດທີ ໕

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງໂງກກາຍໄປໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ຍ່າງໂງກກາຍໄປໃນບໍລິເວນເຮືອນ

ໃນສິກຂາບົດທີ ໕ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໖

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງໂງກກາຍໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ນັ່ງໂງກກາຍໃນບໍລິເວນເຮືອນ

ໃນສິກຂາບົດທີ ໖ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ๗

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອຍ່າງແກວ່ງແຂນໄປໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ຍ່າງແກວ່ງແຂນໄປໃນບໍລິເວນເຮືອນ

ໃນສິກຂາບົດທີ ๗ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ๘

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງແກວ່ງແຂນໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ນັ່ງແກວ່ງແຂນໃນບໍລິເວນເຮືອນ

ໃນສິກຂາບົດທີ ๘ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ๙

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງໂງກຫົວ ໄປໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຍ່າງໂງກຫົວໄປໃນບໍລິເວນເຮືອນ

ໃນສິກຂາບົດທີ ๙ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໑໐

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອນັ່ງໂງກຫົວໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີນັ່ງໂງກຫົວເຮັດຄໍພັບໃນບໍລິເວນເຮືອນ

ໃນສິກຂາບົດທີ ໑໐ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

**ອຸດຊັກຄິກະວັກທີ ໔ ຈົບ**

## ៣. ຂຳພະກະຕະວັກ

### ສິກຂາບົດທີ ໑

[໑໕໘] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອຢ່າງສ່າຍແອວໄປໃນບໍລິເວນເຮືອນ ຯລຯ

ໃນສິກຂາບົດທີ ໑ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

### ສິກຂາບົດທີ ໒

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຄ້ຳແອວໃນບໍລິເວນເຮືອນ ຯລຯ

ໃນສິກຂາບົດທີ ໒ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

### ສິກຂາບົດທີ ៣

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອຢ່າງຄຸມຫົວໄປໃນບໍລິເວນເຮືອນ ຯລຯ

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີຢ່າງຄຸມຫົວໄປໃນບໍລິເວນເຮືອນ

ໃນສິກຂາບົດທີ ៣ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

### ສິກຂາບົດທີ ໔

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອນັ່ງຄຸມຫົວໃນບໍລິເວນເຮືອນ ຯລຯ

ໃນສິກຂາບົດທີ ໔ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

### ສິກຂາບົດທີ ໕

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອຢ່າງແຢ່ງແຢ້ໄປໃນບໍລິເວນເຮືອນ ຯລຯ

ໃນສິກຂາບົດທີ ໕ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໖

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອນັ່ງກອດເຂົ່າໃນບໍລິເວນເຮືອນ ຢູ່ໃສ? ຯລຯ

ໃນສິກຂາບົດທີ ໖ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໗

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອຮັບບິນທະບາດໂດຍບໍ່ເຄົາລົບ ຯລຯ

ໃນສິກຂາບົດທີ ໗ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໘

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອຮັບບິນທະບາດແນມເບິ່ງບ່ອນນັ້ນ ໆ ຯລຯ

ໃນສິກຂາບົດທີ ໘ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໙

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອເລືອກຮັບສະເພາະແກງຫຼາຍ ຯລຯ

ໃນສິກຂາບົດທີ ໙ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໑໐

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອຮັບບິນທະບາດລົ້ນຂອບປາກບາດ ຯລຯ

ໃນສິກຂາບົດທີ ໑໐ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

**ຂຳພະກະຕະວັກທີ ໓ ຈົບ**

## ໔. ປິນດະປາຕະວັກ (ສັກກັດຈະວັກ)

### ສິກຂາບົດທີ ໑

[໑໕໓] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນບິນທະບາດໂດຍບໍ່ເຄົາລົບ ຯລຯ

ໃນສິກຂາບົດທີ ໑ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

### ສິກຂາບົດທີ ໒

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນບິນທະບາດແນມເບິ່ງໄປບ່ອນນັ້ນ ໆ ຯລຯ

ໃນສິກຂາບົດທີ ໒ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

### ສິກຂາບົດທີ ໓

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນບິນທະບາດເຈາະລົງໃນບ່ອນນັ້ນ ໆ ຯລຯ

ໃນສິກຂາບົດທີ ໓ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

### ສິກຂາບົດທີ ໔

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອສັນສະເພາະແກງຫຼາຍ ຯລຯ

ໃນສິກຂາບົດທີ ໔ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໕

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອສັນບິນທະບາດຫຍຸມລົງແຕ່ຍອດ ຯລຯ

ໃນສິກຂາບົດທີ ໕ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໖

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອໃຊ້ເຂົ້າສຸກປົກແກງຫຼືກັບເຂົ້າ ຯລຯ

ໃນສິກຂາບົດທີ ໖ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໗

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ບໍ່ເປັນໄຂ້ ອອກປາກຂໍແກງຫຼື ເຂົ້າສຸກມາສັນສ່ວນໂຕ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸສັບພັກຄີອອກປາກຂໍແກງແດ່ ເຂົ້າສຸກແດ່ມາສັນສ່ວນໂຕ

ໃນສິກຂາບົດທີ ໗ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໔) ເກີດທາງກາຍວາຈາກັບຈິດ ຯລຯ

## ສິກຂາບົດທີ ໘

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ມຸ້ງຕຳໜິ ແນມເບິ່ງບາດຂອງພິກຂຸເຫຼົ່າອື່ນ ຯລຯ

ໃນສິກຂາບົດທີ ໘ ນັ້ນ ມີ ໑ ພຣະບັນຍັດ ໆລໆ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ສິກຂາບົດທີ ໙

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ເຮັດຄຳເຂົ້າໃຫ້ໃຫຍ່ເກີນ ໆລໆ

ໃນສິກຂາບົດທີ ໙ ນັ້ນ ມີ ໑ ພຣະບັນຍັດ ໆລໆ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ສິກຂາບົດທີ ໑໐

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ເຮັດຄຳເຂົ້າໃຫ້ຍາວ ໆລໆ

ໃນສິກຂາບົດທີ ໑໐ ນັ້ນ ມີ ໑ ພຣະບັນຍັດ ໆລໆ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

**ປິນດະປາຕະວັກທີ ໔ ຈົບ**

## ໕. ກະພະລະວັກ

## ສິກຂາບົດທີ ໑

[໑໕໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ອ້າປາກຖ້າຄຳເຂົ້າທີ່ຍັງບໍ່ເຖິງປາກ ໆລໆ

ໃນສິກຂາບົດທີ ໑ ນັ້ນ ມີ ໑ ພຣະບັນຍັດ ໆລໆ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ສິກຂາບົດທີ ໒

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຂະນະກຳລັງສັນ ລ້ວງມືທັງໝົດ ເຂົ້າໄປໃນປາກ ໆລໆ

ໃນສິກຂາບົດທີ ໒ ນັ້ນ ມີ ໑ ພຣະບັນຍັດ ໆລໆ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ສິກຂາບົດທີ ໓

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ໂອ້ລົມຂະນະທີ່ໃນປາກມີຄຳເຂົ້າ ฯลฯ

ໃນສິກຂາບົດທີ ໓ ນັ້ນ ມີ ໑ ພຣະບັນຍັດ ฯลฯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

## ສິກຂາບົດທີ ໔

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນໂຍນຄຳເຂົ້າ ฯลฯ

ໃນສິກຂາບົດທີ ໔ ນັ້ນ ມີ ໑ ພຣະບັນຍັດ ฯลฯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

## ສິກຂາບົດທີ ໕

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນກັດຄຳເຂົ້າ ฯลฯ

ໃນສິກຂາບົດທີ ໕ ນັ້ນ ມີ ໑ ພຣະບັນຍັດ ฯลฯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

## ສິກຂາບົດທີ ໖

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນພັດຕາຫານເຮັດກະພຸ້ງແກ້ມໃຫ້ ຕຸ້ຍ ฯลฯ

ໃນສິກຂາບົດທີ ໖ ນັ້ນ ມີ ໑ ພຣະບັນຍັດ ฯลฯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

## ສິກຂາບົດທີ ໗

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນຊິດມື ฯลฯ

ໃນສິກຂາບົດທີ ໗ ນັ້ນ ມີ ໑ ພຣະບັນຍັດ ฯลฯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

## ສິກຂາບົດທີ ໗

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນໂຮຍເມັດເຂົ້າ ຯລຯ

ໃນສິກຂາບົດທີ ໗ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໙

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນແລບລີ້ນ ຯລຯ

ໃນສິກຂາບົດທີ ໙ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

## ສິກຂາບົດທີ ໑໐

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນເຮັດສຽງດັງຈັ໊ບ ໆ ຯລຯ

ໃນສິກຂາບົດທີ ໑໐ ນັ້ນ ມີ ໑ ພຣະບັນຍັດ ຯລຯ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

**ກະພະລະວັກທີ ໕ ຈົບ**

## ໖. ສຸຣຸສຸຣຸວັກ

## ສິກຂາບົດທີ ໑

[໑໕໕] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນເຮັດສຽງດັງຊູ໊ດ ໆ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນໂກສຳພີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງດື່ມນ້ຳນົມສຽງດັງຊູ໊ດ ໆ

ໃນສິກຂາບົດທີ ໑ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ສິກຂາບົດທີ ໒

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນເລຍມື ໆລໆ

ໃນສິກຂາບົດທີ ໒ ນັ້ນ ມີ ໑ ພຣະບັນຍັດ ໆລໆ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ສິກຂາບົດທີ ໓

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸທີ່ບໍ່ເອື້ອເຟື້ອ ສັນຂອດບາດ ໆລໆ

ໃນສິກຂາບົດທີ ໓ ນັ້ນ ມີ ໑ ພຣະບັນຍັດ ໆລໆ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ສິກຂາບົດທີ ໔

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສັນເລຍຮີມຝີປາກ ໆລໆ

ໃນສິກຂາບົດທີ ໔ ນັ້ນ ມີ ໑ ພຣະບັນຍັດ ໆລໆ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ສິກຂາບົດທີ ໕

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຈັບພາຊະນະນ້ຳດື່ມດ້ວຍມືເປື້ອນ ອາຫານ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ພັກຄະຊົນນະບົດ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຈັບພາຊະນະນ້ຳດື່ມດ້ວຍມືເປື້ອນອາຫານ

ໃນສິກຂາບົດທີ ໕ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ໆລໆ

## ສິກຂາບົດທີ ໕

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຖອກນ້ຳລ້າງບາດມີເມັດເຂົ້າໃນບໍລິເວນເຮືອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ພັກຄະຊົນນະບົດ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຖອກນ້ຳລ້າງບາດມີເມັດເຂົ້າລົງໃນບໍລິເວນເຮືອນ

ໃນສິກຂາບົດທີ ໕ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ۶ລ۶

## ສິກຂາບົດທີ ໖

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ບຸກຄົນຜູ້ກັ້ງຄັນຮົ່ມ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ສະແດງທຳແກ່ບຸກຄົນຜູ້ກັ້ງຄັນຮົ່ມ

ໃນສິກຂາບົດທີ ໖ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ۶ລ۶

## ສິກຂາບົດທີ ໗

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຖືໄມ້ຄ້ອນ ۶ລ۶

ໃນສິກຂາບົດທີ ໗ ນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ۶ລ۶

## ສິກຂາບົດທີ ໙

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຖືອາວຸດ ຯລຯ

ໃນສິກຂາບົດທີ ໙ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ຯລຯ

## ສິກຂາບົດທີ ໑໐

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຜູ້ຖືອາວຸດ ຯລຯ

ໃນສິກຂາບົດທີ ໑໐ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ຯລຯ

**ສຸຣຸສຸຣຸວັກທີ ໖ ຈົບ**

## ກ. ປາທຸກະວັກ

## ສິກຂາບົດທີ ໑

[໑໕໖] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຜູ້ໃສ່ຊຽງຕີນ ຢູ່ໃສ? ຯລຯ

ໃນສິກຂາບົດທີ ໑ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ຯລຯ

## ສິກຂາບົດທີ ໔

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນໃສ່ເກີບ ຯລຯ

ໃນສິກຂາບົດທີ ໔ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ຯລຯ

## ສິກຂາບົດທີ ໓

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຢູ່ໃນຍານພາຫະນະ ຢູ່ໃສ? ຯລຯ

ໃນສິກຂາບົດທີ ໓ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ຯລຯ

## ສິກຂາບົດທີ ໔

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຜູ້ຢູ່ເທິງບ່ອນນອນ ຢູ່ໃສ? ຯລຯ

ໃນສິກຂາບົດທີ ໔ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ຯລຯ

## ສິກຂາບົດທີ ໕

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນບ່ອນນັ່ງກອດເຂົ່າ ຢູ່ໃສ? ຯລຯ

ໃນສິກຂາບົດທີ ໕ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ຯລຯ

## ສິກຂາບົດທີ ໖

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຜູ້ໂພກຫົວ ຢູ່ໃສ? ຯລຯ

ໃນສິກຂາບົດທີ ໖ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ຯລຯ

## ສິກຂາບົດທີ ໗

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຜູ້ຄຸມຫົວ ຢູ່ໃສ? ຯລຯ

ໃນສິກຂາບົດທີ ໗ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງວາຈາກັບຈິດ ບໍ່ ແມ່ນເກີດທາງກາຍ ฯລฯ

## ສິກຂາບົດທີ ໘

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຢູ່ເທິງພື້ນດິນ ສະແດງທຳແກ່ ຄົນຜູ້ ນັ່ງເທິງອາສະນະ ຢູ່ໃສ? ฯລฯ

ໃນສິກຂາບົດທີ ໘ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບ ຈິດ ฯລฯ

## ສິກຂາບົດທີ ໙

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຢູ່ເທິງອາສະນະຕ່ຳ ສະແດງທຳ ແກ່ ຄົນຜູ້ນັ່ງເທິງອາສະນະສູງ ຢູ່ໃສ? ฯລฯ

ໃນສິກຂາບົດທີ ໙ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບ ຈິດ ฯລฯ

## ສິກຂາບົດທີ ໑໐

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຢືນສະແດງທຳແກ່ຄົນຜູ້ນັ່ງຢູ່ ຢູ່ໃສ ฯລฯ

ໃນສິກຂາບົດທີ ໑໐ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິ ດ ฯລฯ

## ສິກຂາບົດທີ ໑໑

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຢູ່ທາງຫຼັງ ສະແດງທຳແກ່ຄົນຜູ້ ຍ່າງໄປທາງໜ້າ ຢູ່ໃສ? ฯລฯ

ໃນສິກຂາບົດທີ ໑໑ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ฯลฯ

## ສິກຂາບົດທີ ໑໘

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຢູ່ນອກທາງ ສະແດງທຳແກ່ຄົນຜູ້ຍ່າງໄປໃນທາງ ຢູ່ໃສ? ฯลฯ

ໃນສິກຂາບົດທີ ໑໘ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ฯลฯ

## ສິກຂາບົດທີ ໑໙

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຢືນຖ່າຍອຸດຈາຣະຫຼືຖ່າຍປັດສາວະ ຢູ່ໃສ? ฯลฯ

ໃນສິກຂາບົດທີ ໑໙ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

## ສິກຂາບົດທີ ໑໔

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ຖ່າຍປັດສາວະ

ຫຼືບ້ວນນໍ້າລາຍລົງເທິງຂອງຂຽວ ຢູ່ໃສ? ฯลฯ

ໃນສິກຂາບົດທີ ໑໔ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ฯลฯ

## ສິກຂາບົດທີ ໑໕

ຖາມ : ຊົງບັນຍັດທຸກກົດແກ່ພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ຖ່າຍປັດສາວະ ຫຼືບ້ວນນໍ້າລາຍລົງໃນນໍ້າ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ຖ່າຍອຸດຈາຣະແດ່ ຖ່າຍປັດສາວະແດ່ ບ້ວນນ້ຳລາຍແດ່ ລົງໃນນ້ຳ

ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບທາງຈິດ ບໍ່ແມ່ນເກີດທາງວາຈາ ໗໒໗

**ປາທຸກະວັກທີ ໗ ຈົບ**

**ເສຂິຍະວັດ ໗໕ ສິກຂາບົດ ຈົບ**

## ລວມສິກຂາບົດທີ່ມີໃນເສຂິຍະກັນ

| | |
|---|---|
| ສິກຂາບົດທີ ໑-໒ | ວ່າດ້ວຍການຄອງອັນຕະຣະວາສົກແລະອຸດຕະຣາສົງຮຽບຮ້ອຍ |
| ສິກຂາບົດທີ ໓-໔ | ວ່າດ້ວຍການປົກປິດກາຍດີໄປແລະນັ່ງໃນບໍລິເວນເຮືອນ |
| ສິກຂາບົດທີ ໕-໖ | ວ່າດ້ວຍການສັງລວມດີໄປແລະນັ່ງໃນບໍລິເວນເຮືອນ |
| ສິກຂາບົດທີ ໗-໘ | ວ່າດ້ວຍການມີຈັກຂຸທອດລົງໄປແລະນັ່ງໃນບໍລິເວນເຮືອນ |
| ສິກຂາບົດທີ ໙-໑໐ | ວ່າດ້ວຍການບໍ່ຈ້ອນຜ້າໄປແລະນັ່ງໃນບໍລິເວນເຮືອນ |
| ສິກຂາບົດທີ ໑໑-໑໒ | ວ່າດ້ວຍການບໍ່ຫົວສຽງດັງໄປແລະນັ່ງໃນບໍລິເວນເຮືອນ |
| ສິກຂາບົດທີ ໑໓-໑໔ | ວ່າດ້ວຍການເວົ້າສຽງຄ່ອຍໄປແລະນັ່ງໃນບໍລິເວນເຮືອນ |
| ສິກຂາບົດທີ ໑໕-໑໖ | ວ່າດ້ວຍການບໍ່ຍ່າງໂງກກາຍໄປແລະນັ່ງໃນບໍລິເວນເຮືອນ |
| ສິກຂາບົດທີ ໑໗-໑໘ | ວ່າດ້ວຍການບໍ່ຍ່າງແກວ່ງແຂນໄປແລະນັ່ງໃນບໍລິເວນເຮືອນ |
| ສິກຂາບົດທີ ໑໙-໒໐ | ວ່າດ້ວຍການບໍ່ຍ່າງໂງກຫົວໄປແລະນັ່ງໃນບໍລິເວນເຮືອນ |
| ສິກຂາບົດທີ ໒໑-໒໒ | ວ່າດ້ວຍການບໍ່ຍ່າງສ່າຍແອວໄປແລະນັ່ງໃນບໍລິເວນເຮືອນ |
| ສິກຂາບົດທີ ໒໓-໒໔ | ວ່າດ້ວຍການບໍ່ຍ່າງຄຸມຫົວໄປແລະນັ່ງໃນບໍລິເວນເຮືອນ |
| ສິກຂາບົດທີ ໒໕ | ວ່າດ້ວຍການບໍ່ຍ່າງແຍ່ງແຍ້ໄປໃນບໍລິເວນເຮືອນ |
| ສິກຂາບົດທີ ໒໖ | ວ່າດ້ວຍການບໍ່ນັ່ງກອດເຂົ່າໃນບໍລິເວນເຮືອນ |
| ສິກຂາບົດທີ ໒໗ | ວ່າດ້ວຍການຮັບບິນທະບາດໂດຍເຄົາລົບ |
| ສິກຂາບົດທີ ໒໘ | ວ່າດ້ວຍການໃຫ້ຄວາມສຳຄັນໃນບາດຂະນະຮັບບິນທະບາດ |
| ສິກຂາບົດທີ ໒໙ | ວ່າດ້ວຍການຮັບບິນທະບາດພໍເໝາະກັບແກງ |
| ສິກຂາບົດທີ ໓໐ | ວ່າດ້ວຍການຮັບບິນທະບາດສະເໝີຂອບປາກບາດ |
| ສິກຂາບົດທີ ໓໑ | ວ່າດ້ວຍການສັນບິນທະບາດໂດຍເຄົາລົບ |
| ສິກຂາບົດທີ ໓໒ | ວ່າດ້ວຍການໃຫ້ຄວາມສຳຄັນໃນບາດຂະນະສັນບິນທະບາດ |

สิກຂາບົດທີ ໖໔ ວ່າດ້ວຍການບໍ່ສະແດງທຳແກ່ຄົນຜູ້ຢູ່ເທິງບ່ອນນອນ
ສິກຂາບົດທີ ໖໕ ວ່າດ້ວຍການບໍ່ສະແດງທຳແກ່ຄົນຜູ້ນັ່ງກອດເຂົ່າ
ສິກຂາບົດທີ ໖໖ ວ່າດ້ວຍການບໍ່ສະແດງທຳແກ່ຄົນຜູ້ໂພກຫົວ
ສິກຂາບົດທີ ໖໗ ວ່າດ້ວຍການບໍ່ສະແດງທຳແກ່ຄົນຜູ້ຄຸມຫົວ
ສິກຂາບົດທີ ໖໘ ວ່າດ້ວຍການບໍ່ສະແດງທຳແກ່ຄົນຜູ້ນັ່ງເທິງອາສະນະ
ສິກຂາບົດທີ ໖໙ ວ່າດ້ວຍການບໍ່ສະແດງທຳແກ່ຄົນຜູ້ນັ່ງເທິງອາສະນະສູງ
ສິກຂາບົດທີ ໗໐ ວ່າດ້ວຍການບໍ່ສະແດງທຳແກ່ຄົນຜູ້ນັ່ງຢູ່
ສິກຂາບົດທີ ໗໑ ວ່າດ້ວຍການບໍ່ສະແດງທຳແກ່ຄົນຜູ້ຍ່າງໄປທາງໜ້າ
ສິກຂາບົດທີ ໗໒ ວ່າດ້ວຍການບໍ່ສະແດງທຳແກ່ຄົນຜູ້ຍ່າງໄປໃນທາງຂະນະທີ່ຢູ່ນອກທາງ
ສິກຂາບົດທີ ໗໓ ວ່າດ້ວຍການບໍ່ຢືນຖ່າຍອຸດຈາຣະຫຼືປັດສາວະ
ສິກຂາບົດທີ ໗໔ ວ່າດ້ວຍການບໍ່ບ້ວນນ້ຳລາຍເທິງຂອງຂຽວ
ສິກຂາບົດທີ ໗໕ ວ່າດ້ວຍການບໍ່ຖ່າຍອຸດຈາຣະ ປັດສາວະຫຼືບ້ວນນ້ຳລາຍລົງໃນນ້ຳ

## ລວມວັກທີ່ມີໃນເສຂິຍະກັນ

໑. ປະຣິມັນທະລະວັກ ໝວດວ່າດ້ວຍການນຸ່ງຫົ່ມເປັນປະຣິມົນທົນ
໒. ອຸດຊັກຄິກະວັກ ໝວດວ່າດ້ວຍການຫົວຂວນ
໓. ຂຳພະກະຕະວັກ ໝວດວ່າດ້ວຍການຄ້ຳແອວ
໔. ປິນດະປາຕະວັກ ໝວດວ່າດ້ວຍບິນທະບາດ
໕. ກະພະລະວັກ ໝວດວ່າດ້ວຍຄຳເຂົ້າ
໖. ສຸຣຸສຸຣຸວັກ ໝວດວ່າດ້ວຍການສັນດັງຊູ້ດ ໆ
໗. ປາທຸກາວັກ ໝວດວ່າດ້ວຍຊຽງຕີນ

**ກັດຖະປັນຍັດຕິອາຣະໃນມະຫາວິພັງ ຈົບ**

# ໒. ກະຕາປັດຕິວາຣະ

## ວາຣະວ່າດ້ວຍຕ້ອງອາບັດທີ່ໃດ?

### ໑. ປາຣາຊິກກັນ

ຄໍາຖາມ - ຄໍາຕອບຈໍານວນອາບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໑

[໑໕ກ] ຖາມ : ພິກຂຸເສບເມຖຸນທໍາ ຕ້ອງອາບັດທີ່ໃດ?
ຕອບ : ພິກຂຸເສບເມຖຸນທໍາ ຕ້ອງອາບັດ ໓ ຢ່າງ ຄື

໑. ເສບເມຖຸນທໍາໃນຊາກສົບທີ່ຍັງບໍ່ຖືກສັດກັດກິນ ຕ້ອງອາບັດປາຣາຊິກ
໒. ເສບເມຖຸນທໍາໃນຊາກສົບທີ່ຖືກສັດກັດກິນສ່ວນຫຼາຍ ຕ້ອງອາບັດຖຸນລັດໄຈ
໓. ສອດອົງຄະຊາດເຂົ້າໃນປາກທີ່ອ້າ ແຕ່ບໍ່ໄດ້ຖືກຕ້ອງ ຕ້ອງອາບັດທຸກກົດ

ພິກຂຸເສບເມຖຸນທໍາ ຕ້ອງອາບັດ ໓ ຢ່າງເຫຼົ່ານີ້

### ປາຣາຊິກສິກຂາບົດທີ ໒

[໑໕໗] ຖາມ : ພິກຂຸຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ຕ້ອງອາບັດທີ່ໃດ?
ຕອບ : ພິກຂຸຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ຕ້ອງອາບັດ ໓ ຢ່າງ ຄື

໑. ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍສ່ວນແຫ່ງຈິດຄິດຈະລັກ ມີລາຄາ ໕ ມາສົກ ຫຼືເກີນກວ່າ ໕ ມາສົກ ຕ້ອງອາບັດປາຣາຊິກ
໒. ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍສ່ວນແຫ່ງຈິດຄິດຈະລັກ ມີລາຄາເກີນກວ່າ ໑ ມາສົກ ຫຼືໜ້ອຍກວ່າ ໕ ມາສົກ ຕ້ອງອາບັດຖຸນລັດໄຈ
໓. ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍສ່ວນແຫ່ງຈິດຄິດຈະລັກ ມີລາຄາ ໑ ມາສົກ ຫຼື ໜ້ອຍກວ່າ ໑ ມາສົກ ຕ້ອງອາບັດທຸກກົດ

ພິກຂຸຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ຕ້ອງອາບັດ ໓ ຢ່າງເຫຼົ່ານີ້

## ປາຣາຊິກສິກຂາບົດທີ ໓

[໑໕໙] ຖາມ : ພິກຂຸຈົງໃຈພາກກາຍມະນຸດຈາກຊີວິດ ຕ້ອງອາບັດທໍ່ໃດ?
ຕອບ : ພິກຂຸຈົງໃຈພາກກາຍມະນຸດຈາກຊີວິດ ຕ້ອງອາບັດ ໓ ຢ່າງ ຄື

໑. ຂຸດຂຸມເຊື່ອງໄວ້ເຈາະຈົງມະນຸດວ່າ "ບຸກຄົນຊື່ນີ້ຈະຕົກລົງໄປຕາຍ" ຕ້ອງອາບັດທຸກກົດ

໒. ເມື່ອບຸກຄົນນັ້ນຕົກລົງໄປໄດ້ຮັບທຸກຂະເວທະນາ ຕ້ອງອາບັດຖຸນລັດໄຈ

໓. ເຂົາຕາຍ ຕ້ອງອາບັດປາຣາຊິກ

ພິກຂຸຈົງໃຈພາກກາຍມະນຸດຈາກຊີວິດ ຕ້ອງອາບັດ ໓ ຢ່າງເຫຼົ່ານີ້

## ປາຣາຊິກສິກຂາບົດທີ ໔

[໑໖໐] ຖາມ : ພິກຂຸກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ ບໍ່ເປັນຈິງຕ້ອງອາບັດທໍ່ໃດ
ຕອບ : ພິກຂຸກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ບໍ່ເປັນຈິງ ຕ້ອງອາບັດ ໓ ຢ່າງ ຄື

໑. ພິກຂຸມີຄວາມປາຖະໜາຊົ່ວ ຖືກຄວາມຢາກຄອບງຳ ກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ ບໍ່ເປັນຈິງ ຕ້ອງອາບັດປາຣາຊິກ

໒. ພິກຂຸກ່າວວ່າ "ພິກຂຸອົງໃດຢູ່ໃນວິຫານຂອງທ່ານພິກຂຸອົງນັ້ນເປັນພຣະອະຣະຫັນ" ເມື່ອຜູ້ອື່ນເຂົ້າໃຈ ຕ້ອງອາບັດຖຸນລັດໄຈ

໓. ເມື່ອເຂົາບໍ່ເຂົ້າໃຈ ຕ້ອງອາບັດທຸກກົດ

ພິກຂຸກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ບໍ່ເປັນຈິງ ຕ້ອງອາບັດ ໓ ຢ່າງເຫຼົ່ານີ້

**ປາຣາຊິກ ໔ ສິກຂາບົດ ຈົບ**

## ໒. ສັງຄາທິເສສະກັນ

ຄຳຖາມ - ຄຳຕອບຈຳນວນອາບັດໃນສັງຄາທິເສສະກັນ

## ໑. ສຸກກະວິສັດຖິສິກຂາບົດ

[໑໖໑] ຖາມ : ພິກຂຸພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ ຕ້ອງອາບັດທໍ່ໃດ?
ຕອບ : ພິກຂຸພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ ຕ້ອງອາບັດ ໓ ຢ່າງ ຄື

໑. ຈົງໃຈ ພະຍາຍາມ ນ້ຳອະສຸຈິເຄື່ອນ ຕ້ອງອາບັດສັງຄາທິເສດ
໒. ຈົງໃຈ ພະຍາຍາມ ນ້ຳອະສຸຈິບໍ່ເຄື່ອນ ຕ້ອງອາບັດຖຸນລັດໄຈ
໓. ຕ້ອງອາບັດທຸກກົດ໑ ຍ້ອນພະຍາຍາມ

## ໒. ກາຍະສັງສັກຄະສິກຂາບົດ

ພິກຂຸຖືກຕ້ອງກາຍກັບມາຕຸຄາມ ຕ້ອງອາບັດ ໓ ຢ່າງ ຄື

໑. ໃຊ້ກາຍຈັບຕ້ອງກາຍ ຕ້ອງອາບັດສັງຄາທິເສດ
໒. ໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດຖຸນລັດໄຈ
໓. ໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍຕ້ອງອາບັດທຸກກົດ

## ໓. ທຸດຖຸນລະວາຈາສິກຂາບົດ

ພິກຂຸເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບ ຕ້ອງອາບັດ ໓ ຢ່າງ ຄື

໑. ເວົ້າຊົມແດ່ ເວົ້າຕິແດ່ ພາດພິງເຖິງທະວານໜັກ ທະວານເບົາ ຕ້ອງອາບັດສັງຄາທິເສດ
໒. ເວົ້າຊົມແດ່ ເວົ້າຕິແດ່ ພາດພິງເຖິງອະໄວຍະວະເບື້ອງເທິງໃຕ້ບ່າລົງມາອະໄວຍະວະ ເບື້ອງຕ່ຳເໜືອເຂົ່າຂຶ້ນໄປ ເວັ້ນທະວານໜັກ ທະວານເບົາ ຕ້ອງອາບັດຖຸນລັດໄຈ
໓. ເວົ້າຊົມແດ່ ເວົ້າຕິແດ່ ພາດພິງເຖິງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

## ໔. ອັດຕະກາມະປາຣິຈະຣິຍະສິກຂາບົດ

ພິກຂຸກ່າວສັນເສີນການປົນເປີຄວາມຕ້ອງການຂອງຕົນ ຕ້ອງອາບັດ ໓ ຢ່າງ ຄື

໑. ກ່າວສັນເສີນການປົນເປີຄວາມຕ້ອງການຂອງຕົນຕໍ່ໜ້າມາຕຸຄາມຕ້ອງອາບັດສັງຄາທິເສດ
໒. ກ່າວສັນເສີນການປົນເປີຄວາມຕ້ອງການຂອງຕົນຕໍ່ໜ້າບັນເດາະ ຕ້ອງອາບັດຖຸນລັດໄຈ

໓. ກ່າວສັນເສີນການປົນເປີຄວາມຕ້ອງການຂອງຕົນຕໍ່ໜ້າສັດເດຍຣັດສານ ຕ້ອງອາບັດທຸກກົດ

## ໕. ສັນຈະຣິດຕະສິກຂາບົດ

ພິກຂຸເຮັດໜ້າທີ່ຊັກສື່ ຕ້ອງອາບັດ ໓ ຢ່າງ ຄື

໑. ຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ
໒. ຮັບຄຳ ໄປບອກ ບໍ່ກັບມາບອກ ຕ້ອງອາບັດຖຸນລັດໄຈ
໓. ຮັບຄຳ ບໍ່ໄປບອກ ບໍ່ກັບມາບອກ ຕ້ອງອາບັດທຸກກົດ

## ໖. ກຸຕິກາຣະສິກຂາບົດ

ພິກຂຸສ້າງກຸດຕິດ້ວຍການຂໍເອົາເອງ ຕ້ອງອາບັດ ໓ ຢ່າງ ຄື

໑. ກຳລັງໃຊ້ໃຫ້ສ້າງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ຍັງເຫຼືອດິນຈີ່ອີກກ້ອນໜຶ່ງຈຶ່ງຈະສຳເລັດ ຕ້ອງອາບັດຖຸນລັດໄຈ
໓. ດິນຈີ່ກ້ອນສຸດທ້າຍສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ

## ໗. ວິຫາຣະກາຣະສິກຂາບົດ

ພິກຂຸໃຊ້ໃຫ້ສ້າງວິຫານໃຫຍ່ ຕ້ອງອາບັດ ໓ ຢ່າງ ຄື

໑. ກຳລັງໃຊ້ໃຫ້ສ້າງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ຍັງເຫຼືອດິນຈີ່ອີກກ້ອນໜຶ່ງຈຶ່ງຈະສຳເລັດ ຕ້ອງອາບັດຖຸນລັດໄຈ
໓. ດິນຈີ່ກ້ອນສຸດທ້າຍສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ

## ໘. ປະຖະມະທຸດຖະໂທສະສິກຂາບົດ

ພິກຂຸໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກທີ່ບໍ່ມີມູນ ຕ້ອງອາບັດ ໓ ຢ່າງ ຄື

໑. ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນ ຈຶ່ງໂຈດ ຕ້ອງອາບັດທຸກກົດກັບສັງຄາທິເສດ
໒. ຂໍໂອກາດກ່ອນ ມີຄວາມປະສົງຈະດ່າ ຈຶ່ງໂຈດ ຕ້ອງອາບັດຍ້ອນກ່າວສຽດສີ

## ໙. ທຸຕິຍະທຸດຖະໂທສະສິກຂາບົດ

ພິກຂຸອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນເປັນເລດໃສ່ຄວາມພິກຂຸດ້ວຍອາບັດປາ ຣາຊິກ ຕ້ອງອາບັດ ໓ ຢ່າງ ຄື

໑. ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນ ຈຶ່ງໂຈດ ຕ້ອງອາ ບັດທຸກກົດກັບສັງຄາທິເສດ

໒. ຂໍໂອກາດກ່ອນ ມີຄວາມປະສົງຈະດ່າ ຈຶ່ງໂຈດ ຕ້ອງອາບັດຍ້ອນກ່າວສຽດສີ

## ໑໐. ສັງຄະເພທະສິກຂາບົດ

ພິກຂຸຜູ້ເຮັດສົງໃຫ້ແຕກກັນ ຖືກສົງສູດສະມະນຸພາດຄົບ ໓ ຄັ້ງກໍຍັງບໍ່ສະລະ(ເລື້ອງນັ້ນ) ຕ້ອງອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ

໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

## ໑໑. ສັງຄະເພທານຸວັດຕະກະສິກຂາບົດ

ພິກຂຸທັງຫຼາຍທີ່ປະພຶດຕາມສະໜັບສະໜູນພິກຂຸຜູ້ທຳລາຍສົງ ຖືກສົງສູດສະມະນຸພາດ ຄົບ ໓ ຄັ້ງ ກໍຍັງບໍ່ສະລະ(ເລື້ອງນັ້ນ) ຕ້ອງອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ

໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

## ໑໒. ທຸບພະຈະສິກຂາບົດ

ພິກຂຸເປັນຄົນວ່າຍາກ ຖືກສົງສູດສະມະນຸພາດຄົບ ໓ ຄັ້ງ ກໍຍັງບໍ່ສະລະ(ເລື້ອງນັ້ນ) ຕ້ອງອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ
໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

## ໑໓. ກຸລະທູສະກະສິກຂາບົດ

ພິກຂຸຜູ້ປະທຸດສະຮ້າຍຕະກູນ ຖືກສົງສູດສະມະນຸພາດຄົບ ໓ ຄັ້ງ ກໍຍັງບໍ່ສະລະ ຕ້ອງ ອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ
໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ
໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

**ສັງຄາທິເສດ ໑໓ ສິກຂາບົດ ຈົບ**

໗໑໗

## ໒. ນິດສັກຄິຍະກັນ

## ຈຳນວນອາບັດໃນນິດສັກຄິຍະກັນ

## ໑. ກະຖິນະວັກ

## ໑. ປະຖົມກະຖິນສິກຂາບົດ

[໑໖໒] ພິກຂຸຊົງອະຕິເຣກຈີວອນໄວ້ເກີນ ໑໐ ມື້ ຕ້ອງອາບັດ ໑ ຢ່າງ ຄື ນິດສັກຄິຍະປາຈິດຕີ

## ໒. ອຸດໂທສິຕະສິກຂາບົດ

ພິກຂຸຢູ່ປາສະຈາກໄຕຣຈີວອນສິ້ນຣາຕີໜຶ່ງ ຕ້ອງອາບັດ ໑ ຢ່າງ ຄືນິດສັກຄິຍະປາຈິດຕີ

## ໓. ຕະຕິຍະກະຖິນະສິກຂາບົດ

ພິກຂຸຮັບຜ້າທີ່ເປັນອະກາລະຈີວອນແລ້ວເກັບໄວ້ເກີນ ໑ ເດືອນ ຕ້ອງອາບັດ ໑ ຢ່າງຄື ນິດສັກຄິຍະປາຈິດຕີ

## ໔. ປຸຣານະຈີວະຣະສິກຂາບົດ

ພິກຂຸໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກຈີວອນເກົ່າ ຕ້ອງອາບັດ ໔ ຢ່າງ ຄື

໑. ໃຊ້ໃຫ້ຊັກ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ[໑]
໔. ເມື່ອໃຫ້ຊັກສຳເລັດແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໕. ຈີວະຣະປະຕິກຄະຫະນະສິກຂາບົດ

ພິກຂຸຮັບຈີວອນຈາກມືຂອງພິກຂຸນີຜູ້ບໍ່ແມ່ນຍາດ ຕ້ອງອາບັດ ໔ ຢ່າງ ຄື

໑. ຮັບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອຮັບຈີວອນແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໖. ອັນຍາຕະກະວິນຍັດຕິສິກຂາບົດ

ພິກຂຸອອກປາກຂໍຈີວອນຈາກຄະລືຫັດຊາຍ ຫຼືຄະລືຫັດຍິງຜູ້ບໍ່ແມ່ນຍາດ ຕ້ອງອາບັດ ໔ ຢ່າງ ຄື

໑. ອອກປາກຂໍ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອອອກປາກຂໍໄດ້ມາແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໗. ຕະຕຸດຕະຣິສິກຂາບົດ

ພິກຂຸອອກປາກຂໍຈີວອນເກີນກວ່ານັ້ນຈາກຄະລືຫັດຊາຍ ຫຼືຄະລືຫັດຍິງ ຜູ້ບໍ່ແມ່ນຍາດ ຕ້ອງອາບັດ ໔ ຢ່າງ ຄື

໑. ອອກປາກຂໍ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອອອກປາກຂໍໄດ້ມາແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໘. ອຸປັກຂະຕະສິກຂາບົດ

ພິກຂຸຜູ້ເຊິ່ງເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຄະລືຫັດຜູ້ບໍ່ແມ່ນຍາດແລ້ວກຳນົດຊະນິດ ຈີວອນ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳນົດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອກຳນົດແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໙. ທຸຕິຍະອຸປັກຂະຕະສິກຂາບົດ

ພິກຂຸຜູ້ເຊິ່ງເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຄະລຶຫັດຜູ້ບໍ່ແມ່ນຍາດ ແລ້ວກຳນົດຈີວອນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳນົດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອກຳນົດແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໑໐. ຣາຊະສິກຂາບົດ

ພິກຂຸໃຫ້ເຂົາຈັດຈີວອນສຳເລັດໄດ້ດ້ວຍການທວງເກີນ ໓ ຄັ້ງ ຢືນເກີນ ໖ ຄັ້ງ ຕ້ອງອາບັດ ໒ ຢ່າງ ຄື

໑. ໃຫ້ເຂົາຈັດສຳເລັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອໃຫ້ເຂົາຈັດສຳເລັດແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

**ກະຖິນະວັກທີ ໑ ຈົບ**

## ໒. ໂກສິຍະວັກ

## ໑. ໂກສິຍະສິກຂາບົດ

[໑໖໓] ພິກຂຸໃຊ້ໃຫ້ເຮັດສັນຖັດປະສົມໃຍໄໝ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງໃຊ້ໃຫ້ເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອໃຊ້ໃຫ້ເຮັດສຳເລັດແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໒. ສຸດທະກາລະກະສິກຂາບົດ

ພິກຂຸໃຊ້ໃຫ້ເຮັດສັນຖັດຂົນຈຽມດຳລ້ວນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງໃຊ້ໃຫ້ເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອໃຊ້ໃຫ້ເຮັດສຳເລັດແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໓. ທະເວພາຄະສິກຂາບົດ

ພິກຂຸບໍ່ເອົາຂົນຈຽມຂາວ ໑ ສ່ວນ ຂົນຈຽມແດງ ໑ ສ່ວນ ແລ້ວໃຊ້ໃຫ້ເຮັດສັນຖັດໃໝ່ ຕ້ອງອາບັດ ໔ ຢ່າງ ຄື

໑. ກໍາລັງໃຊ້ໃຫ້ເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອໃຊ້ໃຫ້ເຮັດສໍາເລັດແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

## ໔. ສັບພັດສະສິກຂາບົດ

ພິກຂຸໃຊ້ໃຫ້ເຮັດສັນຖັດທຸກປີ ຕ້ອງອາບັດ ໔ ຢ່າງ ຄື

໑. ກໍາລັງໃຊ້ໃຫ້ເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອໃຊ້ໃຫ້ເຮັດສໍາເລັດແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

## ໕. ນິສີທະນະສັນຖະຕະສິກຂາບົດ

ພິກຂຸບໍ່ເອົາສັນຖັດເກົ່າ ໑ ຄືບສຸຄົດໂດຍຮອບມາປົນ ແລ້ວໃຊ້ໃຫ້ເຮັດສັນຖັດຮອງນັ່ງໃໝ່ ຕ້ອງອາບັດ ໔ ຢ່າງ ຄື

໑. ກໍາລັງໃຊ້ໃຫ້ເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອໃຊ້ໃຫ້ເຮັດສໍາເລັດແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

## ໖. ເອລະກະໂລມະສິກຂາບົດ

ພິກຂຸຮັບຂົນຈຽມມາແລ້ວ ເດີນທາງໄປເກີນ ໓ ໂຍດ ຕ້ອງອາບັດ ໔ ຢ່າງ ຄື

໑. ກ້າວຂາທີ ໑ ຜ່ານ ໓ ໂຍດໄປ ຕ້ອງອາບັດທຸກກົດ
໔. ກ້າວຂາທີ ໔ ຜ່ານໄປ ຕ້ອງອາບັດນິດສັກຄີຍະປາຈິດຕີ

## ໗. ເອລະກະໂລມະໂທວາປະນະສິກຂາບົດ

ພິກຂຸໃຊ້ພິກຂຸນີຜູ້ບໍ່ແມ່ນຍາດໃຫ້ຊັກຂົນຈຽມ ຕ້ອງອາບັດ ໔ ຢ່າງ ຄື

໑. ກໍາລັງໃຊ້ໃຫ້ຊັກ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອໃຊ້ໃຫ້ຊັກສໍາເລັດແລ້ວ ຕ້ອງອາບັດນິດສັກຄີຍະປາຈິດຕີ

## ៧. ຣູປິຍະສິກຂາບົດ

ພິກຂຸຮັບຣູປິຍະ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງຮັບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອຮັບແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ៨. ຣູປິຍະສັງໂວຫາຣະສິກຂາບົດ

ພິກຂຸກະທຳການແລກປ່ຽນກັນດ້ວຍຣູປິຍະຊະນິດຕ່າງ ໆ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງແລກປ່ຽນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອແລກປ່ຽນແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໑໐. ກະຍະວິກກະຍະສິກຂາບົດ

ພິກຂຸກະທຳການຊື້ຂາຍມີປະການຕ່າງ ໆ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງຊື້ຂາຍ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອຊື້ຂາຍແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

**ໂກສິຍະວັກທີ ໒ ຈົບ**

## ៣. ປັດຕະວັກ

## ໑. ປັດຕະສິກຂາບົດ

[໑໖໔] ພິກຂຸຊົງອະຕິເຣກບາດໄວ້ເກີນ ໑໐ ມື້ ຕ້ອງອາບັດ ໑ ຢ່າງ ຄື ນິດສັກຄິຍະປາຈິດຕີ

## ໒. ອູນະປັດຈະພັນທະນະສິກຂາບົດ

ພິກຂຸມີບາດທີ່ມີຮອຍຊ່ອມຢ່ອນກວ່າ ໕ ແຫ່ງ ຂໍບາດໃໝ່ໜ່ວຍອື່ນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງຂໍ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອຂໍໄດ້ແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໓. ເພສັດຊະສິກຂາບົດ

ພິກຂຸຮັບປະເຄນເພສັດແລ້ວເກັບໄວ້ສັນເກີນ ໗ ມື້ ຕ້ອງອາບັດ ໑ ຢ່າງ ຄືນິດສັກຄິຍະປາຈິດຕີ

## ໔. ວັດສິກະສາຕິກະສິກຂາບົດ

ພິກຂຸສະແຫວງຫາຈີວອນຄືຜ້າອາບນ້ຳຝົນ ເມື່ອລະດູຮ້ອນຍັງເຫຼືອເກີນກວ່າ ໑ ເດືອນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງສະແຫວງຫາ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ສະແຫວງຫາໄດ້ແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໕. ຈີວະຣະອັດສິນທະນະສິກຂາບົດ

ພິກຂຸໃຫ້ຈີວອນແກ່ພິກຂຸເອງແລ້ວໂກດ ບໍ່ພໍໃຈ ຍາດເອົາຄືນມາ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງຍາດເອົາຄືນມາ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອຍາດເອົາມາໄດ້ແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໖. ສຸດຕະວິນຍັດຕິສິກຂາບົດ

ພິກຂຸອອກປາກຂໍດ້າຍມາເອງແລ້ວໃຊ້ຊ່າງຫູກໃຫ້ຕ່ຳຈີວອນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງໃຊ້ໃຫ້ຕ່ຳ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອໃຊ້ໃຫ້ຕ່ຳສຳເລັດແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ໗. ມະຫາເປສະກາຣະສິກຂາບົດ

ພິກຂຸຜູ້ເຊິ່ງເຂົາບໍ່ໄດ້ປະວາຣະນາໄວ້ກ່ອນ ເຂົ້າໄປຫາຊ່າງຫູກທັງຫຼາຍຂອງຄະລຶຫັດຜູ້ບໍ່ແມ່ນຍາດ ແລ້ວກຳນົດຊະນິດຈີວອນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງກຳນົດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອກຳນົດສຳເລັດແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

## ๙. ອັດເຈກະຈີວະຣະສິກຂາບົດ

ພິກຂຸຮັບອັດເຈກະຈີວອນ ແລ້ວເກັບໄວ້ເກີນສະໄໝຈີວອນກາານ ຕ້ອງອາບັດ ໑ ຢ່າງ ຄື ນິດສັກຄິຍະປາຈິດຕີ

## ໙. ສາສັງກະສິກຂາບົດ

ພິກຂຸເກັບໄຕຣຈີວອນຜືນໃດຜືນໜຶ່ງໄວ້ໃນບໍລິເວນບ້ານແລ້ວຢູ່ປາສະຈາກເກີນ ໖ ຄືນ ຕ້ອງອາບັດ ໑ ຢ່າງຄືນິດສັກຄິຍະປາຈິດຕີ

## ໑໐. ປະຣິນະຕະສິກຂາບົດ

ພິກຂຸຮູ້ຢູ່ ນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງມາເພື່ອຕົນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງນ້ອມມາ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອນ້ອມມາໄດ້ແລ້ວ ຕ້ອງອາບັດນິດສັກຄິຍະປາຈິດຕີ

**ປັດຕະວັກທີ ໓ ຈົບ**

**ນິດສັກຄິຍະປາຈິດຕີ ໓໐ ສິກຂາບົດ ຈົບ**

## ໕. ປາຈິດຕິຍະກັນ

## ຈຳນວນອາບັດໃນປາຈິດຕິຍະກັນ

## ໑. ມຸສາວາທະວັກ

## ໑. ມຸສາວາທະສິກຂາບົດ

[໑໙໕] ຖາມ : ພິກຂຸກ່າວຕົວະທັງທີ່ຮູ້ຕ້ອງອາບັດທໍ່ໃດ?

ຕອບ : ພິກຂຸກ່າວຕົວະທັງທີ່ຮູ້ຕ້ອງອາບັດ ໕ ຢ່າງ ຄື

໑. ພິກຂຸມີຄວາມປາຖະໜາຊົ່ວ ຖືກຄວາມຢາກຄອບງຳ ກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ ບໍ່ເປັນຈິງ ຕ້ອງອາບັດປາຣາຊິກ
໒. ພິກຂຸໂຈດພິກຂຸດ້ວຍອາບັດປາຣາຊິກທີ່ບໍ່ມີມູນ ຕ້ອງອາບັດສັງຄາທິເສດ

໓. ພິກຂຸກ່າວວ່າ "ພິກຂຸອົງໃດຢູ່ໃນວິຫານຂອງທ່ານພິກຂຸອົງນັ້ນເປັນພຣະອະຣະຫັນ" ເມື່ອຜູ້ອື່ນເຂົ້າໃຈ ຕ້ອງອາບັດຖຸນລັດໄຈ
໔. ເມື່ອເຂົາບໍ່ເຂົ້າໃຈ ຕ້ອງອາບັດທຸກກົດ
໕. ຕ້ອງອາບັດປາຈິດຕີ ຍ້ອນກ່າວຕົວະທັງທີ່ຮູ້

ພິກຂຸກ່າວຕົວະທັງທີ່ຮູ້ຕ້ອງອາບັດ ໕ ຢ່າງເຫຼົ່ານີ້

## ໒. ໂອມະສະວາທະສິກຂາບົດ

ພິກຂຸກ່າວສຽດສີ ຕ້ອງອາບັດ ໒ ຢ່າງ ຄື

໑. ກ່າວສຽດສີອຸປະສຳບັນ (ພິກຂຸ) ຕ້ອງອາບັດປາຈິດຕີ
໒. ກ່າວສຽດສີອະນຸປະສຳບັນ (ຜູ້ບໍ່ແມ່ນພິກຂຸ) ຕ້ອງອາບັດທຸກກົດ

## ໓. ເປສຸນຍະສິກຂາບົດ

ພິກຂຸກ່າວສັບສໍ່ ຕ້ອງອາບັດ ໒ ຢ່າງ ຄື

໑. ກ່າວສັບສໍ່ອຸປະສຳບັນ ຕ້ອງອາບັດປາຈິດຕີ
໒. ກ່າວສັບສໍ່ອະນຸປະສຳບັນ ຕ້ອງອາບັດທຸກກົດ

## ໔. ປະທະໂສທຳມະສິກຂາບົດ

ພິກຂຸສອນອະນຸປະສຳບັນໃຫ້ກ່າວທຳແຂ່ງກັນເປັນບົດ ໆ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງສອນໃຫ້ກ່າວ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ຕ້ອງອາບັດປາຈິດຕີທຸກ ໆ ບົດ

## ໕. ສະຫະເສີຍຍະສິກຂາບົດ

ພິກຂຸນອນຮ່ວມກັນກັບອະນຸປະສຳບັນ ເກີນ ໒-໓ ຄືນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງນອນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອນອນແລ້ວ ຕ້ອງອາບັດປາຈິດຕີ

## ໖. ທຸຕິຍະສະຫະເສີຍຍະສິກຂາບົດ

ພິກຂຸນອນຮ່ວມກັນກັບມາຕຸຄາມ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງນອນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອນອນແລ້ວ ຕ້ອງອາບັດປາຈິດຕີ

## ໗. ທຳມະເທສະນາສິກຂາບົດ

ພິກຂຸສະແດງທຳແກ່ມາຕຸຄາມເກີນ ໕-໖ ຄຳ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງສະແດງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ຕ້ອງອາບັດປາຈິດຕີທຸກ ໆ ບົດ

## ໘. ພູຕາໂຣຈະນະສິກຂາບົດ

ພິກຂຸບອກອຸດຕະຣິມະນຸດສະທຳທີ່ມີຈິງແກ່ອະນຸປະສຳບັນ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງບອກ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອບອກແລ້ວ ຕ້ອງອາບັດປາຈິດຕີ

## ໙. ທຸດຖຸນລາໂຣຈະນະສິກຂາບົດ

ພິກຂຸບອກອາບັດຊົ່ວຫຍາບຂອງພິກຂຸແກ່ອະນຸປະສຳບັນ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງບອກ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອບອກແລ້ວ ຕ້ອງອາບັດປາຈິດຕີ

## ໑໐. ປະຖະວີຂະນະນະສິກຂາບົດ

ພິກຂຸຂຸດດິນ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງຂຸດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ຕ້ອງອາບັດປາຈິດຕີ ທຸກ ໆ ເວລາທີ່ຂຸດ

**ມຸສາວາທະວັກທີ ໑ ຈົບ**

# ໘. ພູຕະຄາມວັກ

## ໑. ພູຕະຄາມະສິກຂາບົດ

[໑໖໖] ພິກຂຸພາກພູຕະຄາມ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງພາກ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ຕ້ອງອາບັດປາຈິດຕີ ທຸກ ໆ ເວລາທີ່ພາກ

## ໒. ອັນຍະວາທະກະສິກຂາບົດ

ພິກຂຸນຳເອົາເລື້ອງອື່ນມາກ່າວປົກປິດ ຕ້ອງອາບັດ ໒ ຢ່າງ ຄື

໑. ເມື່ອສົງຍັງບໍ່ລົງອັນຍະວາທະກະກຳ(ກຳທີ່ຈະເພິ່ງກະທຳແກ່ພິກຂຸຜູ້ເວົ້າກົບເກື່ອນ) ນຳເອົາເລື້ອງອື່ນມາກ່າວປົກປິດ ຕ້ອງອາບັດທຸກກົດ
໒. ເມື່ອສົງລົງອັນຍະວາທະກະກຳແລ້ວ ນຳເອົາເລື້ອງອື່ນມາກ່າວປົກປິດ ຕ້ອງອາບັດປາຈິດຕີ

## ໓. ອຸດຊາປະນະກະສິກຂາບົດ

ພິກຂຸກ່າວໃຫ້ຜູ້ອື່ນເພ່ງໂທດພິກຂຸ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງກ່າວໃຫ້ເພ່ງໂທດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອກ່າວໃຫ້ເພ່ງໂທດແລ້ວ ຕ້ອງອາບັດປາຈິດຕີ
໔. ປະຖົມເສນາສະນະສິກຂາບົດ
ພິກຂຸວາງຕຽງ ຕັ່ງ ຟູກ ຫຼື ຕັ່ງອີ້ຂອງສົງໃນບ່ອນກາງແຈ້ງແລ້ວ ເມື່ອຈະຈາກໄປ ບໍ່ມ້ຽນ ບໍ່ບອກມອບໝາຍ ຕ້ອງອາບັດ ໒ ຢ່າງ ຄື
໑. ຍ່າງລ່ວງເລດທຸບາດ^ໄປ ໑ ກ້າວ ຕ້ອງອາບັດທຸກກົດ
໒. ຍ່າງລ່ວງເລດທຸບາດໄປ ໒ ກ້າວ ຕ້ອງອາບັດປາຈິດຕີ

## ໕. ທຸຕິຍະເສນາສະນະສິກຂາບົດ

ພິກຂຸປູບ່ອນນອນໃນວິຫານຂອງສົງແລ້ວ ເມື່ອຈະຈາກໄປບໍ່ມ້ຽນ ບໍ່ບອກມອບໝາຍ ຕ້ອງອາບັດ ໒ ຢ່າງ ຄື

໑. ຍ່າງລ່ວງເລີຍເຄື່ອງລ້ອມໄປ ໑ ກ້າວ ຕ້ອງອາບັດທຸກກົດ
໔. ຍ່າງລ່ວງເລີຍເຄື່ອງລ້ອມໄປ ໔ ກ້າວ ຕ້ອງອາບັດປາຈິດຕິ

## ໖. ອະນຸປະຂັດຊະສິກຂາບົດ

ພິກຂຸຮູ້ຢູ່ ເຂົ້າໄປນອນແຊກແຊງພິກຂຸຜູ້ເຂົ້າໄປຢູ່ໃນວິຫານຂອງສົງກ່ອນ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງນອນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອນອນແລ້ວ ຕ້ອງອາບັດປາຈິດຕິ

## ໗. ນິກກັດທະນະສິກຂາບົດ

ພິກຂຸໂກດ ບໍ່ພໍໃຈ ລາກພິກຂຸອອກຈາກວິຫານຂອງສົງ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງລາກ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອລາກອອກໄປແລ້ວ ຕ້ອງອາບັດປາຈິດຕິ

## ໘. ເວຫາສະກຸຕິສິກຂາບົດ

ພິກຂຸນັ່ງເທິງຕຽງຫຼືເທິງຕັ່ງອັນມີຕີນສຽບເທິງກຸດຕິຊັ້ນລອຍໃນວິຫານຂອງສົງ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງນັ່ງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອນັ່ງແລ້ວ ຕ້ອງອາບັດປາຈິດຕິ

## ໙. ມະຫັນລະກະວິຫາຣະສິກຂາບົດ

ພິກຂຸດຳເນີນການມຸງຫຼັງຄາ(ວິຫານ) ໔-໓ ຊັ້ນ ແລ້ວດຳເນີນການເກີນກວ່ານັ້ນ ຕ້ອງ ອາບັດ ໔ ຢ່າງ ຄື

໑. ກຳລັງດຳເນີນການ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໔. ເມື່ອດຳເນີນການແລ້ວ ຕ້ອງອາບັດປາຈິດຕິ

## ໑໐. ສັບປານະກະສິກຂາບົດ

ພິກຂຸຮູ້ຢູ່ວ່ານ້ຳມີສິ່ງມີຊີວິດ ຫົດຫຍ້າຫຼືດິນ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງທຳ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອທຳແລ້ວ ຕ້ອງອາບັດປາຈິດຕີ

**ພູຕະຄາມວັກທີ ໒ ຈົບ**

## ໓. ໂອວາທະວັກ

## ໑. ໂອວາທະສິກຂາບົດ

[໑໙໗] ພິກຂຸບໍ່ໄດ້ຮັບແຕ່ງຕັ້ງ ສັ່ງສອນພິກຂຸນີທັງຫຼາຍ ຕ້ອງອາບັດ ໒ ຢ່າງ ຄື
໑. ກຳລັງສັ່ງສອນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອສັ່ງສອນແລ້ວ ຕ້ອງອາບັດປາຈິດຕີ

## ໒. ອັດຖັງຄະຕະສິກຂາບົດ

ພິກຂຸສັ່ງສອນພິກຂຸນີທັງຫຼາຍໃນເວລາທີ່ດວງອາທິດອັດສະດົງແລ້ວ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງສັ່ງສອນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອສັ່ງສອນແລ້ວ ຕ້ອງອາບັດປາຈິດຕີ

## ໓. ພິກຂຸນູປັດສະຍະສິກຂາບົດ

ພິກຂຸເຂົ້າໄປທີ່ສຳນັກພິກຂຸນີແລ້ວສັ່ງສອນພິກຂຸນີທັງຫຼາຍ ຕ້ອງອາບັດ ໒ ຢ່າງ ຄື
໑. ກຳລັງສັ່ງສອນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອສັ່ງສອນແລ້ວ ຕ້ອງອາບັດປາຈິດຕີ

## ໔. ອາມິສະສິກຂາບົດ

ພິກຂຸກ່າວວ່າ "ພິກຂຸ(ຜູ້ເຖຣະ)ທັງຫຼາຍສັ່ງສອນພິກຂຸນີທັງຫຼາຍຍ້ອນເຫັນແກ່ອາມິດ" ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງກ່າວ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອກ່າວແລ້ວ ຕ້ອງອາບັດປາຈິດຕີ

## ໕. ຈີວະຣະທານະສິກຂາບົດ

ພິກຂຸໃຫ້ຈີວອນແກ່ພິກຂຸນີຜູ້ບໍ່ແມ່ນຍາດ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງໃຫ້ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໔. ເມື່ອໃຫ້ແລ້ວ ຕ້ອງອາບັດປາຈິດຕີ

## ໖. ຈີວະຣະສິບພະນະສິກຂາບົດ

ພິກຂຸຫຍິບຈີວອນໃຫ້ພິກຂຸນີຜູ້ບໍ່ແມ່ນຍາດ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງຫຍິບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໔. ຕ້ອງອາບັດປາຈິດຕີ ໃນທຸກ ໆ ຮອຍເຂັມ

## ໗. ສັງວິທານະສິກຂາບົດ

ພິກຂຸຊັກຊວນກັນເດີນທາງໄກຮ່ວມກັນກັບພິກຂຸນີ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງເດີນທາງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໔. ເມື່ອເດີນທາງໄປແລ້ວ ຕ້ອງອາບັດປາຈິດຕີ

## ໘. ນາວາພິຣູຫະນະສິກຂາບົດ

ພິກຂຸຊັກຊວນພິກຂຸນີໂດຍສານເຮືອລຳດຽວກັນ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງໂດຍສານ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໔. ເມື່ອໂດຍສານໄປແລ້ວ ຕ້ອງອາບັດປາຈິດຕີ

## ໙. ປະຣິປາຈິຕະສິກຂາບົດ

ພິກຂຸຮູ້ຢູ່ ສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມ ຕ້ອງອາບັດ ໔ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າຈະສັນ ຕ້ອງອາບັດທຸກກົດ

໔. ຕ້ອງອາບັດປາຈິດຕີ ໃນທຸກ ໆ ຄຳກືນ

## ໑໐. ຣະໂຫນີສັດຊະສິກຂາບົດ

ພິກຂຸນັ່ງໃນບ່ອນລັບກັບພິກຂຸນີສອງຕໍ່ສອງ ຕ້ອງອາບັດ ໔ ຢ່າງ ຄື

໑. ກຳລັງນັ່ງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໔. ເມື່ອນັ່ງແລ້ວ ຕ້ອງອາບັດປາຈິດຕີ

**ໂອວາທະວັກທີ ໓ ຈົບ**

# ໔. ໂພຊະນະວັກ

## ໑. ອາວະສະຖະປິນດະສິກຂາບົດ

[໑໕໗] ພິກຂຸສັນພັດຕາຫານໃນບ່ອນພັກແຮມເກີນກວ່າໜຶ່ງຄາບ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າຈະສັນ ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປາຈິດຕີ ທຸກ ໆ ຄຳກືນ

## ໒. ຄະນະໂພຊະນະສິກຂາບົດ

ພິກຂຸສັນຄະນະໂພຊະນະ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າຈະສັນ ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປາຈິດຕີ ທຸກ ໆ ຄຳກືນ

## ໓. ປະຣຳປະຣະໂພຊະນະສິກຂາບົດ

ພິກຂຸສັນປະຣຳປະຣະໂພຊະນະ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າຈະສັນ ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປາຈິດຕີ ທຸກ ໆ ຄຳກືນ

## ໔. ການະມາຕຸສິກຂາບົດ

ພິກຂຸຮັບເຂົ້າໜົມເຕັມ ໒-໓ ບາດ ແລ້ວຮັບເກີນກວ່ານັ້ນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງຮັບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອຮັບແລ້ວ ຕ້ອງອາບັດປາຈິດຕີ

## ໕. ປະຖົມປະວາຣະນາສິກຂາບົດ

ພິກຂຸສັນແລ້ວ ບອກຫ້າມພັດຕາຫານແລ້ວ ຫຍໍ້າຂອງຫຍໍ້າຫຼືສັນຂອງສັນທີ່ບໍ່ເປັນເດນ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າຈະສັນ ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປາຈິດຕີ ທຸກ ໆ ຄຳກືນ

## ໖. ທຸຕິຍະປະວາຣະນາສິກຂາບົດ

ພິກຂຸນຳຂອງຫຍ້ຳຫຼືຂອງສັນທີ່ບໍ່ເປັນເງື່ອນໄປປະວາຣະນາພິກຂຸຜູ້ສັນສຳເລັດແລ້ວບອກ ຫ້າມພັດຕາຫານແລ້ວ ຕ້ອງອາບັດ ໒ ຢ່າງ ຄື

໑. ພິກຂຸຮັບໄວ້ຕາມຄຳຂອງພິກຂຸນັ້ນດ້ວຍຕັ້ງໃຈວ່າ "ຈະຫຍ້ຳ ຈະສັນ" ພິກຂຸຜູ້ນຳໄປຕ້ອງອາບັດທຸກກົດ

໒. ເມື່ອພິກຂຸຜູ້ຮັບນັ້ນສັນສຳເລັດ ພິກຂຸຜູ້ນຳໄປປະວາຣະນາ ຕ້ອງອາບັດປາຈິດຕີ

## ໗. ວິກາລະໂພຊະນະສິກຂາບົດ

ພິກຂຸຫຍ້ຳຂອງຫຍ້ຳຫຼືສັນຂອງສັນໃນເວລາວິການ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຫຍ້ຳ ຈະສັນ" ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປາຈິດຕີ ທຸກ ໆ ຄຳກືນ

## ໘. ສັນນິທິກາຣະກະສິກຂາບົດ

ພິກຂຸຫຍ້ຳຂອງຫຍ້ຳຫຼືສັນຂອງສັນທີ່ເກັບສະສົມໄວ້ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຫຍ້ຳ ຈະສັນ" ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປາຈິດຕີ ທຸກ ໆ ຄຳກືນ

## ໙. ປະນີຕະໂພຊະນະສິກຂາບົດ

ພິກຂຸອອກປາກຂໍໂພຊະນະອັນປະນີດມາເພື່ອຕົນແລ້ວສັນ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປາຈິດຕີ ທຸກ ໆ ຄຳກືນ

## ໑໐. ທັນຕະໂປນະສິກຂາບົດ

ພິກຂຸກືນອາຫານທີ່ຍັງບໍ່ມີຜູ້ຖວາຍໃຫ້ລ່ວງລຳຄໍ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປາຈິດຕີ ທຸກ ໆ ຄຳກືນ

**ໂພຊະນະວັກທີ ໔ ຈົບ**

# ໕. ອະເຈລະກະວັກ

## ໑. ອະເຈລະກະສິກຂາບົດ

[໑໗໙] ພິກຂຸໃຫ້ຂອງຫຍໍ້າຫຼືຂອງສັນແກ່ອະເຈລະກະປະຣິພາຊົກ ຫຼືປະຣິພາຊິກາດ້ວຍມືຕົນ ຕ້ອງອາບັດ ໒ ຢ່າງ ຄື

໑. ກໍາລັງໃຫ້ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອໃຫ້ແລ້ວ ຕ້ອງອາບັດປາຈິດຕີ

## ໒. ອຸຍໂຍຊະນະສິກຂາບົດ

ພິກຂຸຜູ້ກ່າວຊັກຊວນພິກຂຸວ່າ "ທ່ານຈົ່ງມາເທີ້ນ ພວກເຮົາຈະເຂົ້າໄປບິນທະບາດໃນໝູ່ເຮືອນ ຫຼືໃນນິຄົມ" ແລ້ວໃຫ້ທາຍົກຖວາຍ ຫຼືບໍ່ໃຫ້ທາຍົກຖວາຍແກ່ພິກຂຸນັ້ນແລ້ວນິມົນກັບ ຕ້ອງອາບັດ ໒ ຢ່າງ ຄື

໑. ກໍາລັງນິມົນກັບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອນິມົນກັບແລ້ວ ຕ້ອງອາບັດປາຈິດຕີ

## ໓. ສະໂພຊະນະສິກຂາບົດ

ພິກຂຸເຂົ້າໄປນັ່ງແຊກແຊງໃນຕະກູນທີ່ມີຄົນ ໒ ຄົນ ຕ້ອງອາບັດ ໒ ຢ່າງ ຄື

໑. ກໍາລັງນັ່ງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອນັ່ງແລ້ວ ຕ້ອງອາບັດປາຈິດຕີ

## ໔. ຣະໂຫປະຕິດສັນນະສິກຂາບົດ

ພິກຂຸນັ່ງເທິງອາສະນະທີ່ກໍາບັງໃນບ່ອນລັບກັບມາຕຸຄາມ ຕ້ອງອາບັດ ໒ ຢ່າງ ຄື

໑. ກໍາລັງນັ່ງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອນັ່ງແລ້ວ ຕ້ອງອາບັດປາຈິດຕີ

## ໕. ຣະໂຫນິສັດຊະສິກຂາບົດ

ພິກຂຸນັ່ງໃນບ່ອນລັບກັບມາຕຸຄາມສອງຕໍ່ສອງ ຕ້ອງອາບັດ ໒ ຢ່າງ ຄື

໑. ກໍາລັງນັ່ງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອນັ່ງແລ້ວ ຕ້ອງອາບັດປາຈິດຕີ

## ໖. ຈາຣິດຕະສິກຂາບົດ

ພິກຂຸຮັບນິມົນໄວ້ແລ້ວ ມີພັດຕາຫານຢູ່ແລ້ວ ບໍ່ບອກລາພິກຂຸທີ່ມີຢູ່ທ່ຽວສັນຈອນໄປ ໃນຕະກູນທັງຫຼາຍ ກ່ອນເວລາສັນພັດຕາຫານ ຫຼືຫຼັງເວລາສັນພັດຕາຫານ ຕ້ອງອາບັດ ໒ ຢ່າງ ຄື

໑. ຍ່າງກ້າວທີ ໑ ລ່ວງທໍຣະນີປະຕູ ຕ້ອງອາບັດທຸກກົດ

໒. ຍ່າງກ້າວທີ ໒ ລ່ວງ(ທໍຣະນີປະຕູ) ຕ້ອງອາບັດປາຈິດຕີ

## ໗. ມະຫານາມະສິກຂາບົດ

ພິກຂຸອອກປາກຂໍເພສັດເກີນກວ່າກຳນົດ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງອອກປາກຂໍ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອອອກປາກຂໍແລ້ວ ຕ້ອງອາບັດປາຈິດຕີ

## ໘. ອຸຍຍຸດຕະເສນາສິກຂາບົດ

ພິກຂຸໄປເບິ່ງກອງທັບທີ່ເຄື່ອນຂະບວນອອກຮົບ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງໄປ ຕ້ອງອາບັດທຸກກົດ

໒. ຢືນເບິ່ງໃນໄລຍະທີ່ພໍແນມເຫັນ ຕ້ອງອາບັດປາຈິດຕີ

## ໙. ເສນາວາສະສິກຂາບົດ

ພິກຂຸພັກແຮມຢູ່ໃນກອງທັບເກີນກວ່າ ໓ ຄືນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງພັກແຮມຢູ່ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອພັກແຮມຢູ່ແລ້ວ ຕ້ອງອາບັດປາຈິດຕີ

## ໑໐. ອຸຍໂຍທິກະສິກຂາບົດ

ພິກຂຸທ່ຽວໄປສູ່ສະໜາມຮົບ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງທ່ຽວໄປ ຕ້ອງອາບັດທຸກກົດ

໒. ຢືນເບິ່ງໃນໄລຍະທີ່ພໍແນມເຫັນ ຕ້ອງອາບັດປາຈິດຕີ

**ອະເຈລະກະວັກທີ ໕ ຈົບ**

## ໖. ສຸຣາເມຣະຍະວັກ

### ໑. ສຸຣາປານະສິກຂາບົດ

[໑໗໐] ພິກຂຸດື່ມນ້ຳເມົາ ຕ້ອງອາບັດ ໒ ຢ່າງ ຄື
໑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະດື່ມ" ຕ້ອງອາບັດທຸກກົດ
໒. ດື່ມ ຕ້ອງອາບັດປາຈິດຕີ ທຸກ ໆ ເວລາທີ່ດື່ມເຂົ້າໄປ

### ໒. ອັງຄຸລິປະໂຕທະກະສິກຂາບົດ

ພິກຂຸໃຊ້ນີ້ວມືຈີ້ພິກຂຸໃຫ້ຫົວ ຕ້ອງອາບັດ ໒ ຢ່າງ ຄື
໑. ກຳລັງຈີ້ໃຫ້ຫົວ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອໃຫ້ຫົວແລ້ວ ຕ້ອງອາບັດປາຈິດຕີ

### ໓. ຫັດສະທຳມະສິກຂາບົດ

ພິກຂຸຫຼິ້ນນ້ຳ ຕ້ອງອາບັດ ໒ ຢ່າງ ຄື
໑. ຫຼິ້ນໃນນ້ຳຕື້ນໃຕ້ຂໍ້ຕີນ ຕ້ອງອາບັດທຸກກົດ
໒. ຫຼິ້ນໃນນ້ຳເລິກພໍຖ້ວມຂໍ້ຕີນ ຕ້ອງອາບັດປາຈິດຕີ

### ໔. ອະນາທະຣິຍະສິກຂາບົດ

ພິກຂຸບໍ່ເອື້ອເຟື້ອ ຕ້ອງອາບັດ ໒ ຢ່າງ ຄື
໑. ກຳລັງບໍ່ເອື້ອເຟື້ອ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອບໍ່ເອື້ອເຟື້ອແລ້ວ ຕ້ອງອາບັດປາຈິດຕີ

### ໕. ພິງສາປະນະສິກຂາບົດ

ພິກຂຸເຮັດໃຫ້ພິກຂຸຕົກໃຈ ຕ້ອງອາບັດ ໒ ຢ່າງ ຄື
໑. ກຳລັງເຮັດໃຫ້ຕົກໃຈ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອເຮັດໃຫ້ຕົກໃຈແລ້ວ ຕ້ອງອາບັດປາຈິດຕີ

### ໖. ໂຊຕິກະສິກຂາບົດ

ພິກຂຸດັງໄຟຜີງ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງດັງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອດັງສຳເລັດແລ້ວ ຕ້ອງອາບັດປາຈິດຕິ

## ໗. ນະຫານະສິກຂາບົດ

ພິກຂຸຍັງບໍ່ເຖິງເຄິ່ງເດືອນອາບນ້ຳ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງອາບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອອາບສຳເລັດ ຕ້ອງອາບັດປາຈິດຕິ

## ໘. ທຸບພັນນະກະຣະນະສິກຂາບົດ

ພິກຂຸບໍ່ໃຊ້ວັດຖຸທີ່ເຮັດໃຫ້ສີເສຍ ໓ ຊະນິດແນວໃດແນວໜຶ່ງມາເຮັດໃຫ້ເສຍສີ ແລ້ວໃຊ້ສອຍຈີວອນໃໝ່ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງໃຊ້ສອຍ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອໃຊ້ສອຍແລ້ວ ຕ້ອງອາບັດປາຈິດຕິ

## ໙. ວິກັບປະນະສິກຂາບົດ

ພິກຂຸວິກັບຈີວອນດ້ວຍຕົນເອງແກ່ພິກຂຸ ຫຼືແກ່ພິກຂຸນີ ຫຼືແກ່ສິກຂະມານາ ຫຼືແກ່ສາມະເນນ ຫຼືແກ່ສາມະເນຣີ ແລ້ວໃຊ້ສອຍຈີວອນທີ່ຍັງບໍ່ໄດ້ປັດຈຸດທອນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງໃຊ້ສອຍ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອໃຊ້ສອຍແລ້ວ ຕ້ອງອາບັດປາຈິດຕິ

## ໑໐. ຈີວະຣະປະນິທານະສິກຂາບົດ

ພິກຂຸເອົາບາດຫຼືຈີວອນ ຜ້າປູນັ່ງ ກ່ອງເຂັມ ຫຼືສາຍແອວຂອງພິກຂຸໄປເຊື່ອງ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງເອົາໄປເຊື່ອງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອເອົາໄປເຊື່ອງແລ້ວ ຕ້ອງອາບັດປາຈິດຕິ

**ສຸຣາເມຣະຍະວັກທີ ໖ ຈົບ**

## ກ. ສັບປານະກະວັກ

### ໑. ສັນຈິດຈະສິກຂາບົດ

[໑໗໑] ຖາມ : ພິກຂຸຈົງໃຈປົງຊີວິດສັດ ຕ້ອງອາບັດທໍ່ໃດ?

ຕອບ : ພິກຂຸຈົງໃຈປົງຊີວິດສັດ ຕ້ອງອາບັດ ໔ ຢ່າງ ຄື

໑. ຂຸດຂຸມເຊື່ອງໄວ້ບໍ່ເຈາະຈົງດ້ວຍຄິດວ່າ "ໃຜກໍໄດ້ຈະຕົກລົງໄປຕາຍ" ຕ້ອງອາບັດທຸກກົດ

໒. ມະນຸດຕົກລົງໄປຕາຍໃນຂຸມນັ້ນ ຕ້ອງອາບັດປາຣາຊິກ

໓. ຍັກ ເຜດ ຫຼືສັດເດຍຣັດສານມີກາຍເປັນມະນຸດ[១] ຕົກລົງໄປຕາຍໃນຂຸມນັ້ນ ຕ້ອງອາບັດຖຸນລັດໄຈ

໔. ສັດເດຍຣັດສານຕົກລົງໄປຕາຍໃນຂຸມນັ້ນ ຕ້ອງອາບັດປາຈິດຕີ

ພິກຂຸຈົງໃຈປົງຊີວິດສັດ ຕ້ອງອາບັດ ໔ ຢ່າງເຫຼົ່ານີ້

### ໒. ສັບປານະກະສິກຂາບົດ

ພິກຂຸຮູ້ຢູ່ວ່ານ້ຳມີສັດມີຊີວິດ ກໍຍັງບໍຣິໂພກ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງບໍຣິໂພກ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອບໍຣິໂພກແລ້ວ ຕ້ອງອາບັດປາຈິດຕີ

### ໓. ອຸກໂກຕະນະສິກຂາບົດ

ພິກຂຸຮູ້ຢູ່ ຮື້ຟື້ນອະທິກອນທີ່ຕັດສິນໄປແລ້ວຢ່າງຖືກຕ້ອງ ເພື່ອພິຈາລະນາໃໝ່ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງຮື້ຟື້ນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອຮື້ຟື້ນສຳເລັດແລ້ວ ຕ້ອງອາບັດປາຈິດຕີ

### ໔. ທຸດຖຸນລະສິກຂາບົດ

ພິກຂຸຮູ້ຢູ່ ປົກປິດອາບັດຊົ່ວຫຍາບຂອງພິກຂຸອື່ນ ຕ້ອງອາບັດ ໑ ຢ່າງ ຄືອາບັດປາຈິດຕີ

### ໕. ອູນະວີສະຕິວັດສະສິກຂາບົດ

ພິກຂຸຮູ້ຢູ່ ອຸປະສົມບົດໃຫ້ບຸກຄົນຜູ້ມີອາຍຸຍ່ອນກວ່າ ໒໐ ປີ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງອຸປະສົມບົດໃຫ້ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອອຸປະສົມບົດສຳເລັດແລ້ວ ຕ້ອງອາບັດປາຈິດຕີ

## ໖. ເຖີຍຍະສັດຖະສິກຂາບົດ

ພິກຂຸຮູ້ຢູ່ ຊັກຊວນກັນເດີນທາງໄກຮ່ວມກັນກັບກຸ່ມພໍ່ຄ້າກວຽນຜູ້ເປັນໂຈນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງເດີນທາງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອເດີນທາງໄປແລ້ວ ຕ້ອງອາບັດປາຈິດຕີ

## ໗. ສັງວິທານະສິກຂາບົດ

ພິກຂຸຊັກຊວນກັນເດີນທາງໄກຮ່ວມກັນກັບມາຕຸຄາມ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງເດີນທາງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອເດີນທາງໄປແລ້ວ ຕ້ອງອາບັດປາຈິດຕີ

## ໘. ອະຣິດຖະສິກຂາບົດ

ພິກຂຸບໍ່ສະລະທິດຖິບາບ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດ ໒ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ຕ້ອງອາບັດປາຈິດຕີ

## ໙. ອຸກຂິດຕະສຳໂພຄະສິກຂາບົດ

ພິກຂຸຮູ້ຢູ່ຍັງຄົບຫາພິກຂຸຜູ້ກ່າວຕູ່ແນວນັ້ນ ຜູ້ທີ່ສົງຍັງບໍ່ໄດ້ເຮັດທຳອັນສົມຄວນ ຜູ້ຍັງບໍ່ຍອມສະລະທິດຖິນັ້ນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງຄົບຫາ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອຄົບຫາແລ້ວ ຕ້ອງອາບັດປາຈິດຕີ

## ໑໐. ກັນຕະກະສິກຂາບົດ

ພິກຂຸຮູ້ຢູ່ ປອບໂຍນສະມະນຸດເທດຜູ້ຖືກສົງນາສະນະແລ້ວແນວນັ້ນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງປອບໂຍນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອປອບໂຍນແລ້ວ ຕ້ອງອາບັດປາຈິດຕີ

**ສັບປານະກະວັກທີ ໗ ຈົບ**

## ໗. ສະຫະທຳມິກະວັກ

### ໑. ສະຫະທຳມິກະສິກຂາບົດ

[໑໗໘] ພິກຂຸຜູ້ອັນພິກຂຸທັງຫຼາຍວ່າກ່າວຕັກເຕືອນຢູ່ໂດຍຖືກຕ້ອງຕາມທຳ ກັບກ່າວວ່າ "ທ່ານທັງຫຼາຍ ຂ້ານ້ອຍຈະຍັງບໍ່ສຶກສາໃນສິກຂາບົດນີ້ ຈົນກວ່າຈະໄດ້ສອບຖາມພິກຂຸອົງອື່ນຜູ້ສະຫຼາດ ຜູ້ເປັນວິໄນທອນ" ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງກ່າວ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອກ່າວແລ້ວ ຕ້ອງອາບັດປາຈິດຕີ

### ໒. ວິເລຂະນະສິກຂາບົດ

ພິກຂຸດູໝິ່ນພຣະວິໄນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງດູໝິ່ນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອດູໝິ່ນແລ້ວ ຕ້ອງອາບັດປາຈິດຕີ

### ໓. ໂມຫະນະສິກຂາບົດ

ພິກຂຸແກ້ງເຮັດຜູ້ອື່ນໃຫ້ຫຼົງ ຕ້ອງອາບັດ ໒ ຢ່າງ ຄື

໑. ເມື່ອສົງຍັງບໍ່ຍົກໂມຫາໂຣປະນະກຳຂຶ້ນປັບ ເຮັດຜູ້ອື່ນໃຫ້ຫຼົງ ຕ້ອງອາບັດທຸກກົດ

໒. ເມື່ອສົງຍົກໂມຫາໂຣປະນະກຳຂຶ້ນປັບແລ້ວ ເຮັດຜູ້ອື່ນໃຫ້ຫຼົງ ຕ້ອງອາບັດປາຈິດຕີ

### ໔. ປະຫາຣະສິກຂາບົດ

ພິກຂຸໂກດ ບໍ່ພໍໃຈ ທຳຮ້າຍພິກຂຸ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງທຳຮ້າຍ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອທຳຮ້າຍແລ້ວ ຕ້ອງອາບັດປາຈິດຕີ

### ໕. ຕະລະສັດຕິກະສິກຂາບົດ

ພິກຂຸໂກດ ບໍ່ພໍໃຈ ເງື້ອທອກຄືຝາມືໃສ່ພິກຂຸ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງເງື້ອ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອເງື້ອແລ້ວ ຕ້ອງອາບັດປາຈິດຕີ

## ໖. ອະມູລະກະສິກຂາບົດ

ພິກຂຸໃສ່ຄວາມພິກຂຸດ້ວຍອາບັດສັງຄາທິເສດທີ່ບໍ່ມີມູນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງໃສ່ຄວາມ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອໃສ່ຄວາມແລ້ວ ຕ້ອງອາບັດປາຈິດຕີ

## ໗. ສັນຈິດຈະສິກຂາບົດ

ພິກຂຸຈົງໃຈກໍ່ຄວາມລຳຄານໃຫ້ແກ່ພິກຂຸ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງກໍ່ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອກໍ່ແລ້ວ ຕ້ອງອາບັດປາຈິດຕີ

## ໘. ອຸປັດສຸຕິສິກຂາບົດ

ພິກຂຸຢືນຈອບຟັງພວກພິກຂຸຜູ້ໃຈໝາງ ຜິດຖຽງ ວິວາດກັນ ຕ້ອງອາບັດ ໒ ຢ່າງ ຄື

໑. ຍ່າງໄປດ້ວຍຕັ້ງໃຈວ່າ “ຈະຟັງ” ຕ້ອງອາບັດທຸກກົດ

໒. ຢືນຢູ່ໃນບ່ອນທີ່ຈະໄດ້ຍິນ ຕ້ອງອາບັດປາຈິດຕີ

## ໙. ກຳມະປະຕິພາຫະນະສິກຂາບົດ

ພິກຂຸໃຫ້ສັນທະເພື່ອກຳທີ່ເຮັດຖືກຕ້ອງແລ້ວກັບຕິຕຽນໃນພາຍຫຼັງຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງຕິຕຽນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອຕິຕຽນແລ້ວ ຕ້ອງອາບັດປາຈິດຕີ

## ໑໐. ສັນທະອະທັດຕະວາຄະມະນະສິກຂາບົດ

ພິກຂຸເມື່ອຍັງມີເລື້ອງທີ່ຕ້ອງວິນິດໄສຢູ່ໃນສົງ ບໍ່ໃຫ້ສັນທະແລ້ວລຸກຈາກອາສະນະຫຼີກໄປ ຕ້ອງອາບັດ ໒ ຢ່າງ ຄື

໑. ເມື່ອກຳລັງຈະລະຫັດຖະບາດທີ່ຊຸມນຸມສົງ ຕ້ອງອາບັດທຸກກົດ

໒. ເມື່ອລະຫັດຖະບາດໄປແລ້ວ ຕ້ອງອາບັດປາຈິດຕີ

## ໑໑. ທັບພະສິກຂາບົດ

ພິກຂຸຮ່ວມກັບສົງຜູ້ພ້ອມພຽງກັນໃຫ້ຈີວອນໄປແລ້ວກັບຕິຕຽນໃນພາຍຫຼັງ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງຕິຕຽນ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອຕິຕຽນແລ້ວ ຕ້ອງອາບັດປາຈິດຕີ

## ໑໒. ປະຣິນາມະນະສິກຂາບົດ

ພິກຂຸຮູ້ຢູ່ ນ້ອມລາບທີ່ເຂົານ້ອມໄວ້ເປັນຂອງຈະຖວາຍສົງໄປເພື່ອບຸກຄົນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງນ້ອມໄປ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອນ້ອມໄປແລ້ວ ຕ້ອງອາບັດປາຈິດຕີ

**ສະຫະທຳມິກະວັກທີ ໘ ຈົບ**

## ໙. ຣາຊະວັກ

## ໑. ອັນເຕປຸຣະສິກຂາບົດ

[໑໗໕] ພິກຂຸບໍ່ໄດ້ຮັບແຈ້ງລ່ວງໜ້າ ເຂົ້າເຂດພຣະຣາດຊະຖານຊັ້ນໃນ ຕ້ອງອາບັດ ໒ ຢ່າງ ຄື

໑. ຍ່າງກ້າວທີ ໑ ລ່ວງທໍຣະນີປະຕູ ຕ້ອງອາບັດທຸກກົດ

໒. ຍ່າງກ້າວທີ ໒ ລ່ວງທໍຣະນີປະຕູ ຕ້ອງອາບັດປາຈິດຕີ

## ໒. ຣະຕະນະສິກຂາບົດ

ພິກຂຸເກັບຮັດຕະນະ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງເກັບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອເກັບແລ້ວ ຕ້ອງອາບັດປາຈິດຕີ

## ໓. ວິກາລະຄາມະປະເວສະນະສິກຂາບົດ

ພິກຂຸບໍ່ບອກລາພິກຂຸທີ່ມີຢູ່ແລ້ວ ເຂົ້າໝູ່ບ້ານໃນເວລາວິການ[១] ຕ້ອງອາບັດ ໒ ຢ່າງ ຄື

໑. ຍົກຕີນທຳອິດກ້າວເຂົ້າເຂດຮົ້ວລ້ອມ ຕ້ອງອາບັດທຸກກົດ

໒. ຍົກຕີນທີ ໒ ກ້າວເລີຍເຂົ້າໄປ ຕ້ອງອາບັດປາຈິດຕີ

## ໔. ສູຈິຄະຣະສິກຂາບົດ

ພິກຂຸເຮັດກ່ອງເຂັມດ້ວຍກະດູກ ດ້ວຍງາ ຫຼືດ້ວຍເຂົາ ຕ້ອງອາບັດ ໒ ຢ່າງ ຄື
໑. ກຳລັງເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອເຮັດສຳເລັດແລ້ວ ຕ້ອງອາບັດປາຈິດຕີ

## ໕. ມັນຈະປີຖະສິກຂາບົດ

ພິກຂຸໃຫ້ເຮັດຕຽງຫຼືຕັ່ງເກີນຂະໜາດ ຕ້ອງອາບັດ ໒ ຢ່າງ ຄື
໑. ກຳລັງເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອເຮັດສຳເລັດແລ້ວ ຕ້ອງອາບັດປາຈິດຕີ

## ໖. ຕູໂລນັດທະສິກຂາບົດ

ພິກຂຸໃຫ້ເຮັດຕຽງຫຼືຕັ່ງຫຸ້ມນຸ່ນ ຕ້ອງອາບັດ ໒ ຢ່າງ ຄື
໑. ກຳລັງເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອເຮັດສຳເລັດແລ້ວ ຕ້ອງອາບັດປາຈິດຕີ

## ໗. ນິສີທະນະສິກຂາບົດ

ພິກຂຸໃຫ້ເຮັດຜ້າຮອງນັ່ງເກີນຂະໜາດ ຕ້ອງອາບັດ ໒ ຢ່າງ ຄື
໑. ກຳລັງເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອເຮັດສຳເລັດແລ້ວ ຕ້ອງອາບັດປາຈິດຕີ

## ໘. ກັນທຸປະຕິດສາທິສິກຂາບົດ

ພິກຂຸໃຫ້ເຮັດຜ້າອັດຝີເກີນຂະໜາດ ຕ້ອງອາບັດ ໒ ຢ່າງ ຄື
໑. ກຳລັງເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອເຮັດສຳເລັດແລ້ວ ຕ້ອງອາບັດປາຈິດຕີ

## ໙. ວັດສິກະສາຕິກາສິກຂາບົດ

ພິກຂຸໃຫ້ເຮັດຜ້າອາບນ້ຳຝົນເກີນຂະໜາດ ຕ້ອງອາບັດ ໒ ຢ່າງ ຄື
໑. ກຳລັງເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ເມື່ອເຮັດສຳເລັດແລ້ວ ຕ້ອງອາບັດປາຈິດຕີ

## ๑໐. ນັນທະສິກຂາບົດ

ຖາມ : ພິກຂຸໃຫ້ເຮັດຈີວອນທີ່ກັບສຸຄົດຈີວອນ ຕ້ອງອາບັດທີ່ໃດ?

ຕອບ : ພິກຂຸໃຫ້ເຮັດຈີວອນທີ່ກັບສຸຄົດຈີວອນ ຕ້ອງອາບັດ ໒ ຢ່າງ ຄື

໑. ກຳລັງເຮັດ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ເມື່ອເຮັດສຳເລັດແລ້ວ ຕ້ອງອາບັດປາຈິດຕີ

ພິກຂຸໃຫ້ເຮັດຈີວອນທີ່ກັບສຸຄົດຈີວອນ ຕ້ອງອາບັດ ໒ ຢ່າງເຫຼົ່ານີ້

**ຣາຊະວັກທີ ໙ ຈົບ**

**ຂຸດທະກະສິກຂາບົດ ຈົບ**

## ໕. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບຈຳນວນອາບັດໃນປະຕິເທສະນີຍະກັນ

## ໑. ປະຖົມປະຕິເທສະນີຍະສິກຂາບົດ

[໑໗໒] ຖາມ : ພິກຂຸຮັບຂອງຫຍ້ຳຫຼືຂອງສັນດ້ວຍມືຕົນຈາກມືຂອງພິກຂຸນີຜູ້ບໍ່ແມ່ນຍາດຜູ້ເຂົ້າໄປໃນບໍລິເວນເຮືອນແລ້ວສັນ ຕ້ອງອາບັດທີ່ໃດ?

ຕອບ : ພິກຂຸຮັບຂອງຫຍ້ຳຫຼືຂອງສັນດ້ວຍມືຕົນຈາກມືຂອງພິກຂຸນີຜູ້ບໍ່ແມ່ນຍາດຜູ້ເຂົ້າໄປໃນບໍລິເວນເຮືອນແລ້ວສັນ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປະຕິເທສະນີຍະ ທຸກ ໆ ຄຳກືນ

ພິກຂຸຮັບຂອງຫຍ້ຳຫຼືຂອງສັນດ້ວຍມືຕົນຈາກມືຂອງພິກຂຸນີຜູ້ບໍ່ແມ່ນຍາດຜູ້ເຂົ້າໄປໃນບໍລິເວນເຮືອນແລ້ວສັນ ຕ້ອງອາບັດ ໒ ຢ່າງເຫຼົ່ານີ້

## ໒. ທຸຕິຍະປະຕິເທສະນີຍະສິກຂາບົດ

ພິກຂຸບໍ່ຫ້າມພິກຂຸນີຜູ້ບົງການ(ທາຍົກ)ຢູ່ ແລ້ວສັນ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປະຕິເທສະນີຍະ ທຸກ ໆ ຄຳກືນ

## ໓. ຕະຕິຍະປະຕິເທສະນີຍະສິກຂາບົດ

ພິກຂຸຮັບຂອງຫຍ້ຳຫຼືຂອງສັນໃນຕະກູນທີ່ໄດ້ຮັບສົມມຸດວ່າເປັນເສຂະດ້ວຍມືຕົນເອງແລ້ວສັນ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປະຕິເທສະນີຍະ ທຸກ ໆ ຄຳກືນ

## ໔. ຈະຕຸດຖະປະຕິເທສະນີຍະສິກຂາບົດ

ຖາມ : ພິກຂຸຜູ້ທີ່ບໍ່ໄດ້ຮັບແຈ້ງໄວ້ກ່ອນຮັບຂອງຫຍ້ຳຫຼືຂອງສັນດ້ວຍມືຕົນເອງໃນອາຮາມໃນເສນາສະນະປ່າແລ້ວສັນ ຕ້ອງອາບັດທີ່ໃດ?

ຕອບ : ພິກຂຸຜູ້ທີ່ບໍ່ໄດ້ຮັບແຈ້ງໄວ້ກ່ອນຮັບຂອງຫຍ້ຳຫຼືຂອງສັນດ້ວຍມືຕົນເອງໃນອາຮາມໃນເສນາສະນະປ່າແລ້ວສັນ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປະຕິເທສະນີຍະ ທຸກ ໆ ຄຳກືນ

ພິກຂຸຜູ້ທີ່ບໍ່ໄດ້ຮັບແຈ້ງໄວ້ກ່ອນຮັບຂອງຫຍ້ຳຫຼືຂອງສັນດ້ວຍມືຕົນເອງໃນອາຮາມໃນເສນາສະນະປ່າແລ້ວສັນ ຕ້ອງອາບັດ ໒ ຢ່າງເຫຼົ່ານີ້

**ປະຕິເທສະນີຍະ ໔ ສິກຂາບົດ ຈົບ**

## ໗. ເສຂິຍະກັນ

ຄຳຖາມ - ຄຳຕອບຈຳນວນອາບັດໃນເສຂິຍະກັນ

## ໑. ປະຣິມັນທະລະວັກ

## ສິກຂາບົດທີ ໑

[໑໗໕] ຖາມ : ພິກຂຸຜູ້ບໍ່ເອື້ອເຟື້ອ ຄອງອັນຕະຣະວາສົກຍ້ອຍທາງໜ້າແດ່ ທາງຫຼັງແດ່ ຕ້ອງອາບັດທີ່ໃດ?

ຕອບ : ພິກຂຸຜູ້ບໍ່ເອື້ອເຟື້ອ ຄອງອັນຕະຣະວາສົກຍ້ອຍທາງໜ້າແດ່ ທາງຫຼັງແດ່ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

ພິກຂຸຜູ້ບໍ່ເອື້ອເຟື້ອ ຄອງອັນຕະຣະວາສົກຍ້ອຍທາງໜ້າແດ່ ທາງຫຼັງແດ່ ຕ້ອງອາບັດ ໑ ຢ່າງນີ້

## ສິກຂາບົດທີ ໒

ພິກຂຸຜູ້ບໍ່ເອື້ອເຟື້ອ ຄອງອຸດຕະຣາສົງຍ້ອຍທາງໜ້າແດ່ ທາງຫຼັງແດ່ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໓

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງເປີດກາຍໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໔

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງເປີດກາຍໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄືອາບັດທຸກກົດ

## ສິກຂາບົດທີ ໕

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຄະນອງມືແດ່ ຄະນອງຕີນແດ່ໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໖

ພິກຂຸຜູ້ບໍ່ເອື້ອເຟື້ອ ຄະນອງມືແດ່ ຄະນອງຕີນແດ່ ນັ່ງໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໗

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງແນມເບິ່ງໃນບ່ອນນັ້ນ ໆ ໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໘

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງແນມເບິ່ງໃນບ່ອນນັ້ນ ໆ ໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໙

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຈ້ອນຜ້າໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໑໐

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຈ້ອນຜ້າໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

**ປະຣິມັນທະລະວັກທີ ໑ ຈົບ**

## ໒. ອຸດຊັກຄິກະວັກ

## ສິກຂາບົດທີ ໑

[໑໗໖] ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຫົວສຽງດັງໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໒

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຫົວສຽງດັງໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໓

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຮ້ອງສຽງດັງໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໔

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຮ້ອງສຽງດັງໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໕

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງໂງກກາຍໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໖

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງໂງກກາຍໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໗

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງແກວ່ງແຂນ ຫ້ອຍແຂນໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໘

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງແກວ່ງແຂນ ຫ້ອຍແຂນໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໙

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງໂງກຫົວໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໑໐

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງໂງກຫົວໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

**ອຸດຊັກຄິກະວັກທີ ໔ ຈົບ**

## ໓. ຂຳພະກະຕະວັກ

## ສິກຂາບົດທີ ໑

[໑໗໗] ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງສ່າຍແອວໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໒

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຄ້ຳແອວໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໓

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຄຸມຫົວໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໔

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຄຸມຫົວໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໕

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງແຍ່ງແຍ້ໄປໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໖

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງກອດເຂົ່າໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໗

ພິກຂຸຜູ້ບໍ່ເອື້ອເຟື້ອ ຮັບບິນທະບາດໂດຍບໍ່ເຄົາລົບ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໘

ພິກຂຸຜູ້ບໍ່ເອື້ອເຟື້ອ ຮັບບິນທະບາດແນມເບິ່ງໃນບ່ອນນັ້ນ ໆ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໙

ພິກຂຸຜູ້ບໍ່ເອື້ອເຟື້ອ ເລືອກຮັບສະເພາະແກງຫຼາຍ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໑໐

ພິກຂຸຜູ້ບໍ່ເອື້ອເຟື້ອ ຮັບບິນທະບາດລົ້ນຂອບປາກບາດ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

**ຂຳພະກະຕະວັກທີ ໓ ຈົບ**

## ໔. ປິນດະປາຕະວັກ

## ສິກຂາບົດທີ ໑

[໑໗໘] ພິກຂຸຜູ້ບໍ່ເອື້ອເຟື້ອ ສັນບິນທະບາດໂດຍບໍ່ເຄົາລົບ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໒

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນບິນທະບາດແນມເບິ່ງບ່ອນນັ້ນ ໆ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໓

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນບິນທະບາດເຈາະລົງໃນບ່ອນນັ້ນ ໆ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໔

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນສະເພາະແກງຫຼາຍ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໕

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນບິນທະບາດທຍຸມລົງແຕ່ຍອດ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໖

ພິກຂຸຜູ້ບໍ່ເອື້ອເຟື້ອ ໃຊ້ເຂົ້າສຸກປົກແກງຫຼືກັບເຂົ້າ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໗

ພິກຂຸຜູ້ບໍ່ເອື້ອເຟື້ອ ບໍ່ເປັນໄຂ້ ອອກປາກຂໍແກງຫຼືເຂົ້າສຸກມາສັນສ່ວນໂຕ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໘

ພິກຂຸຜູ້ບໍ່ເອື້ອເຟື້ອ ມຸ້ງຕຳໜິ ແນມເບິ່ງບາດຂອງພິກຂຸເຫຼົ່າອື່ນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໙

ພິກຂຸຜູ້ບໍ່ເອື້ອເຟື້ອ ເຮັດຄຳເຂົ້າໃຫ້ໃຫຍ່ເກີນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໑໐

ພິກຂຸຜູ້ບໍ່ເອື້ອເຟື້ອ ເຮັດຄຳເຂົ້າຍາວ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

**ປິນດະປາຕະວັກທີ ໔ ຈົບ**

## ໕. ກະພະລະວັກ

## ສິກຂາບົດທີ ໑

[໑໗໙] ພິກຂຸຜູ້ບໍ່ເອື້ອເຟື້ອ ອ້າປາກຖ້າຄຳເຂົ້າທີ່ຍັງບໍ່ເຖິງປາກ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໒

ພິກຂຸຜູ້ບໍ່ເອື້ອເຟື້ອ ຂະນະກຳລັງສັນ ລ້ວງມືທັງໝົດເຂົ້າໄປໃນປາກ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໓

ພິກຂຸຜູ້ບໍ່ເອື້ອເຟື້ອ ໂອ້ລົມຂະນະທີ່ໃນປາກມີຄຳເຂົ້າ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

### ສິກຂາບົດທີ ໔

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນໂຍນຄຳເຂົ້າ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

### ສິກຂາບົດທີ ໕

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນກັດຄຳເຂົ້າ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

### ສິກຂາບົດທີ ໖

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນພັດຕາຫານເຮັດກະພຸ້ງແກ້ມໃຫ້ຕຸ້ຍ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

### ສິກຂາບົດທີ ໗

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນຊິດມື ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

### ສິກຂາບົດທີ ໘

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນໂຮຍເມັດເຂົ້າ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

### ສິກຂາບົດທີ ໙

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນແລບລີ້ນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

### ສິກຂາບົດທີ ໑໐

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນເຮັດສຽງດັງຈັ໊ບ ໆ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

**ກະພະລະວັກທີ ໕ ຈົບ**

## ໖. ສຸຣຸສຸຣຸວັກ

### ສິກຂາບົດທີ ໑

[໑໘໐] ພິກຂຸຜູ້ບໍ່ເອື້ອເຟື້ອສັນເຮັດສຽງດັງຊູ້ດ ໆ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໒

ພິກຂຸຜູ້ບໍ່ເອື້ອເຟື້ອ ສັ່ນເລຍມື ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໓

ພິກຂຸຜູ້ບໍ່ເອື້ອເຟື້ອ ສັ່ນຂອດບາດ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໔

ພິກຂຸຜູ້ບໍ່ເອື້ອເຟື້ອ ສັນເລຍຮີມຝີປາກ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໕

ພິກຂຸຜູ້ບໍ່ເອື້ອເຟື້ອ ຈັບພາຊະນະນ້ຳດື່ມດ້ວຍມືເປື້ອນອາຫານ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໖

ພິກຂຸຜູ້ບໍ່ເອື້ອເຟື້ອ ຖອກນ້ຳລ້າງບາດມີເມັດເຂົ້າໃນບໍລິເວນເຮືອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໗

ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ບຸກຄົນຜູ້ກັ້ງຄັນຮົ່ມ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໘

ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຖືໄມ້ຄ້ອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໙

ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຖືສັດຕາ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໑໐

ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຖືອາວຸດ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສຸຣຸສຸຣຸວັກທີ ໖ ຈົບ

## ກ. ປາທຸກະວັກ

## ສິກຂາບົດທີ ໑

[໑໗໑] ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຜູ້ໃສ່ຊຽງຕີນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໒

ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນໃສ່ເກີບ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໓

ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຢູ່ໃນຍານພາຫະນະ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໔

ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຜູ້ຢູ່ເທິງບ່ອນນອນ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໕

ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນບ່ອນນັ່ງກອດເຂົ່າ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໖

ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຜູ້ໂພກຫົວ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໗

ພິກຂຸຜູ້ບໍ່ເອື້ອເຟື້ອ ສະແດງທຳແກ່ຄົນຜູ້ຄຸມຫົວ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໘

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຢູ່ເທິງພື້ນດິນ ສະແດງທຳແກ່ຄົນຜູ້ນັ່ງເທິງອາສະນະ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໙

ພິກຂຸຜູ້ບໍ່ເອື້ອເຟື້ອ ນັ່ງຢູ່ເທິງອາສະນະຕ່ຳ ສະແດງທຳແກ່ຄົນຜູ້ນັ່ງເທິງອາສະນະສູງ ຕ້ອງ ອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໑໐

ພິກຂຸຜູ້ບໍ່ເອື້ອເຟື້ອ ຢືນສະແດງທຳແກ່ຄົນຜູ້ນັ່ງຢູ່ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໑໑

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຢູ່ທາງຫຼັງ ສະແດງທຳແກ່ຄົນຜູ້ຍ່າງໄປທາງໜ້າ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໑໒

ພິກຂຸຜູ້ບໍ່ເອື້ອເຟື້ອ ຍ່າງຢູ່ນອກທາງ ສະແດງທຳແກ່ຄົນຜູ້ຍ່າງໄປໃນທາງ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໑໓

ພິກຂຸຜູ້ບໍ່ເອື້ອເຟື້ອ ຢືນຖ່າຍອຸດຈາຣະຫຼືປັດສາວະ ຕ້ອງອາບັດ ໑ ຢ່າງ ຄື ອາບັດ ທຸກກົດ

## ສິກຂາບົດທີ ໑໔

ພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງເທິງຂອງຂຽວ ຕ້ອງອາ ບັດ ໑ ຢ່າງ ຄື ອາບັດທຸກກົດ

## ສິກຂາບົດທີ ໑໕

ຖາມ : ພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳ ຕ້ອງອາບັດທໍ່ໃດ?

ຕອບ : ພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

ພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳ ຕ້ອງອາບັດ ໑ ຢ່າງນີ້

**ປາທຸກະວັກທີ ໆ ຈົບ**

**ເສຂິຍະວັດ ໗໕ ສິກຂາບົດ ຈົບ**

**ກະຕາປັດຕິວາຣະທີ ໔ ຈົບ**

# ៦. ວິປັດຕິວາຣະ

## ວາຣະວ່າດ້ວຍເປັນວິບັດ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບວິບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໑

[໑໗໔] ຖາມ : ອາບັດຂອງພິກຂຸຜູ້ເສບເມຖຸນທຳ ບັນດາວິບັດ ໔ ຢ່າງ ຈັດ ເປັນວິບັດທີ່ໃດ?

ຕອບ : ອາບັດຂອງພິກຂຸຜູ້ເສບເມຖຸນທຳ ບັນດາວິບັດ ໔ ຢ່າງ[១] ຈັດເປັນວິບັດ ໒ ຢ່າງ ຄື (໑) ສີລະວິບັດ (໒) ອາຈາຣະວິບັດ

ฯລฯ

### ໗. ເສຂິຍະກັນ

ຄຳຖາມ - ຄຳຕອບວິບັດໃນເສຂິຍະກັນ ฯລฯ

### ໗. ປາທຸກະວັກ

ฯລฯ

### ສິກຂາບົດທີ ໑໕

ຖາມ : ອາບັດຂອງພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ?

ຕອບ : ອາບັດຂອງພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໑ ຢ່າງ ຄື ອາຈາຣະວິບັດ

**ວິປັດຕິວາຣະທີ ៦ ຈົບ**

# ໔. ສັງຄະຫິຕະວາຣະ

## ວາຣະວ່າດ້ວຍຈັດເຂົ້າກອງອາບັດ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບຈັດກອງອາບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໑

[໑໘໓] ຖາມ : ອາບັດຂອງພິກຂຸຜູ້ເສບເມຖຸນທຳ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ?

ຕອບ : ອາບັດຂອງພິກຂຸຜູ້ເສບເມຖຸນທຳ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງ ອາບັດ ໓ ກອງ ຄື (໑) ກອງອາບັດປາຣາຊິກ (໔) ກອງອາບັດຖຸນລັດໄຈ (໓) ກອງອາບັດທຸກກົດ

ຯລຯ

### ໗. ເສຂິຍະກັນ

ຄຳຖາມ - ຄຳຕອບຈັດກອງອາບັດເສຂິຍະກັນ

ຯລຯ

### ໗. ປາທຸກະວັກ

ຯລຯ

### ສິກຂາບົດທີ ໑໕

ຖາມ : ອາບັດຂອງພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ?

ຕອບ : ອາບັດຂອງພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໑ ກອງ ຄື ກອງອາບັດທຸກກົດ

**ສັງຄະຫິຕະວາຣະທີ ໔ ຈົບ**

# ໕. ສະມຸດຖານວາຣະ

## ວາຣະວ່າດ້ວຍສະມຸດຖານ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບສະມຸດຖານອາບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໑

[໑໘໔] ຖາມ : ອາບັດຂອງພິກຂຸຜູ້ເສບເມຖຸນທຳ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ອາບັດຂອງພິກຂຸຜູ້ເສບເມຖຸນທຳ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ຯລຯ

### ກ. ເສຂິຍະກັນ

ຄຳຖາມ - ຄຳຕອບສະມຸດຖານອາບັດໃນເສຂິຍະກັນ

ຯລຯ

### ກ. ປາທຸກະວັກ

ຯລຯ

### ສິກຂາບົດທີ ໑໕

ຖາມ : ອາບັດຂອງພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ອາບັດຂອງພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

**ສະມຸດຖານວາຣະທີ ໕ ຈົບ**

# ຜ. ອະທິກະຣະນະວາຣະ

## ວາຣະວ່າດ້ວຍຈັດເປັນອະທິກອນ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບອະທິກອນໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໑

[໑໗໕] ຖາມ : ອາບັດຂອງພິກຂຸຜູ້ເສບເມຖຸນທຳ ບັນດາອະທິກອນ ໔ ຢ່າງຈັດເປັນອະທິກອນໃດ

ຕອບ : ອາບັດຂອງພິກຂຸຜູ້ເສບເມຖຸນທຳ ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ຯລຯ

### ກ. ເສຂິຍະກັນ

ຄຳຖາມ - ຄຳຕອບອະທິກອນໃນເສຂິຍະກັນ

ຯລຯ

### ຖ. ປາທຸກະວັກ

ຯລຯ

### ສິກຂາບົດທີ ໑໕

ຖາມ : ອາບັດຂອງພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳ ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ

ຕອບ : ອາບັດຂອງພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳ ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

**ອະທິກະຣະນະວາຣະທີ ຜ ຈົບ**

# ກ. ສະມະຖະວາຣະ

## ວາຣະວ່າດ້ວຍການລະງັບດ້ວຍສະມະຖະ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບສະມະຖະໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໑

[໑໗໖] ຖາມ : ອາບັດຂອງພິກຂຸຜູ້ເສບເມຖຸນທຳ ບັນດາສະມະຖະ ກ ຢ່າງລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດຂອງພິກຂຸຜູ້ເສບເມຖຸນທຳ ບັນດາສະມະຖະ ກ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນກັບ ຕິນະວັດຖາຣະກະ

ຯລຯ

### ກ. ເສຂິຍະກັນ

ຄຳຖາມ - ຄຳຕອບສະມະຖະໃນເສຂິຍະກັນ

ຯລຯ

### ກ. ປາຫຸກະວັກ

ຯລຯ

### ສິກຂາບົດທີ ໑໕

ຖາມ : ອາບັດຂອງພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳ ບັນດາສະມະຖະ ກ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດຂອງພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳ ບັນດາສະມະຖະ ກ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນກັບຕິນະວັດຖາຣະກະ

**ສະມະຖະວາຣະທີ ກ ຈົບ**

# ໗. ສະມຸດຈະຍະວາຣະ

## ວາຣະວ່າດ້ວຍການສະຫຼຸບລວມ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບສະຫຼຸບລວມອາບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໑

[໑໗໗] ຖາມ : ພິກຂຸເສບເມຖຸນທຳ ຕ້ອງອາບັດທີ່ໃດ?
ຕອບ : ພິກຂຸເສບເມຖຸນທຳ ຕ້ອງອາບັດ ໓ ຢ່າງ ຄື

໑. ເສບເມຖຸນທຳໃນຊາກສົບທີ່ຍັງບໍ່ຖືກສັດກັດກິນ ຕ້ອງອາບັດປາຣາຊິກ
໒. ເສບເມຖຸນທຳໃນຊາກສົບທີ່ຖືກສັດກັດກິນສ່ວນຫຼາຍ ຕ້ອງອາບັດຖຸນລັດໄຈ
໓. ສອດອົງຄະຊາດເຂົ້າໄປໃນປາກທີ່ອ້າ ແຕ່ບໍ່ໄດ້ຖືກຕ້ອງ ຕ້ອງອາບັດທຸກກົດ

ພິກຂຸເສບເມຖຸນທຳ ຕ້ອງອາບັດ ໓ ຢ່າງນີ້
ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາກອງ ອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ? ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?
ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື

(໑) ສີລະວິບັດ
(໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໓ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດຖຸນລັດໄຈ (໓) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍແລະທາງຈິດ ບໍ່ແມ່ນເກີດທາງວາຈາ
ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ

(໔) ປະຕິນຍາຕະກະຣະນະ

(໓) ສຳມຸຂາວິໄນກັບຕິນະວັດຖາຣະກະ

ຯລຯ

## ໗. ເສຂິຍະກັນ

ຄຳຖາມ - ຄຳຕອບສະຫຼຸບລວມອາບັດໃນເສຂິຍະກັນ

ຯລຯ

## ໗. ປາຫຸກະວັກ

ຯລຯ

## ສິກຂາບົດທີ ໑໕

ຖາມ : ພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳ ຕ້ອງອາບັດທີ່ໃດ?

ຕອບ : ພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

ພິກຂຸຜູ້ບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳ ຕ້ອງອາບັດ ໑ ຢ່າງນີ້

ຖາມ : ອາບັດນັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ? ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດນັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໑ ຢ່າງ ຄື ອາຈາຣະວິບັດ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໑ ກອງ ຄື ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໖ ຢ່າງ ຄື (໑) ສໍາມຸຂາວິໄນ (໔) ປະຕິນຍາຕະກະຣະນະ (໖) ສໍາມຸຂາວິໄນກັບຕິນະວັດຖາຣະກະ

**ສະມຸດຈະຍະວາຣະທີ ໘ ຈົບ**

໘ ວາຣະນີ້ພຣະທໍາສັງຄີຕິກາຈານຂຽນໄວ້ສໍາລັບສູດທໍ່ນັ້ນ

## ລວມວາຣະທໍາອິດທີ່ມີໃນພິກຂຸວິພັງ ໘ ວາຣະ ຄື

໑. ກັດຖະປັນຍັດຕິວາຣະ
໖. ວິປັດຕິວາຣະ
໕. ສະມຸດຖານະວາຣະ
໗. ສະມະຖະວາຣະ
໔. ກະຕາປັນຍັດຕິວາຣະ
໔. ສັງຄະຫິຕະວາຣະ
໖. ອະທິກະຣະນະວາຣະ
໘. ສະມຸດຈະຍະວາຣະ

# ໑. ພັດຖະປັນຍັດຕິວາຣະ

## ວາຣະວ່າດ້ວຍບັນຍັດ ຢູ່ໃສ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບໃນປາຣາຊິກກັນ

[໑໗໗] ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກຍ້ອນການເສບເມຖຸນທຳເປັນປັດໄຈ ຢູ່ໃສ? ຊົງຜາຣົບໃຜ? ຍ້ອນເລື້ອງອັນໃດ? ຯລຯ ໃຜນຳມາ

### ປາຣາຊິກສິກຂາບົດທີ ໑

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກ ຍ້ອນການເສບເມຖຸນທຳເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພຣະສຸທິນກະລັນທະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະສຸທິນກະລັນທະບຸດເສບເມຖຸນທຳກັບອະດີດພັນລະຍາ

ຖາມ : ໃນປາຣາຊິກສິກຂາບົດທີ ໑ ນັ້ນ ມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະບັນຍັດຢູ່ບໍ?

ຕອບ : ໃນປາຣາຊິກສິກຂາບົດທີ ໑ ນັ້ນ ມີ ໑ ພຣະບັນຍັດ ໔ ພຣະອະນຸບັນຍັດ ບໍ່ມີອະນຸປະປັນນະບັນຍັດ

ຖາມ : ມີສັບພັດຖະບັນຍັດ ປະເທສະບັນຍັດຢູ່ບໍ

ຕອບ : ມີສັບພັດຖະບັນຍັດ

ຖາມ : ມີສາທາລະນະບັນຍັດ ອະສາທາລະນະບັນຍັດຢູ່ບໍ?

ຕອບ : ມີສາທາລະນະບັນຍັດ

ຖາມ : ມີເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ຕອບ : ມີອຸພະໂຕບັນຍັດ

ຖາມ : ບັນດາພຣະປາຕິໂມກຂຸດເທດ ໕ ອຸດເທດ ປາຣາຊິກສິກຂາບົດທີ ໑ ນີ້ຈັດເຂົ້າ ໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ?

ຕອບ : ຈັດເຂົ້າໃນນິທານຸດເທດ ນັບເນື່ອງໃນນິທານຸດເທດ

ຖາມ : ມາສູ່ອຸດເທດ ໂດຍອຸດເທດໃດ?

ຕອບ : ມາສູ່ອຸດເທດ ໂດຍອຸດເທດທີ ໔

ຖາມ : ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ຕອບ : ເປັນສີລະວິບັດ

ຖາມ : ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?

ຕອບ : ເປັນກອງອາບັດປາຣາຊິກ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດ ທາງວາຈາ ຯລຯ

ຖາມ : ໃຜນຳມາ

ຕອບ : ພຣະເຖຣະທັງຫຼາຍນຳສືບ ໆ ກັນມາ

## ຣາຍນາມພຣະເຖຣະຜູ້ຊົງຈຳພຣະວິໄນສືບກັນມາ

ພຣະເຖຣະເຫຼົ່ານີ້ ຄື ພຣະອຸບາລີ ພຣະຂ້າທາສະກະ ພຣະໂສນະກະ
ພຣະສິກຄະວະ ແລະພຣະໂມກຄັນລີບຸດ ລວມເປັນ ໕ ອົງ
ເປັນຜູ້ນຳພຣະວິໄນສືບ ໆ ກັນມາໃນຊົມພູທະວີບອັນມີສີຣີ
ຈາກນັ້ນ ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້
ຄື ພຣະມະຫິນທະ ພຣະອິດຕິຍະ ພຣະອຸດຕິຍະ ພຣະສຳພະລະ[9] ຯລຯ
ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຮູ້ພຣະວິໄນ
ສະຫຼາດໃນມັກ ໄດ້ປະກາດພຣະວິໄນປິດົກໄວ້ໃນເກາະຕາມພະປັນນີ

## ປາຣາຊິກສິກຂາບົດທີ ໔

[໑໗໙] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຣາຊິກຍ້ອນການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພຣະທະນິຍະກຸມພະກາຣະບຸດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະທະນິຍະກຸມພະກາຣະບຸດຖືເອົາໄມ້ຫຼວງທີ່ຍັງບໍ່ໄດ້ຮັບພຣະ ຣາດຊະທານ

ໃນປາຣາຊິກສິກຂາບົດທີ ໒ ນັ້ນມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ ฯລฯ

## ປາຣາຊິກສິກຂາບົດທີ ໓

[໑໙໐] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກຍ້ອນຄວາມຈົງໃຈພາກກາຍມະນຸດຈາກຊີວິດເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງຂ້າກັນ ແລະກັນ

ໃນປາຣາຊິກສິກຂາບົດທີ ໓ ນັ້ນມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ ฯລฯ

## ປາຣາຊິກສິກຂາບົດທີ ໔

[໑໙໑] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກຍ້ອນການກ່າວອວດອຸດຕະຣິມະນຸດສະທຳເຊິ່ງບໍ່ມີຢູ່ບໍ່ເປັນຈິງ ເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸຊາວຝັ່ງແມ່ນ້ຳວັກຄຸມຸທາ ກ່າວອວດອຸດຕະຣິມະນຸດສະທຳ ຂອງກັນແລະກັນແກ່ພວກຄະລືຫັດ

ໃນປາຣາຊິກສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໔) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ ຯລຯ

**ປາຣາຊິກ ໔ ສິກຂາບົດ ຈົບ**

## ໔. ສັງຄາທິເສສະກັນຖາທີ

ຄຳຖາມ - ຄຳຕອບໃນສັງຄາທິເສສະກັນ ເປັນຕົ້ນ

[໑໗໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດຍ້ອນການພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນເປັນປັດໄຈ ຢູ່ໃສ? ຊົງຜາຣົບໃຜ? ຍ້ອນເລື້ອງອັນໃດ? ຯລຯ ໃຜນຳມາ

## ໑. ສຸກກະວິສັດຖິສິກຂາບົດ

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນການພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະເສີຍຍະສະກະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະເສີຍຍະສະກະພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນ

ຖາມ : ໃນສຸກກະວິສັດຖິສິກຂາບົດນັ້ນ ມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະ-ບັນຍັດຢູ່ບໍ?

ຕອບ : ໃນສຸກກະວິສັດຖິສິກຂາບົດນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບໍ່ມີອະນຸປະປັນນະບັນຍັດ

ຖາມ : ມີສັບພັດຖະບັນຍັດ ປະເທສະບັນຍັດຢູ່ບໍ

ຕອບ : ມີສັບພັດຖະບັນຍັດ

ຖາມ : ມີສາຫາລະນະບັນຍັດ ອະສາຫາລະນະບັນຍັດຢູ່ບໍ?

ຕອບ : ມີອະສາຫາລະນະບັນຍັດ

ຖາມ : ມີເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ຕອບ : ມີເອກະໂຕບັນຍັດ

ຖາມ : ບັນດາພຣະປາຕິໂມກຂຸດເທດ ໕ ອຸດເທດ ສຸກກະວິສັດຖິສິກຂາບົດນີ້ຈັດເຂົ້າໃນ ອຸດເທດໃດ? ນັບເນື່ອງໃນອຸດເທດໃດ?

ຕອບ : ຈັດເຂົ້າໃນນິທານຸດເທດ ນັບເນື່ອງໃນນິທານຸດເທດ

ຖາມ : ມາສູ່ອຸດເທດ ໂດຍອຸດເທດໃດ?

ຕອບ : ມາສູ່ອຸດເທດ ໂດຍອຸດເທດທີ ໑

ຖາມ : ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ຕອບ : ເປັນສີລະວິບັດ

ຖາມ : ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?

ຕອບ : ເປັນກອງອາບັດສັງຄາທິເສດ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດ ທາງວາຈາ

ຖາມ : ໃຜນຳມາ

ຕອບ : ພຣະເຖຣະທັງຫຼາຍນຳສືບ ໆ ກັນມາ

## ຣາຍນາມພຣະເຖຣະຜູ້ຊົງຈຳພຣະວິໄນສືບກັນມາ

ພຣະເຖຣະເຫຼົ່ານີ້ ຄື ພຣະອຸບາລີ ພຣະຂ້າທາສະກະ ພຣະໂສນະກະ
ພຣະສິກຄະວະ ແລະພຣະໂມກຄັນລີບຸດ ລວມເປັນ ໕ ອົງ
ເປັນຜູ້ນຳພຣະວິໄນສືບ ໆ ກັນມາໃນຊົມພູທະວີບອັນມີສີຣີ

ຈາກນັ້ນ ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຄື
ພຣະມະຫິນທະ ພຣະອິດຕິຍະ ພຣະອຸດຕິຍະ ພຣະສຳພະລະ ๆລๆ

ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຣູ້ພຣະວິໄນ
ສະຫຼາດໃນມັກ ໄດ້ປະກາດພຣະວິໄນປິດົກໄວ້ໃນເກາະຕາມພະປັນນີ

## ໘. ກາຍະສັງສັກຄະສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດຍ້ອນການຖືກຕ້ອງກາຍກັບມາຕຸຄາມເປັນປັດໄຈຢູ່ໃສ

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີຖືກຕ້ອງກາຍກັບມາຕຸຄາມ

ໃນກາຍະສັງສັກຄະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

## ໓. ທຸດຖຸນລະວາຈາສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດຍ້ອນການເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບ

ໃນທຸດຖຸນລະວາຈາສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ

## ໔. ອັດຕະກາມະປາຣິຈະຣິຍະສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດຍ້ອນການກ່າວສັນເສີນການບົນເປີຄວາມຕ້ອງການຂອງຕົນ ຕໍ່ໜ້າມາຕຸຄາມເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີກ່າວສັນເສີນການປົນເປີຄວາມຕ້ອງການຂອງຕົນຕໍ່ໜ້າມາຕຸຄາມ

ໃນອັດຕະການະປາຣິຈະຣິຍະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໕. ສັນຈະຣິດຕະສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດຍ້ອນການເຮັດໜ້າທີ່ຊັກສື່ເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະອຸທາຍີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະອຸທາຍີເຮັດໜ້າທີ່ຊັກສື່

ໃນສັນຈະຣິດຕະສິກຂາບົດນັ້ນມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍ ໖ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ (໓) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໔) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໕) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໖) ເກີດທາງກາຍວາຈາກັບຈິດ

## ໖. ກຸຕິກາຣະສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດຍ້ອນການສ້າງກຸດຕິດ້ວຍເຄື່ອງອຸປະກອນທີ່ຂໍມາເອງເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ເມືອງອາລະວີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸຊາວເມືອງອາລະວີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸຊາວເມືອງອາລະວີສ້າງກຸດຕິດ້ວຍເຄື່ອງອຸປະກອນທີ່ຂໍມາເອງ

ໃນກຸຕິກາຣະສິກຂາບົດມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ໗. ວິຫາຣະກາຣະສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດ ຍ້ອນການສ້າງວິຫານໃຫຍ່ເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນໂກສຳພີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບທ່ານພຣະສັນນະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະສັນນະແຜ້ວຖາງພື້ນທີ່ສ້າງວິຫານ ໄດ້ສັ່ງໃຫ້ຕັດໄມ້ຣຸກ ຂະເຈດີຕົ້ນໜຶ່ງ

ໃນວິຫາຣະກາຣະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ໘. ປະຖະມະທຸດຖະໂທສະສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດຍ້ອນການໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກບໍ່ມີມູນ ເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພຣະເມດຕິຍະແລະພຣະພຸມມະຊະກະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະເມດຕິຍະແລະພຣະພຸມມະຊະກະໃສ່ຄວາມທ່ານພຣະທັບພະ ມັນລະບຸດ ດ້ວຍອາບັດປາຣາຊິກບໍ່ມີມູນ

ໃນປະຖະມະທຸດຖະໂທສະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ໙. ທຸຕິຍະທຸດຖະໂທສະສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດຍ້ອນການອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນ ເປັນເລດໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພຣະເມດຕິຍະແລະພຣະພຸມມະຊະກະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະເມດຕິຍະແລະພຣະພຸມມະຊະກະອ້າງເອົາບາງສ່ວນແຫ່ງອະທິກອນ ເລື້ອງອື່ນເປັນເລດໃສ່ຄວາມທ່ານພຣະທັບພະມັນລະບຸດດ້ວຍອາບັດປາຣາຊິກ

ໃນທຸຕິຍະທຸດຖະໂທສະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ໑໐. ສັງຄະເພທະສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດຍ້ອນການບໍ່ສະລະກຳ ຈົນວ່າສົງສູດສະມະນຸພາດຈົນຄົບ ໓ ຄັ້ງເປັນປັດໄຈແກ່ພິກຂຸຜູ້ທຳລາຍສົງໃຫ້ແຕກກັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພຣະເທວະທັດ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພຣະເທວະທັດພະຍາຍາມເພື່ອທຳລາຍສົງຜູ້ພ້ອມພຽງກັນ

ໃນສັງຄະເພທະສິກຂາບົດນັ້ນ ມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

## ໑໑. ສັງຄະເພທານຸວັດຕະກະສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດຍ້ອນການບໍ່ສະລະກຳຈົນວ່າສົງສູດສະມະນຸພາດຈົນຄົບ ໓ ຄັ້ງເປັນປັດໄຈແກ່ພິກຂຸທີ່ປະພຶດຕາມສະໜັບສະໜູນແກ່ພິກຂຸຜູ້ພະຍາຍາມທຳລາຍສົງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸຫຼາຍອົງປະພຶດຕາມສະໜັບສະໜູນພຣະເທວະທັດຜູ້ພະຍາຍາມ ທຳລາຍສົງ

ໃນສັງຄະເພທານຸວັດຕະກະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

## ໑໘. ທຸບພະຈະສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດຍ້ອນການບໍ່ສະລະກຳຈົນວ່າສິງສູດ

ສະມະນຸພາດຈົບຄົບ ໓ ຄັ້ງເປັນປັດໄຈແກ່ພິກຂຸຜູ້ວ່າຍາກ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນໂກສຳພີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບທ່ານພຣະສັນນະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ທ່ານພຣະສັນນະຖືກພິກຂຸທັງຫຼາຍວ່າກ່າວຕັກເຕືອນໂດຍຖືກຕ້ອງ ຕາມທຳ ກັບເຮັດຕົນໃຫ້ເປັນທີ່ວ່າກ່າວຕັກເຕືອນບໍ່ໄດ້

ໃນທຸບພະຈະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ৵ລ৵

## ໑໓. ກຸລະທູສະກະສິກຂາບົດ

ຖາມ : ຊົງບັນຍັດສັງຄາທິເສດຍ້ອນການບໍ່ສະລະກຳຈົນວ່າສິງສູດ

ສະມະນຸພາດຈົບຄົບ ໓ ຄັ້ງເປັນປັດໄຈແກ່ພິກຂຸຜູ້ປະທຸດສະຮ້າຍຕະກູນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸພວກພຣະອັດສະຊິແລະພຣະປຸນັບພະສຸກະ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸພວກພຣະອັດສະຊິແລະພຣະປຸນັບພະສຸກະຖືກສົງລົງປັບພາ ຊະນີຍະ ກຳແລ້ວກັບກ່າວຫາວ່າພວກພິກຂຸລຳອຽງຍ້ອນຮັກ ລຳອຽງຍ້ອນຊັງ ລຳອຽງຍ້ອນຫຼົງ ລຳອຽງຍ້ອນຢ້ານ

ໃນກຸລະທູສະກະສິກຂາບົດນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ৵ລ৵

## ຖ. ເສຂິຍະກັນ

ຄຳຖາມ - ຄຳຕອບໃນເສຂິຍະກັນ

৵ລ৵

## ຖ. ປາທຸກະວັກ

໗ລ໗

## ສິກຂາບົດທີ ໑໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດທຸກກົດຍ້ອນພິກຂຸບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງ ໃນນ້ຳເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸສັບພັກຄີ ຖ່າຍອຸດຈາຣະແດ່ ປັດສາວະແດ່ ບ້ວນນ້ຳລາຍແດ່ລົງໃນນ້ຳ

ໃນສິກຂາບົດທີ ໑໕ ນັ້ນ ມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໒ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

**ກັດຖະປັນຍັດຕິວາຣະທີ ໑ ຈົບ**

# ໔. ກະຕາປັດຕິວາຣະ

# ວາຣະວ່າດ້ວຍຕ້ອງອາບັດທໍ່ໃດ?

## ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບຈຳນວນອາບັດໃນປາຣາຊິກກັນ

## ປາຣາຊິກສິກຂາບົດທີ ໑

[໑໙໓] ຖາມ : ຍ້ອນການເສບເມຖຸນທຳເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນການເສບເມຖຸນທຳເປັນປັດໄຈ ຕ້ອງອາບັດ ໔ ຢ່າງ ຄື

໑. ພິກຂຸເສບເມຖຸນທຳໃນຊາກສົບທີ່ຍັງບໍ່ໄດ້ຖືກສັດກັດກິນ ຕ້ອງອາບັດປາຣາຊິກ

໒. ພິກຂຸເສບເມຖຸນທຳໃນຊາກສົບທີ່ຖືກສັດກັດກິນສ່ວນຫຼາຍ ຕ້ອງອາບັດຖຸນລັດໄຈ

໓. ພິກຂຸສອດອົງຄະຊາດເຂົ້າໃນປາກທີ່ອ້າແຕ່ບໍ່ໄດ້ຖືກຕ້ອງ ຕ້ອງອາບັດທຸກກົດ

໔. ພິກຂຸມີຕ້ອງອາບັດປາຈິດຕີ ຍ້ອນໃຊ້ທ່ອນຢາງ

ຍ້ອນການເສບເມຖຸນທຳເປັນປັດໄຈ ຕ້ອງອາບັດ ໔ ຢ່າງເຫຼົ່ານີ້

## ປາຣາຊິກສິກຂາບົດທີ ໒

ຖາມ : ຍ້ອນການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ເປັນປັດໄຈ ຕ້ອງອາບັດ ໓ ຢ່າງ ຄື

໑. ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍສ່ວນແຫ່ງຈິດຄິດຈະລັກ ມີລາຄາ ໕ ມາສົກ ຫຼືເກີນກວ່າ ໕ ມາສົກ ຕ້ອງອາບັດປາຣາຊິກ

໒. ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍສ່ວນແຫ່ງຈິດຄິດຈະລັກ ມີລາຄາເກີນ ກວ່າ ໑ ມາສົກ ຫຼືໜ້ອຍກວ່າ ໕ ມາສົກ ຕ້ອງອາບັດຖຸນລັດໄຈ

໓. ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ ໂດຍສ່ວນແຫ່ງຈິດຄິດຈະລັກ ມີລາຄາ ໑ ມາສົກ ຫຼື ໜ້ອຍກວ່າ ໑ ມາສົກ ຕ້ອງອາບັດທຸກກົດ

ຍ້ອນການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ເປັນປັດໄຈ ຕ້ອງອາບັດ ໓ ຢ່າງເຫຼົ່ານີ້

## ປາຣາຊິກສິກຂາບົດທີ ໓

ຖາມ : ຍ້ອນຄວາມຈົງໃຈພາກກາຍມະນຸດຈາກຊີວິດເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນຄວາມຈົງໃຈພາກກາຍມະນຸດຈາກຊີວິດເປັນປັດໄຈຕ້ອງອາບັດ ໓ ຢ່າງ ຄື

໑. ຂຸດຂຸມເຊື່ອງໄວ້ເຈາະຈົງມະນຸດວ່າ "ບຸກຄົນຊື່ນີ້ຈະຕົກລົງໄປຕາຍ" ຕ້ອງອາບັດທຸກກົດ

໒. ເມື່ອບຸກຄົນຊື່ນັ້ນຕົກໄປໄດ້ຮັບທຸກຂະເວທະນາ ຕ້ອງອາບັດຖຸນລັດໄຈ

໓. ເຂົາຕາຍ ຕ້ອງອາບັດປາຣາຊິກ

ຍ້ອນຄວາມຈົງໃຈພາກກາຍມະນຸດຈາກຊີວິດເປັນປັດໄຈ ຕ້ອງອາບັດ ໓ ຢ່າງເຫຼົ່ານີ້

## ປາຣາຊິກສິກຂາບົດທີ ໔

ຖາມ : ຍ້ອນການກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ ບໍ່ເປັນຈິງເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນການກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ ບໍ່ເປັນຈິງເປັນປັດໄຈ ຕ້ອງອາບັດ ໓ ຢ່າງ ຄື

໑. ພິກຂຸມີຄວາມປາຖະໜາຊົ່ວ ຖືກຄວາມຢາກຄອບງຳ ກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ ບໍ່ເປັນຈິງ ຕ້ອງອາບັດປາຣາຊິກ

໒. ພິກຂຸກ່າວວ່າ "ພິກຂຸອົງໃດຢູ່ໃນວິຫານຂອງທ່ານ ພິກຂຸອົງນັ້ນເປັນພຣະອະຣະຫັນ" ເມື່ອຜູ້ອື່ນເຂົ້າໃຈ ຕ້ອງອາບັດຖຸນລັດໄຈ

໓. ເມື່ອເຂົາບໍ່ເຂົ້າໃຈ ຕ້ອງອາບັດທຸກກົດ

ຍ້ອນການກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ບໍ່ເປັນຈິງເປັນປັດໄຈ ຕ້ອງອາບັດ ໓ ຢ່າງເຫຼົ່ານີ້

**ປາຣາຊິກ ໔ ສິກຂາບົດ ຈົບ**

## ໒. ສັງຄາທິເສສະກັນຖາທິ

ຄຳຖາມ - ຄຳຕອບຈຳນວນອາບັດໃນສັງຄາທິເສສະກັນເປັນຕົ້ນ

## ໑. ສຸກກະວິສັດຖິສິກຂາບົດ

[໑໙໔] ຖາມ : ຍ້ອນການພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນເປັນປັດໄຈ ພິກຂຸຕ້ອງ ອາບັດທໍ່ໃດ?

ຕອບ : ຍ້ອນການພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນເປັນປັດໄຈ ພິກຂຸຕ້ອງອາບັດ ໓ ຢ່າງ ຄື

໑. ຈົງໃຈ ພະຍາຍາມ ນ້ຳອະສຸຈິເຄື່ອນ ຕ້ອງອາບັດສັງຄາທິເສດ

໒. ຈົງໃຈ ພະຍາຍາມ ນ້ຳອະສຸຈິບໍ່ເຄື່ອນ ຕ້ອງອາບັດຖຸນລັດໄຈ

໓. ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

ຍ້ອນການພະຍາຍາມເຮັດນ້ຳອະສຸຈິໃຫ້ເຄື່ອນເປັນປັດໄຈພິກຂຸຕ້ອງອາບັດ ໓ ຢ່າງເຫຼົ່ານີ້

## ໒. ກາຍະສັງສັກຄະສິກຂາບົດ

ຖາມ : ຍ້ອນການຖືກຕ້ອງກາຍເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນການຖືກຕ້ອງກາຍເປັນປັດໄຈ ຕ້ອງອາບັດ ໕ ຢ່າງ ຄື

໑. ພິກຂຸນີມີຄວາມກຳໜັດ ຍິນດີການຈັບຕ້ອງກາຍຂອງຊາຍຜູ້ກຳໜັດບໍລິເວນໃຕ້ບ່າລົງມາເໜືອຫົວເຂົ່າຂຶ້ນໄປ ຕ້ອງອາບັດປາຣາຊິກ

໒. ພິກຂຸໃຊ້ກາຍຈັບຕ້ອງກາຍ ຕ້ອງອາບັດສັງຄາທິເສດ

໓. ໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດຖຸນລັດໄຈ

໔. ໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

໕. ຕ້ອງອາບັດປາຈິດຕີ ຍ້ອນຈີ້ດ້ວຍນິ້ວມື

ຍ້ອນການຖືກຕ້ອງກາຍເປັນປັດໄຈ ຕ້ອງອາບັດ ໕ ຢ່າງເຫຼົ່ານີ້

## ໓. ທຸດຖຸນລະວາຈາສິກຂາບົດ

ຍ້ອນການເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບເປັນປັດໄຈພິກຂຸຕ້ອງອາບັດ ໓ ຢ່າງ ຄື

໑. ເວົ້າຊົມແດ່ ເວົ້າຕິແດ່ ພາດພິງເຖິງທະວານໜັກ ທະວານເບົາ ຕ້ອງອາບັດສັງຄາທິເສດ

໒. ເວົ້າຊົມແດ່ ເວົ້າຕິແດ່ ພາດພິງເຖິງບໍລິເວນໃຕ້ບ່າລົງມາ ເໜືອເຂົ່າຂຶ້ນໄປ ເວັ້ນທະວານໜັກ ທະວານເບົາ ຕ້ອງອາບັດຖຸນລັດໄຈ

໓. ເວົ້າຊົມແດ່ ເວົ້າຕິແດ່ ພາດພິງເຖິງຂອງເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

## ໔. ອັດຕະກາມະປາຣິຈະຣິຍະສິກຂາບົດ

ຍ້ອນການກ່າວສັນເສີນການບົນເປີຄວາມຕ້ອງການຂອງຕົນເປັນປັດໄຈ ພິກຂຸຕ້ອງອາບັດ ໓ ຢ່າງ ຄື

໑. ກ່າວສັນເສີນການບົນເປີຄວາມຕ້ອງການຂອງຕົນຕໍ່ໜ້າມາຕຸຄາມ ຕ້ອງອາບັດສັງຄາທິເສດ

໒. ກ່າວສັນເສີນການບົນເປີຄວາມຕ້ອງການຂອງຕົນຕໍ່ໜ້າບັນເດາະ ຕ້ອງອາບັດຖຸນລັດໄຈ

໓. ກ່າວສັນເສີນການບົນເປີຄວາມຕ້ອງການຂອງຕົນຕໍ່ໜ້າສັດເດຍຣັດສານ ຕ້ອງອາບັດທຸກກົດ

## ໕. ສັນຈະຣິດຕະສິກຂາບົດ

ຍ້ອນການເຮັດໜ້າທີ່ຊັກສື່ເປັນປັດໄຈ ພິກຂຸຕ້ອງອາບັດ ໓ ຢ່າງ ຄື
໑. ຮັບຄຳ ໄປບອກ ກັບມາບອກ ຕ້ອງອາບັດສັງຄາທິເສດ
໒. ຮັບຄຳ ໄປບອກ ບໍ່ກັບມາບອກ ຕ້ອງອາບັດຖຸນລັດໄຈ
໓. ຮັບຄຳ ບໍ່ໄປບອກ ບໍ່ກັບມາບອກ ຕ້ອງອາບັດທຸກກົດ

## ໖. ກຸຕິການະສິກຂາບົດ

ຍ້ອນການສ້າງກຸດຕິດ້ວຍການຂໍເອົາເອງເປັນປັດໄຈ ພິກຂຸຕ້ອງອາບັດ ໓ ຢ່າງ ຄື
໑. ກຳລັງໃຊ້ໃຫ້ສ້າງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ຍັງເຫຼືອດິນຈີ່ອີກກ້ອນໜຶ່ງຈະສຳເລັດ ຕ້ອງອາບັດຖຸນລັດໄຈ
໓. ດິນຈີ່ກ້ອນສຸດທ້າຍສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ

## ໗. ວິຫາຣະການະສິກຂາບົດ

ຍ້ອນການສ້າງວິຫານໃຫຍ່ເປັນປັດໄຈ ພິກຂຸຕ້ອງອາບັດ ໓ ຢ່າງ ຄື
໑. ກຳລັງໃຊ້ໃຫ້ສ້າງ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໒. ຍັງເຫຼືອດິນຈີ່ອີກກ້ອນໜຶ່ງຈຶ່ງຈະສຳເລັດ ຕ້ອງອາບັດຖຸນລັດໄຈ
໓. ດິນຈີ່ກ້ອນສຸດທ້າຍສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ

## ໘. ປະຖະມະທຸດຖະໂທສະສິກຂາບົດ

ຍ້ອນການໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກທີ່ບໍ່ມີມູນເປັນປັດໄຈ ພິກຂຸຕ້ອງອາບັດ ໓ ຢ່າງ ຄື
໑. ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນ ຈຶ່ງໂຈດ ຕ້ອງອາບັດທຸກກົດກັບສັງຄາທິເສດ
໒. ຂໍໂອກາດກ່ອນ ມີຄວາມປະສົງຈະດ່າ ຈຶ່ງໂຈດ ຕ້ອງອາບັດ ຍ້ອນກ່າວສຽດສີ

## ໙. ທຸຕິຍະທຸດຖະໂທສະສິກຂາບົດ

ຍ້ອນການອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນເປັນເລດໃສ່ຄວາມພິກຂຸດ້ວຍປາຣາຊິກ ເປັນປັດໄຈ ພິກຂຸຕ້ອງອາບັດ ໓ ຢ່າງ ຄື

໑. ບໍ່ຂໍໂອກາດກ່ອນ ມີຄວາມປະສົງຈະໃຫ້ພົ້ນຈາກພົມມະຈັນ ຈຶ່ງໂຈດ ຕ້ອງອາບັດທຸກກົດກັບສັງຄາທິເສດ

໒. ຂໍໂອກາດກ່ອນ ມີຄວາມປະສົງຈະດ່າ ຈຶ່ງໂຈດ ຕ້ອງອາບັດ ຍ້ອນກ່າວສຽດສີ

## ໑໐. ສັງຄະເພທະສິກຂາບົດ

ຍ້ອນການບໍ່ສະລະ(ເລື້ອງນັ້ນ)ຈົບວ່າສົງສູດສະມະນຸພາດຄົບ ໓ ຄັ້ງເປັນປັດໄຈ ພິກຂຸຜູ້ເຮັດສົງໃຫ້ແຕກກັນ ຕ້ອງອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ

໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

## ໑໑. ສັງຄະເພທານຸວັດຕະກະສິກຂາບົດ

ຍ້ອນການບໍ່ສະລະ(ເລື້ອງນັ້ນ)ຈົບວ່າສົງສູດສະມະນຸພາດຄົບ ໓ ຄັ້ງເປັນປັດໄຈ ພິກຂຸທີ່ປະພຶດຕາມສະໜັບສະໜູນພິກຂຸຜູ້ທຳລາຍສົງ ຕ້ອງອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ

໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

## ໑໒. ທຸບພະຈະສິກຂາບົດ

ຍ້ອນການບໍ່ສະລະ(ເລື້ອງນັ້ນ)ຈົບວ່າສົງສູດສະມະນຸພາດຄົບ ໓ ຄັ້ງເປັນປັດໄຈ ພິກຂຸຜູ້ວ່າຍາກ ຕ້ອງອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ

໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

## ໑໓. ກຸລະທູສະກະສິກຂາບົດ

ຍ້ອນການບໍ່ສະລະ(ເລື້ອງນັ້ນ)ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງເປັນປັດໄຈ ພິກຂຸຜູ້ປະທຸດສະຮ້າຍຕະກູນ ຕ້ອງອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ

໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

**ສັງຄາທິເສດ ໑໓ ສິກຂາບົດ ຈົບ**

## ກ. ເສຂິຍະກັນ

ຄຳຖາມ - ຄຳຕອບຈຳນວນອາບັດໃນເສຂິຍະກັນ

ຯລຯ

## ກ. ປາທຸກະວັກ

ຯລຯ

## ສິກຂາບົດທີ ໑໕

ຖາມ : ຍ້ອນການຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳເປັນປັດໄຈ ພິກຂຸຜູ້ບໍ່ເອື້ອເຟື້ອ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນການຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳເປັນປັດໄຈ ພິກຂຸຜູ້ບໍ່ເອື້ອເຟື້ອ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

ຍ້ອນການຖ່າຍອຸດຈາຣະ ປັດສາວະຫຼືບ້ວນນ້ຳລາຍລົງໃນນ້ຳເປັນປັດໄຈ ພິກຂຸຜູ້ບໍ່ເອື້ອເຟື້ອ ຕ້ອງອາບັດ ໑ ຢ່າງນີ້

**ກະຕາປັດຕິວາຣະທີ ໒ ຈົບ**

# ៦. ວິປັດຕິວາຣະ

## ວາຣະວ່າດ້ວຍເປັນວິບັດ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບວິບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໑

[໑໙໕] ຖາມ : ອາບັດຍ້ອນການເສບເມຖຸນທຳເປັນປັດໄຈ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ?

ຕອບ : ອາບັດຍ້ອນການເສບເມຖຸນທຳເປັນປັດໄຈ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື (໑) ສີລະວິບັດ (໒) ອາຈາຣະວິບັດ

ฯລฯ

### ໗. ເສຂິຍະກັນ

ຄຳຖາມ - ຄຳຕອບວິບັດໃນເສຂິຍະກັນ

ฯລฯ

### ໗. ປາທຸກະວັກ

ฯລฯ

### ສິກຂາບົດທີ ໑໕

ຖາມ : ອາບັດຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳເປັນປັດໄຈ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ?

ຕອບ : ອາບັດຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳເປັນປັດໄຈ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໑ ຢ່າງ ຄື ອາຈາຣະວິບັດ

**ວິປັດຕິວາຣະທີ ៦ ຈົບ**

# ໔. ສັງຄະຫິຕະວາຣະ

## ວາຣະວ່າດ້ວຍຈັດເຂົ້າກອງອາບັດ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບຈັດກອງອາບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໑

[໑໙໖] ຖາມ : ອາບັດຍ້ອນການເສບເມຖຸນທຳເປັນປັດໄຈ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ?

ຕອບ : ອາບັດຍ້ອນການເສບເມຖຸນທຳເປັນປັດໄຈ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໔ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດຖຸນລັດໄຈ (໓) ກອງອາບັດປາຈິດຕີ (໔) ກອງອາບັດທຸກກົດ

ຯລຯ

### ໗. ເສຂິຍະກັນ

ຄຳຖາມ - ຄຳຕອບຈັດກອງອາບັດໃນເສຂິຍະກັນ

ຯລຯ

### ໗. ປາທຸກະວັກ

ຯລຯ

### ສິກຂາບົດທີ ໑໕

ຖາມ : ອາບັດຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳເປັນປັດໄຈ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ?

ຕອບ : ອາບັດຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳເປັນປັດໄຈ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໑ ກອງ ຄື ກອງອາບັດທຸກກົດ

**ສັງຄະຫິຕະວາຣະທີ ໔ ຈົບ**

# ໕. ສະມຸດຖານະວາຣະ

## ວາຣະວ່າດ້ວຍສະມຸດຖານ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບສະມຸດຖານອາບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໑

[໑໙໗] ຖາມ : ອາບັດຍ້ອນການເສບເມຖຸນທຳເປັນປັດໄຈ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ອາບັດຍ້ອນການເສບເມຖຸນທຳເປັນປັດໄຈ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ฯລฯ

### ໗. ເສຂິຍະກັນ

ຄຳຖາມ - ຄຳຕອບສະມຸດຖານອາບັດໃນເສຂິຍະກັນ

ฯລฯ

### ໗. ປາທຸກາະວັກ

ฯລฯ

### ສິກຂາບົດທີ ໑໕

ຖາມ : ອາບັດຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳເປັນປັດໄຈ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ອາບັດຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳເປັນປັດໄຈ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ຯລຯ

**ສະມຸດຖານະວາຣະທີ ໕ ຈົບ**

# ໖. ອະທິກະຣະນະວາຣະ

# ວາຣະວ່າດ້ວຍຈັດເປັນອະທິກອນ

## ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບອະທິກອນໃນປາຣາຊິກກັນ

## ປາຣາຊິກສິກຂາບົດທີ ໑

[໑໙໗] ຖາມ : ອາບັດຍ້ອນການເສບເມຖຸນທຳເປັນປັດໄຈ ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ

ຕອບ : ອາບັດຍ້ອນການເສບເມຖຸນທຳເປັນປັດໄຈ ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ຯລຯ

## ໗. ເສຂິຍະກັນ

ຄຳຖາມ - ຄຳຕອບອະທິກອນໃນເສຂິຍະກັນ

ຯລຯ

## ໗. ປາທຸກະວັກ

ຯລຯ

## ສິກຂາບົດທີ ໑໕

ຖາມ : ອາບັດຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳເປັນປັດໄຈ ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ

ຕອບ : ອາບັດຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳເປັນປັດໄຈ ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

**ອະທິກະຣະນະວາຣະທີ ໖ ຈົບ**

# ໗. ສະມະຖະວາຣະ

# ວາຣະວ່າດ້ວຍລະງັບດ້ວຍສະມະຖະ

## ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບສະມະຖະໃນປາຣາຊິກກັນ

## ປາຣາຊິກສິກຂາບົດທີ ໑

[໑໘໙] ຖາມ : ອາບັດຍ້ອນການເສບເມຖຸນທຳເປັນປັດໄຈ ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດຍ້ອນການເສບເມຖຸນທຳເປັນປັດໄຈ ບັນດາສະມະຖະ ໗ ຢ່າງລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນກັບຕິນະວັດຖາຣະກະ

ฯลฯ

## ໗. ເສຂິຍະກັນ

ຄຳຖາມ - ຄຳຕອບສະມະຖະໃນເສຂິຍະກັນ

ฯลฯ

## ໗. ປາທຸກະວັກ

ฯลฯ

## ສິກຂາບົດທີ ໑໕

ຖາມ : ອາບັດຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳເປັນປັດໄຈ ບັນດາສະມະຖະ ກ ຢ່າງ ລະງັບດ້ວຍສະມະຖະທໍ່ໃດ?

ຕອບ : ອາບັດຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍ ລົງໃນນ້ຳເປັນປັດໄຈ ບັນດາສະມະຖະ ກ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສໍາມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສໍາມຸຂາວິໄນກັບຕິນະວັດຖາຣະກະ

**ສະມະຖະວາຣະທີ ກ ຈົບ**

# ໗. ສະມຸດຈະຍະວາຣະ

# ວາຣະວ່າດ້ວຍການສະຫຼຸບລວມ

## ໑. ປາຣາຊິກກັນ

ຄໍາຖາມ - ຄໍາຕອບສະຫຼຸບລວມອາບັດໃນປາຣາຊິກກັນ

## ປາຣາຊິກສິກຂາບົດທີ ໑

[໔໐໐] ຖາມ : ຍ້ອນການເສບເມຖຸນທຳເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນການເສບເມຖຸນທຳເປັນປັດໄຈ ຕ້ອງອາບັດ ໔ ຢ່າງ ຄື

໑. ພິກຂຸເສບເມຖຸນທຳໃນຊາກສົບທີ່ຍັງບໍ່ຖືກສັດກັດກິນ ຕ້ອງອາບັດປາຣາຊິກ

໒. ພິກຂຸເສບເມຖຸນທຳໃນຊາກສົບທີ່ຖືກສັດກັດກິນສ່ວນຫຼາຍ ຕ້ອງອາບັດຖຸນລັດໄຈ

໓. ພິກຂຸສອດອົງຄະຊາດເຂົ້າໄປໃນປາກທີ່ອ້າ ແຕ່ບໍ່ໄດ້ຖືກຕ້ອງ ຕ້ອງອາບັດທຸກກົດ

໔. ພິກຂຸນີຕ້ອງອາບັດປາຈິດຕີ ຍ້ອນໃຊ້ທ່ອນຢາງ

ຍ້ອນການເສບເມຖຸນທຳເປັນປັດໄຈ ຕ້ອງອາບັດ ໔ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ? ບັນດາອະທິກອນ ໔ ຢ່າງ ເປັນອະທິກອນໃດ ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື

(໑) ສີລະວິບັດ

(໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໔ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດຖຸນລັດໄຈ (໓) ກອງອາບັດປາຈິດຕີ (໓) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ບັນດາອະທິກອນ ໔ ຢ່າງ ເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສໍາມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສໍາມຸຂາວິໄນກັບຕິນະວັດຖາຣະກະ

ຯລຯ

## ໗. ເສຂິຍະກັນ

ຄໍາຖາມ - ຄໍາຕອບສະຫຼຸບລວມອາບັດໃນເສຂິຍະກັນ

ຯລຯ

## ໗. ປາທຸກະວັກ

ຯລຯ

## ສິກຂາບົດທີ ໑໕

ຖາມ : ຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນໍ້າລາຍລົງໃນ ນໍ້າເປັນປັດໄຈ ພິກຂຸຕ້ອງອາບັດທີ່ໃດ?

ຕອບ : ຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນໍ້າລາຍລົງໃນນໍ້າເປັນປັດໄຈ ຕ້ອງອາບັດ ໑ ຢ່າງ ຄື ອາບັດທຸກກົດ

ຍ້ອນຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະປັດສາວະຫຼືບ້ວນນ້ຳລາຍລົງໃນນ້ຳເປັນປັດໄຈ ຕ້ອງອາບັດ ໑ ຢ່າງນີ້

ຖາມ : ອາບັດນັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ? ບັນດາອະທິກອນ ໔ ຢ່າງ ເປັນອະທິກອນໃດ ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດນັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໑ ຢ່າງ ຄື ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໑ ກອງ ຄື ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ບັນດາອະທິກອນ ໔ ຢ່າງ ເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນກັບຕິນະວັດຖາຣະກະ

**ສະມຸດຈະຍະວາຣະທີ ໗ ຈົບ**

**ປັດຈະຍະວາຣະ ໗ ຈົບ**

**ໂສລະສະມະຫາວາຣະໃນມະຫາວິພັງ ຈົບ**

# ໘. ພິກຂຸນີວິພັງ

## ໂສລະສະມະຫາວາຣະ ຕອນ ໘

## ໑. ກັດຖະປັນຍັດຕິວາຣະ

## ວາຣະວ່າດ້ວຍບັນຍັດ ຢູ່ໃສ?

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບສະຖານທີ່ບັນຍັດເປັນຕົ້ນໃນປາຣາຊິກກັນ

[໘໐໑] ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກສິກຂາບົດທີ ໕ ແກ່ພິກຂຸນີທັງຫຼາຍ ຢູ່ໃສ? ຊົງພາຣົບໃຜ? ຍ້ອນເລື້ອງອັນໃດ?

ໃນປາຣາຊິກສິກຂາບົດທີ ໕ ນັ້ນ ມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະບັນຍັດ ສັບພັດຖະບັນຍັດ ປະເທສະບັນຍັດ ສາທາລະນະບັນຍັດ ອະສາທາລະນະບັນຍັດ ເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ບັນດາປາຕິໂມກຂຸດເທດ ໔ ອຸດເທດ ປາຣາຊິກສິກຂາບົດທີ ໕ ຈັດເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ? ມາສູ່ອຸດເທດໂດຍອຸດເທດໃດ?

ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດໃດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ?

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ໃນປາຣາຊິກສິກຂາບົດທີ ໕ ນັ້ນ ອັນໃດເປັນພຣະວິໄນ ອັນໃດເປັນອະພິວິໄນ ອັນໃດເປັນ ພຣະປາຕິໂມກ ອັນໃດເປັນອະທິປາຕິໂມກ ອັນໃດເປັນວິບັດ ອັນໃດເປັນສົມບັດ ອັນໃດເປັນຂໍ້ ປະຕິບັດ

ພຣະຜູ້ມີພຣະພາກເຈົ້າຊົງບັນຍັດປາຣາຊິກສິກຂາບົດທີ ໕ ແກ່ພິກຂຸນີທັງຫຼາຍ ຊົງອາໄສອຳນາດປະໂຫຍດທີ່ໃດ? ໃຜສຶກສາຢູ່ ໃຜສຶກສາສິກຂາຮຽບຮ້ອຍແລ້ວ ສິກຂາບົດນີ້ ຕັ້ງຢູ່ໃນໃຜ ໃຜຊົງເອົາໄວ້ ເປັນຄຳເວົ້າຂອງໃຜ ໃຜນຳມາ

## ປາຣາຊິກສິກຂາບົດທີ ໕

[໔໐໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກສິກຂາບົດທີ ໕[໑] ແກ່ພິກຂຸນີທັງຫຼາຍ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງປາຣົບໃຜ?

ຕອບ : ຊົງປາຣົບພິກຂຸນີສຸນທະຣີນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີສຸນທະຣີນັນທາມີຄວາມກຳໜັດຍິນດີການຖືກຕ້ອງກາຍກັບຊາຍຜູ້ກຳໜັດ

ຖາມ : ໃນປາຣາຊິກສິກຂາບົດທີ ໕ ນັ້ນມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະບັນຍັດຢູ່ບໍ?

ຕອບ : ໃນປາຣາຊິກສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບໍ່ມີອະນຸປະປັນນະບັນຍັດ

ຖາມ : ມີສັບພັດຖະບັນຍັດ ປະເທສະບັນຍັດຢູ່ບໍ

ຕອບ : ມີສັບພັດຖະບັນຍັດ

ຖາມ : ມີສາທາລະນະບັນຍັດ ອະສາທາລະນະບັນຍັດຢູ່ບໍ?

ຕອບ : ມີອະສາທາລະນະບັນຍັດ

ຖາມ : ມີເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ຕອບ : ມີເອກະໂຕບັນຍັດ

ຖາມ : ບັນດາພຣະປາຕິໂມກຂຸດເທດ ໔ ອຸດເທດ ປາຣາຊິກສິກຂາບົດທີ ໕ ຈັດ ເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ?

ຕອບ : ຈັດເຂົ້າໃນນິທານຸດເທດ ນັບເນື່ອງໃນນິທານຸດເທດ

ຖາມ : ມາສູ່ອຸດເທດ ໂດຍອຸດເທດໃດ?

ຕອບ : ມາສູ່ອຸດເທດ ໂດຍອຸດເທດທີ ໔

ຖາມ : ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ຕອບ : ເປັນສີລະວິບັດ

ຖາມ : ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດໃດ

ຕອບ : ຈັດເຂົ້າກອງອາບັດປາຣາຊິກ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດ ທາງ ວາຈາ

ຖາມ : ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ?

ຕອບ : ເປັນອາປັດຕາທິກອນ

ຖາມ : ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ລະງັບດ້ວຍສະມະຖະ ໒ ຢ່າງ ຄື (໑) ສໍາມຸຂາວິໄນ (໒) ປະຕິນຍາຕະກະ ຣະນະ

ຖາມ : ໃນປາຣາຊິກສິກຂາບົດທີ ໕ ນັ້ນອັນໃດ?ເປັນພຣະວິໄນ ອັນໃດເປັນອະພິວິໄນ

ຕອບ : ພຣະບັນຍັດເປັນພຣະວິໄນ ການຈໍາແນກເປັນອະພິວິໄນ

ຖາມ : ໃນປາຣາຊິກສິກຂາບົດທີ ໕ ນັ້ນ ອັນໃດເປັນພຣະປາຕິໂມກ ອັນໃດເປັນອະທິ-ປາຕິໂມກ

ຕອບ : ພຣະບັນຍັດເປັນພຣະປາຕິໂມກ ການຈໍາແນກເປັນອະທິປາຕິໂມກ

ຖາມ : ອັນໃດເປັນວິບັດ

ຕອບ : ຄວາມບໍ່ສັງລວມເປັນວິບັດ

ຖາມ : ອັນໃດເປັນສົມບັດ

ຕອບ : ຄວາມສັງລວມເປັນສົມບັດ

ຖາມ : ອັນໃດເປັນຂໍ້ປະຕິບັດ

ຕອບ : ການທີ່ພິກຂຸນີສະມາທານອາປານະໂກຕິກສິນຕະຫຼອດຊີວິດວ່າ "ເຮົາຈະບໍ່ເຮັດ ກໍາແນວນີ້ອີກ" ແລ້ວສຶກສາໃນສິກຂາບົດທັງຫຼາຍເປັນຂໍ້ປະຕິບັດ

ຖາມ : ພຣະຜູ້ມີພຣະພາກເຈົ້າ ຊົງບັນຍັດປາຣາຊິກສິກຂາບົດທີ ໕ ແກ່ພິກຂຸນີທັງຫຼາຍ ຊົງອາໄສອໍານາດປະໂຫຍດທີ່ໃດ?

ຕອບ : ຊົງບັນຍັດປາຣາຊິກສິກຂາບົດທີ ໕ ແກ່ພິກຂຸນີທັງຫຼາຍ ຊົງອາໄສ
ອໍານາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໒. ເພື່ອຄວາມຜາສຸກແຫ່ງສົງ
໓. ເພື່ອຂົ່ມພິກຂຸນີຜູ້ດື້ດ້ານ
໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸນີຜູ້ມີສິນດີງາມ
໕. ເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໖. ເພື່ອກໍາຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ

໗. ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ

໘. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ

໙. ເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ

໑໐. ເພື່ອເອື້ອເຟື້ອພຣະວິໄນ

ຖາມ : ໃຜສຶກສາຢູ່

ຕອບ : ພິກຂຸນີຜູ້ເປັນພຣະເສຂະແລະເປັນກັນລະຍານະປຸຖຸຊົນສຶກສາຢູ່

ຖາມ : ໃຜສຶກສາສິກຂາຮຽບຮ້ອຍແລ້ວ

ຕອບ : ພິກຂຸນີຜູ້ເປັນພຣະອະຣະຫັນເປັນຜູ້ສຶກສາສິກຂາຮຽບຮ້ອຍແລ້ວ

ຖາມ : ສິກຂາບົດນີ້ຕັ້ງຢູ່ໃນໃຜ

ຕອບ : ຕັ້ງຢູ່ໃນສິກຂາກາມະບຸກຄົນ(ຜູ້ຕ້ອງການສຶກສາ)

ຖາມ : ໃຜຊົງເອົາໄວ້

ຕອບ : ພິກຂຸນີທັງຫຼາຍຜູ້ຊົງຈຳປາຣາຊິກສິກຂາບົດທີ ໕ ໄດ້ຊົງເອົາໄວ້

ຖາມ : ເປັນຄຳເວົ້າຂອງໃຜ

ຕອບ : ເປັນພຣະດຳຣັດຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າ

ຖາມ : ໃຜນຳມາ

ຕອບ : ພຣະເຖຣະທັງຫຼາຍນຳສືບ ໆ ກັນມາ

## ຣາຍນາມພຣະເຖຣະຜູ້ຊົງຈຳພຣະວິໄນສືບກັນມາ

ພຣະເຖຣະເຫຼົ່ານີ້ ຄື ພຣະອຸບາລີ ພຣະຂ້າທາສະກະ ພຣະໂສນະກະ ພຣະສິກຄະວະ ແລະພຣະໂມກຄັນລີບຸດ ລວມເປັນ ໕ ອົງ ເປັນຜູ້ນຳພຣະວິໄນສືບ ໆ ກັນມາໃນຊົມພູທະວີບອັນມີສິຣິ

ຈາກນັ້ນ ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຄື ພຣະມະຫິນທະ ພຣະອິດຕິຍະ ພຣະອຸດຕິຍະ ພຣະສຳພະລະ ຯລຯ

ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຮູ້ພຣະວິໄນ ສະຫຼາດໃນມັກ ໄດ້ປະກາດພຣະວິໄນປິດົກໄວ້ໃນເກາະຕາມພະປັນນີ

## ປາຣາຊິກສິກຂາບົດທີ ໖

[໔໐໓] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຣາຊິກສິກຂາບົດທີ ໖ ແກ່ພິກຂຸນີທັງຫຼາຍ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາຮູ້ຢູ່ ບໍ່ທັກທ້ວງພິກຂຸນີຜູ້ຕ້ອງທຳຄືປາຣາຊິກ ດ້ວຍຕົນເອງ ບໍ່ບອກແກ່ຄະນະ

ໃນປາຣາຊິກສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ຯລຯ

## ປາຣາຊິກສິກຂາບົດທີ ໗

[໔໐໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຣາຊິກສິກຂາບົດທີ ໗ ແກ່ພິກຂຸນີທັງຫຼາຍ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາປະພຶດຕາມພິກຂຸຊື່ອະຣິດຖະຜູ້ມີບັບພະ-ບຸຣຸດເປັນນາຍພານຂ້ານົກແຮ້ງທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳ

ໃນປາຣາຊິກສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ[9] ຯລຯ

## ປາຣາຊິກສິກຂາບົດທີ ໘

[໔໐໕] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຣາຊິກສິກຂາບົດທີ ໘ ແກ່ພິກຂຸນີທັງຫຼາຍ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸນີສັບພັກຄີ ເຮັດວັດຖຸຄົບທັງ ໘ ປະການ[9]

ໃນປາຣາຊິກສິກຂາບົດທີ ໘ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ៣ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

**ປາຣາຊິກ ໘ ສິກຂາບົດ ຈົບ**

## ລວມສິກຂາບົດທີ່ມີໃນປາຣາຊິກກັນ

ພຣະມະຫາວີຣະຊົງບັນຍັດປາຣາຊິກ ເຊິ່ງເປັນມູນເຫດແຫ່ງການຂາດຢ່າງບໍ່ຕ້ອງສົງໄສ ຄື

ປາຣາຊິກສິກຂາບົດທີ ໑ ວ່າດ້ວຍການເສບເມຖຸນທຳ
ປາຣາຊິກສິກຂາບົດທີ ໒ ວ່າດ້ວຍການຖືເອົາສິ່ງຂອງທີ່ເຈົ້າຂອງເຂົາບໍ່ໄດ້ໃຫ້
ປາຣາຊິກສິກຂາບົດທີ ໓ ວ່າດ້ວຍການພາກກາຍມະນຸດ
ປາຣາຊິກສິກຂາບົດທີ ໔ ວ່າດ້ວຍການກ່າວອວດອຸດຕະຣິມະນຸດສະທຳ
ປາຣາຊິກສິກຂາບົດທີ ໕ ວ່າດ້ວຍການຍິນດີການຈັບຕ້ອງທີ່ບໍລິເວນເໜືອເຂົ່າຂຶ້ນໄປຂອງຊາຍ
ປາຣາຊິກສິກຂາບົດທີ ໖ ວ່າດ້ວຍການປົກປິດໂທດ
ປາຣາຊິກສິກຂາບົດທີ ໗ ວ່າດ້ວຍການປະພຶດຕາມພິກຂຸທີ່ຖືກສົງລົງອຸກເຂປະນີຍະກຳ
ປາຣາຊິກສິກຂາບົດທີ ໘ ວ່າດ້ວຍວັດຖຸ ໘ ມີການຍິນດີການຈັບມືຂອງຊາຍເປັນຕົ້ນ

ປາຣາຊິກ ໘ ສິກຂາບົດນີ້ເປັນມູນແຫ່ງການຕັດຂາດຢ່າງບໍ່ຕ້ອງສົງໄສ

## ໒. ສັງຄາທິເສສະກັນ

ຄຳຖາມ - ຄຳຕອບສະຖານທີ່ບັນຍັດເປັນຕົ້ນໃນສັງຄາທິເສສະກັນ

[໒໐໖] ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດສັງຄາທິເສດແກ່ພິກຂຸນີຜູ້ກໍ່ຄະດີພິພາດ ຢູ່ໃສ? ຊົງພາຣົບໃຜ? ຍ້ອນເລື້ອງອັນໃດ? ຯລຯ ໃຜນຳມາ

## ສັງຄາທິເສດສິກຂາບົດທີ ໑

[໒໐໗] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸນີຜູ້ກໍ່ຄະດີພິພາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາກໍ່ຄະດີພິພາດ

ຖາມ : ໃນສັງຄາທິເສດສິກຂາບົດທີ ໑ ນັ້ນມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະບັນຍັດຢູ່ບໍ?

ຕອບ : ໃນສັງຄາທິເສດສິກຂາບົດທີ ໑ ນັ້ນມີ ໑ ພຣະບັນຍັດ ບໍ່ມີພຣະອະນຸບັນຍັດ ແລະອະນຸປະປັນນະບັນຍັດ

ຖາມ : ມີສັບພັດຖະບັນຍັດ ປະເທສະບັນຍັດຢູ່ບໍ

ຕອບ : ມີສັບພັດຖະບັນຍັດ

ຖາມ : ມີສາທາລະນະບັນຍັດ ອະສາທາລະນະບັນຍັດຢູ່ບໍ?

ຕອບ : ມີອະສາທາລະນະບັນຍັດ

ຖາມ : ມີເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ຕອບ : ມີເອກະໂຕບັນຍັດ

ຖາມ : ບັນດາປາຕິໂມກຂຸດເທດ ໔ ອຸດເທດ ສັງຄາທິເສດສິກຂາບົດທີ ໑ ນີ້ຈັດເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ?

ຕອບ : ຈັດເຂົ້າໃນນິທານຸດເທດ ນັບເນື່ອງໃນນິທານຸດເທດ

ຖາມ : ມາສູ່ອຸດເທດ ໂດຍອຸດເທດໃດ?

ຕອບ : ມາສູ່ອຸດເທດ ໂດຍອຸດເທດທີ ໓

ຖາມ : ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ຕອບ : ເປັນສີລະວິບັດ

ຖາມ : ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?

ຕອບ : ເປັນກອງອາບັດສັງຄາທິເສດ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໒ ສະມຸດຖານ ຄື (໑) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍວາຈາກັບຈິດ

ຖາມ : ໃຜນຳມາ

ຕອບ : ພຣະເຖຣະທັງຫຼາຍນຳສືບ ໆ ກັນມາ

## ຣາຍນາມພຣະເຖຣະຜູ້ຊົງຈຳພຣະວິໄນສືບກັນມາ

ພຣະເຖຣະເຫຼົ່ານີ້ ຄື ພຣະອຸບາລີ ພຣະຂ້າທາສະກະ ພຣະໂສນະກະ ພຣະສິກຄະວະ ແລະພຣະໂມກຄັນລີບຸດ ລວມເປັນ ໕ ອົງ

ເປັນຜູ້ນຳພຣະວິໄນສືບ ໆ ກັນມາໃນຊົມພູທະວີບອັນມີສິຣິ

ຈາກນັ້ນ ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຄື

ພຣະມະຫິນທະ ພຣະອິດຕິຍະ ພຣະອຸດຕິຍະ ພຣະສຳພະລະ ຯລຯ

ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຮູ້ພຣະວິໄນ

ສະຫຼາດໃນມັກ ໄດ້ປະກາດພຣະວິໄນປິດົກໄວ້ໃນເກາະຕາມພະປັນນີ

## ສັງຄາທິເສດສິກຂາບົດທີ ๘

[໔໐໗] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸນີທີ່ບວດໃຫ້ສະຕີຜູ້ເປັນໂຈນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາບວດໃຫ້ສະຕີຜູ້ເປັນໂຈນ

ໃນສັງຄາທິເສດສິກຂາບົດທີ ๘ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານ ๘ ສະມຸດຖານ ຄື (໑) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (๘) ເກີດທາງກາຍວາຈາກັບຈິດ ຯລຯ

## ສັງຄາທິເສດສິກຂາບົດທີ ๑

[໔໐໙] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸນີຜູ້ໄປສູ່ບໍລິເວນໝູ່ບ້ານອົງດຽວ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງໄປສູ່ບໍລິເວນໝູ່ບ້ານອົງດຽວ

ໃນສັງຄາທິເສດສິກຂາບົດທີ ๑ ນັ້ນມີ ໑ ພຣະບັນຍັດ ๑ ພຣະອະນຸບັນຍັດ ບັນດາ ສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນປະຖົມປາຣາຊິກາ ສະມຸດຖານ ຯລຯ

## ສັງຄາທິເສດສິກຂາບົດທີ ໔

[໔໑໐] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸນີຜູ້ຮຽກພິກຂຸນີທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳ ໂດຍທຳ ໂດຍວິໄນ ໂດຍສັດຖຸສາດໃຫ້ກັບເຂົ້າໝູ່ ໂດຍບໍ່ບອກກາຣົກສົງ ທັງບໍ່ຮັບຮູ້ສັນທະຂອງຄະນະ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາຮຽກພິກຂຸນີທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳ ໂດຍທຳ ໂດຍວິໄນ ໂດຍສັດຖຸສາດໃຫ້ກັບເຂົ້າໝູ່ ໂດຍບໍ່ບອກກາຣົກສົງ ທັງບໍ່ຮັບຮູ້ສັນທະຂອງຄະນະ

ໃນສັງຄາທິເສດສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ໗໘໗

## ສັງຄາທິເສດສິກຂາບົດທີ ໕

[໔໑໑] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸນີຜູ້ກຳໜັດຮັບຂອງຫຍ້ຳຫຼືຂອງສັນຈາກມືຊາຍ ຜູ້ກຳໜັດດ້ວຍມືຂອງຕົນແລ້ວສັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີສຸນທະຣີນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີສຸນທະຣີນັນທາກຳໜັດຮັບອາມິດຈາກມືຊາຍຜູ້ກຳໜັດ

ໃນສັງຄາທິເສດສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນປະຖົມປາຣາຊິກສະມຸດຖານ

## ສັງຄາທິເສດສິກຂາບົດທີ ໖

[໔໑໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸນີຜູ້ສົ່ງເສີມກ່າວຊັກຊວນວ່າ "ແມ່ເຈົ້າ ຊາຍຜູ້ນັ້ນ ຈະກຳໜັດບໍ່ກຳໜັດກໍຕາມ ກໍເຮັດຫຍັງທ່ານບໍ່ໄດ້ ຍ້ອນທ່ານບໍ່ກຳໜັດ ນິມົນເທີ້ນ ແມ່ເຈົ້າ ຊາຍຜູ້ນັ້ນຈະຖວາຍສິ່ງໃດຈະເປັນຂອງຫຍ້ຳຫຼືຂອງສັນກໍຕາມແກ່ທ່ານ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງ ແລ້ວຫຍ້ຳຫຼືສັນເທີ້ນ" ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງສົ່ງເສີມກ່າວຊັກຊວນວ່າ "ແມ່ເຈົ້າ ຊາຍຜູ້ນັ້ນຈະກຳໜັດບໍ່ກຳໜັດກໍຕາມ ກໍເຮັດຫຍັງທ່ານບໍ່ໄດ້ ຍ້ອນທ່ານບໍ່ກຳໜັດ ນິມົນເທີ້ນ ແມ່ເຈົ້າ ຊາຍຜູ້ນັ້ນຈະຖວາຍສິ່ງໃດຈະເປັນຂອງຫຍ້ຳຫຼືຂອງສັນກໍຕາມແກ່ທ່ານ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນເອງ ແລ້ວຫຍ້ຳຫຼືສັນເທີ້ນ"

ໃນສັງຄາທິເສດສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ສັງຄາທິເສດສິກຂາບົດທີ ໗

[໔໑໕] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸນີຜູ້ໂກດ ບໍ່ພໍໃຈ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຈັນທະກາລີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຈັນທະກາລີຄຽດບໍ່ພໍໃຈ ກ່າວແນວນີ້ວ່າ "ເຮົາຂໍບອກຄືນພຣະພຸດ ບອກຄືນພຣະທຳ ບອກຄືນພຣະສົງ ບອກຄືນສິກຂາ"

ໃນສັງຄາທິເສດສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

## ສັງຄາທິເສດສິກຂາບົດທີ ໗

[໔໑໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸນີ ຜູ້ຖືກຕັດສິນໃຫ້ປຣາໄຊຄະດີໃນອະທິກອນບາງເລື້ອງ ໂກດບໍ່ຍອມສະລະກໍາ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຈັນທະກາລີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຈັນທະກາລີຖືກຕັດສິນໃຫ້ປຣາໄຊຄະດີໃນອະທິກອນ ບາງເລື້ອງ

ຄຽດບໍ່ພໍໃຈກ່າວແນວນີ້ວ່າ "ພວກພິກຂຸນີລໍາອຽງຍ້ອນຮັກ ພວກພິກຂຸນີລໍາອຽງຍ້ອນຊັງ ພວກພິກຂຸນີລໍາອຽງຍ້ອນຫຼົງ ພວກພິກຂຸນີລໍາອຽງຍ້ອນຢ້ານ

ໃນສັງຄາທິເສດສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

## ສັງຄາທິເສດສິກຂາບົດທີ ໘

[໔໑໕] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸນີທັງຫຼາຍຜູ້ຢູ່ຄຸກຄີກັນ ບໍ່ຍອມສະລະ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງຢູ່ຄຸກຄີກັນ

ໃນສັງຄາທິເສດສິກຂາບົດທີ ໘ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

## ສັງຄາທິເສດສິກຂາບົດທີ ໑໐

[໔໑໖] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດສັງຄາທິເສດແກ່ພິກຂຸນີຜູ້ສົ່ງເສີມກ່າວຊັກຊວນວ່າ "ແມ່ເຈົ້າທັງຫຼາຍ

ທ່ານທັງຫຼາຍຈົ່ງຢູ່ຄຸກຄີກັນ ຢ່າແຍກກັນຢູ່" ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຈົບ ໓ ຄັ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາສົ່ງເສີມກ່າວຊັກຊວນວ່າ "ແມ່ເຈົ້າທັງຫຼາຍ ທ່ານທັງຫຼາຍຈົ່ງຢູ່ຄຸກຄີກັນ ຢ່າແຍກກັນຢູ່

ໃນສັງຄາທິເສດສິກຂາບົດທີ ໑໐ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ໗ລ໗

**ສັງຄາທິເສດ ໑໐ ສິກຂາບົດ ຈົບ**

## ລວມສິກຂາບົດທີ່ມີໃນສັງຄາທິເສສະກັນ

ສັງຄາທິເສດສິກຂາບົດທີ ໑ ວ່າດ້ວຍການກໍ່ຄະດີພິພາດ

ສັງຄາທິເສດສິກຂາບົດທີ ໒ ວ່າດ້ວຍການບວດໃຫ້ສະຕີຜູ້ເປັນໂຈນ

ສັງຄາທິເສດສິກຂາບົດທີ ໓ ວ່າດ້ວຍການເຂົ້າບໍລິເວນໝູ່ບ້ານຕາມລຳພັງເປັນຕົ້ນ

ສັງຄາທິເສດສິກຂາບົດທີ ໔ ວ່າດ້ວຍການຮຽກພິກຂຸນີທີ່ຖືກສົງລົງອຸກເຂປະນີຍະກຳເຂົ້າໝູ່

ສັງຄາທິເສດສິກຂາບົດທີ ໕ ວ່າດ້ວຍການຮັບໂພຊະນະຈາກມືຊາຍຜູ້ກຳໜັດ

ສັງຄາທິເສດສິກຂາບົດທີ ໖ ວ່າດ້ວຍການສົ່ງເສີມພິກຂຸນີໃຫ້ຮັບໂພຊະນະຈາກມືຊາຍຜູ້ກຳໜັດ

ສັງຄາທິເສດສິກຂາບົດທີ ໗ ວ່າດ້ວຍການບອກຄືນພຣະຣັດຕະນະໄຕຣ

ສັງຄາທິເສດສິກຂາບົດທີ ໘ ວ່າດ້ວຍພິກຂຸນີໂກດຍ້ອນຖືກຕັດສິນ ໃຫ້ປຣາໄຊຄະດີໃນອະທິກອນ

ສັງຄາທິເສດສິກຂາບົດທີ ໙ ວ່າດ້ວຍພິກຂຸນີມີຄວາມປະພຶດຊົ່ວຊາມ

ສັງຄາທິເສດສິກຂາບົດທີ ໑໐ ວ່າດ້ວຍການຍຸຍົງສົ່ງເສີມໃຫ້ພິກຂຸນີປະພຶດຊົ່ວຊາມ

ລວມອາບັດສັງຄາທິເສດ ໑໐ ສິກຂາບົດ

໗ລ໗

## ໓. ນິດສັກຄິຍະກັນ

ຄຳຖາມ - ຄຳຕອບສະຖານທີ່ບັນຍັດເປັນຕົ້ນໃນນິດສັກຄິຍະກັນ

## ສິກຂາບົດທີ ໑

[໔໑໗] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດນິດສັກຄິຍະປາຈິດຕີແກ່ພິກຂຸນີຜູ້ກະທຳການສະສົມບາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸນີສັບພັກຄີທຳການສະສົມບາດ

ໃນນິດສັກຄິຍະປາຈິດຕີສິກຂາບົດທີ ໑ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງ ອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ໗ລ໗

## ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດນິດສັກຄິຍະປາຈິດຕີແກ່ພິກຂຸນີຜູ້ອະທິຖານອະກາລະຈີວອນເປັນ ການຈີວອນແລ້ວໃຫ້ແຈກກັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາອະທິຖານອະກາລະຈີວອນເປັນການຈີວອນ ແລ້ວໃຫ້ ແຈກກັນ

ໃນນິດສັກຄິຍະປາຈິດຕີສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານ ແຫ່ງ ອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ສິກຂາບົດທີ ໓

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດນິດສັກຄິຍະປາຈິດຕີແກ່ພິກຂຸນີຜູ້ແລກປ່ຽນຈີວອນກັບພິກຂຸນີແລ້ວ ຍາດເອົາຄືນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາແລກປ່ຽນຈີວອນກັບພິກຂຸນີແລ້ວຍາດເອົາຄືນ

ໃນນິດສັກຄິຍະປາຈິດຕິສິກຂາບົດທີ ໓ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸນີຜູ້ອອກປາກຂໍຂອງແນວໜຶ່ງແລ້ວກັບອອກປາກຂໍຂອງອີກຢ່າງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາອອກປາກຂໍຂອງແນວໜຶ່ງແລ້ວກັບອອກປາກຂໍຂອງອີກຢ່າງ ໜຶ່ງ

ໃນນິດສັກຄິຍະປາຈິດຕິສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸນີຜູ້ສັ່ງໃຫ້ຊື້ຂອງແນວໜຶ່ງແລ້ວກັບໃຫ້ຊື້ຂອງອີກຢ່າງ ໜຶ່ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາສັ່ງໃຫ້ຊື້ຂອງແນວໜຶ່ງແລ້ວກັບໃຫ້ຊື້ຂອງອີກຢ່າງ ໜຶ່ງ

ໃນນິດສັກຄິຍະປາຈິດຕິສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ສິກຂາບົດທີ ໖

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸນີຜູ້ໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈແນວໜຶ່ງ ທີ່ເຂົາຖວາຍອຸທິດຂອງແນວໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ແລກປ່ຽນຂອງແນວອື່ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈແນວໜຶ່ງ ທີ່ເຂົາຖວາຍອຸທິດຂອງແນວໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ແລກປ່ຽນ ຂອງແນວອື່ນ

ໃນນິດສັກຄິຍະປາຈິດຕິສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ສິກຂາບົດທີ ໗

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸນີຜູ້ໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈແນວໜຶ່ງ ທີ່ເຂົາຖວາຍອຸທິດຂອງແນວໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ທີ່ຂໍມາເອງ ແລກປ່ຽນຂອງແນວອື່ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈແນວໜຶ່ງ ທີ່ເຂົາຖວາຍອຸທິດຂອງແນວໜຶ່ງ ທີ່ເຂົາບໍລິຈາກແກ່ສົງ ທີ່ຂໍມາເອງ ແລກປ່ຽນຂອງແນວອື່ນ

ໃນນິດສັກຄິຍະປາຈິດຕິສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ສິກຂາບົດທີ ໘

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸນີຜູ້ໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈແນວໜຶ່ງ ທີ່ເຂົາຖວາຍອຸທິດຂອງແນວໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ແລກປ່ຽນຂອງແນວອື່ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈແນວໜຶ່ງ ທີ່ເຂົາຖວາຍອຸທິດຂອງແນວໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ແລກປ່ຽນຂອງແນວອື່ນ

ໃນນິດສັກຄິຍະປາຈິດຕິສິກຂາບົດທີ ໘ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ສິກຂາບົດທີ ໙

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸນີ ຜູ້ໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈແນວໜຶ່ງ ທີ່ເຂົາຖວາຍອຸທິດຂອງແນວໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ທີ່ຂໍມາເອງ ແລກປ່ຽນຂອງແນວອື່ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈແນວໜຶ່ງ ທີ່ເຂົາຖວາຍອຸທິດຂອງແນວໜຶ່ງ ທີ່ເຂົາບໍລິຈາກແກ່ພິກຂຸນີຈຳນວນຫຼາຍ ທີ່ຂໍມາເອງ ແລກປ່ຽນຂອງແນວອື່ນ

ໃນນິດສັກຄິຍະປາຈິດຕິສິກຂາບົດທີ ໙ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ສິກຂາບົດທີ ໑໐

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸນີ ຜູ້ໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈແນວໜຶ່ງ ທີ່ເຂົາຖວາຍອຸທິດຂອງແນວໜຶ່ງ ທີ່ເຂົາບໍລິຈາກແກ່ບຸກຄົນ ທີ່ຂໍມາເອງ ແລກປ່ຽນຂອງແນວອື່ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາໃຫ້ເອົາບໍຣິຂານທີ່ເຂົາຖວາຍເພື່ອປະໂຫຍດແກ່ປັດໄຈແນວໜຶ່ງ ທີ່ເຂົາຖວາຍອຸທິດຂອງແນວໜຶ່ງ ທີ່ເຂົາບໍລິຈາກແກ່ບຸກຄົນ ທີ່ຂໍມາເອງ ແລກປ່ຽນຂອງແນວອື່ນ

ໃນນິດສັກຄິຍະປາຈິດຕິສິກຂາບົດທີ ໑໐ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາ ບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ສິກຂາບົດທີ ໑໑

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸນີຜູ້ຂໍຜ້າຫົ່ມໜາ ເກີນລາຄາ ໔ ກັງສະ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາອອກປາກທູນຂໍຜ້າກຳພົນ°ຈາກພຣະຣາຊາ

ໃນນິດສັກຄິຍະປາຈິດຕິສິກຂາບົດທີ ໑໑ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ສິກຂາບົດທີ ໑໒

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດນິດສັກຄິຍະປາຈິດຕິແກ່ພິກຂຸນີຜູ້ຂໍຜ້າຫົ່ມບາງ ເກີນລາຄາ ໒ ກັງສະ ເຄິ່ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາອອກປາກທູນຂໍຜ້າເປືອກໄມ້ຈາກພຣະຣາຊາ

ໃນນິດສັກຄິຍະປາຈິດຕິສິກຂາບົດທີ ໑໒ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

**ນິດສັກຄິຍະປາຈິດຕິ ໑໒ ສິກຂາບົດ ຈົບ**

## ລວມສິກຂາບົດທີ່ມີໃນນິດສັກຄິຍະກັນ

ສິກຂາບົດທີ ໑ ວ່າດ້ວຍການສະສົມບາດ

ສິກຂາບົດທີ ໒ ວ່າດ້ວຍການແຈກອະກາລະຈີວອນ

ສິກຂາບົດທີ ໓ ວ່າດ້ວຍການແລກປ່ຽນຈີວອນ

ສິກຂາບົດທີ ໔ ວ່າດ້ວຍການອອກປາກຂໍຂອງແນວໜຶ່ງແລ້ວອອກປາກ
ຂໍຂອງແນວອື່ນ

ສິກຂາບົດທີ ໕ ວ່າດ້ວຍການໃຫ້ຊື້ຂອງແນວໜຶ່ງແລ້ວໃຫ້ຊື້ຂອງແນວອື່ນ

ສິກຂາບົດທີ ໖ ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍສົງຂໍ້ທີ ໑

ສິກຂາບົດທີ ໗ ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍສົງຂໍ້ທີ ໒

ສິກຂາບົດທີ ໘ ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍຄະນະຂໍ້ທີ ໑

ສິກຂາບົດທີ ໙ ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍຄະນະຂໍ້ທີ ໒

ສິກຂາບົດທີ ໑໐ ວ່າດ້ວຍການແລກປ່ຽນບໍຣິຂານທີ່ເຂົາຖວາຍບຸກຄົນ

ສິກຂາບົດທີ ໑໑ ວ່າດ້ວຍການຂໍຜ້າຫົ່ມໜາໃນລະດູໜາວ

ສິກຂາບົດທີ ໑໒ ວ່າດ້ວຍການຂໍຜ້າຫົ່ມບາງໃນລະດູຮ້ອນ

# ໕. ປາຈິດຕິຍະກັນ

ຄຳຖາມ - ຄຳຕອບສະຖານທີ່ບັນຍັດເປັນຕົ້ນໃນປາຈິດຕິຍະກັນ

## ໑. ລະສຸນະວັກ

### ສິກຂາບົດທີ ໑

[໔໑໗] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ສັນກະທຽມ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາໃຫ້ນຳກະທຽມໄປໂດຍບໍ່ຮູ້ຈັກປະມານ

ໃນສິກຂາບົດທີ ໑ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ໆລໆ

### ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ໃຫ້ລົກຂົນໃນບ່ອນແຄບ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸນີສັບພັກຄີໃຫ້ລົກຂົນໃນບ່ອນແຄບ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານ ໕ ສະມຸດຖານ ໆລໆ

## ສິກຂາບົດທີ ໓

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິຍ້ອນໃຊ້ຝາມືຕົບອົງກຳເນີດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີ ໔ ອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີ ໔ ອົງໃຊ້ຝາມືຕົບອົງກຳເນີດກັນ

ໃນສິກຂາບົດທີ ໓ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນປະຖົມປາຣາຊິກສະມຸດຖານ ຯລຯ

## ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິຍ້ອນໃຊ້ທ່ອນຢາງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງໃຊ້ທ່ອນຢາງ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນປະຖົມປາຣາຊິກສະມຸດຖານ ຯລຯ

## ສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ໃຊ້ນ້ຳຊຳຣະເລີກເກີນ ໒ ອົງຄຸລີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ແຄວ້ນສັກກະ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງໃຊ້ນ້ຳຊຳຣະເລີກເກີນໄປ

ໃນສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນປະຖົມປາຣາຊິກສະມຸດຖານ ໆລໆ

## ສິກຂາບົດທີ ໖

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ປົນນິບັດພິກຂຸຜູ້ກຳລັງສັນດ້ວຍນ້ຳດື່ມແລະດ້ວຍການວີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງປົນນິບັດພິກຂຸຜູ້ກຳລັງສັນດ້ວຍນ້ຳດື່ມຫຼືດ້ວຍການວີ

ໃນສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ໆລໆ

## ສິກຂາບົດທີ ໗

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ອອກປາກຂໍເຂົ້າເປືອກດິບມາສັນ[១] ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງອອກປາກຂໍເຂົ້າເປືອກດິບມາສັນ

ໃນສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ໆລໆ

## ສິກຂາບົດທີ ໘

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ເທອຸດຈາຣະ ຫຼືປັດສາວະ ນ້ຳລາຍ ຂີ້ເຫຍື່ອຫຼືຂອງ ເປັນເດືອນພາຍນອກຝາ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງເທອຸດຈາຣະແດ່ ປັດສາວະແດ່ ນ້ຳລາຍແດ່ ຂີ້ເຫຍື່ອແດ່ ຂອງເປັນເງື່ອນແດ່ທີ່ພາຍນອກຝາ

ໃນສິກຂາບົດທີ ໘ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ສິກຂາບົດທີ ໙

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ເທອຸດຈາຣະ ຫຼືປັດສາວະ ນ້ຳລາຍ ຂີ້ເຫຍື່ອ ຫຼື ຂອງເປັນເງື່ອນເທິງຂອງຂຽວ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງເທອຸດຈາຣະແດ່ ປັດສາວະແດ່ ນ້ຳລາຍແດ່ ຂີ້ເຫຍື່ອແດ່ ຂອງເປັນເງື່ອນແດ່ເທິງຂອງຂຽວ

ໃນສິກຂາບົດທີ ໙ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ສິກຂາບົດທີ ໑໐

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ໄປເບິ່ງການຟ້ອນລຳ ການຂັບຮ້ອງ ການເສບ ດົນຕີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸນີສັບພັກຄີໄປເບິ່ງການຟ້ອນລຳ ການຂັບຮ້ອງ ການເສບດົນຕີ

ໃນສິກຂາບົດທີ ໑໐ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

**ລະສຸນະວັກທີ ໑ ຈົບ**

## ໔. ຣັດຕັນທະກາຣະວັກ (ອັນທະກາຣະວັກ)

### ສິກຂາບົດທີ ໑

[໔໑໙] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຢືນຖຽງຄູ່ກັນສອງຕໍ່ສອງກັບຊາຍໃນເວລາຄ່ຳຄືນ ບໍ່ມີປະທີບ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງຢືນຖຽງຄູ່ກັນສອງຕໍ່ສອງກັບຊາຍໃນເວລາຄ່ຳຄືນ ບໍ່ມີປະທີບ

ໃນສິກຂາບົດທີ ໑ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເຖັຍຍະສັດຖະສະມຸດຖານ ຯລຯ

### ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຢືນຖຽງຄູ່ກັນສອງຕໍ່ສອງກັບຊາຍໃນໂອກາດທີ່ກຳບັງຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງຢືນຖຽງຄູ່ສອງຕໍ່ສອງກັບຊາຍໃນໂອກາດທີ່ກຳບັງ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເຖີຍຍະສັດຖະສະມຸດຖານ ໗ລ໗

## ສິກຂາບົດທີ ໓

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ຢືນຖຽງຄູ່ກັນສອງຕໍ່ສອງກັບຊາຍໃນກາງແຈ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງຢືນຖຽງຄູ່ກັນສອງຕໍ່ສອງກັບຊາຍໃນກາງແຈ້ງ

ໃນສິກຂາບົດທີ ໓ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເຖີຍຍະສັດຖະສະມຸດຖານ ໗ລ໗

## ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ຢືນຖຽງຄູ່ກັນສອງຕໍ່ສອງກັບຊາຍໃນຖະໜົນໃນຮ່ອມຕັນ ຫຼືໃນທາງສາມແຍກ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາຢືນຖຽງຄູ່ກັນສອງຕໍ່ສອງກັບຊາຍໃນຖະໜົນແດ່ ໃນຮ່ອມຕັນແດ່ ໃນທາງສາມແຍກແດ່

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເຖີຍຍະສັດຖະສະມຸດຖານ ໗ລ໗

## ສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ເຂົ້າໄປສູ່ຕະກູນໃນເວລາກ່ອນສັນພັດຕາຫານ ແລ້ວນັ່ງເຫິງອາສະນະຈາກໄປໂດຍບໍ່ບອກເຈົ້າຂອງເຮືອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງເຂົ້າໄປສູ່ຕະກູນໃນເວລາກ່ອນພັດຕາຫານແລ້ວນັ່ງ ເຫິງອາສະນະຈາກໄປໂດຍບໍ່ບອກເຈົ້າຂອງເຮືອນ

ໃນສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ໗ລ໗

## ສິກຂາບົດທີ ໖

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ເຂົ້າໄປສູ່ຕະກູນໃນເວລາຫຼັງພັດຕາຫານນັ່ງເຫິງ ອາສະນະໂດຍບໍ່ບອກເຈົ້າຂອງເຮືອນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາເຂົ້າໄປສູ່ຕະກູນໃນເວລາຫຼັງພັດຕາຫານນັ່ງ ເຫິງອາສະນະຈາກໄປໂດຍບໍ່ບອກເຈົ້າຂອງເຮືອນ

ໃນສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ໗ລ໗

## ສິກຂາບົດທີ ໗

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ເຂົ້າໄປສູ່ຕະກູນໃນເວລາວິການ[១] ແລ້ວປູເອງຫຼື ໃຊ້ໃຫ້ປູບ່ອນນອນ ໂດຍບໍ່ບອກເຈົ້າຂອງເຮືອນແລ້ວນັ່ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງເຂົ້າໄປສູ່ຕະກູນໃນເວລາວິການ ປູຫຼືໃຊ້ໃຫ້ປູບ່ອນນອນ ໂດຍບໍ່ບອກເຈົ້າຂອງເຮືອນແລ້ວນັ່ງ

ໃນສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ໗ລ໗

## ສິກຂາບົດທີ ໘

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ເຂົ້າໃຈຜິດໃຫ້ຜູ້ອື່ນໂພນທະນາ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງໃຫ້ຜູ້ອື່ນໂພນທະນາຍ້ອນເຂົ້າໃຈຜິດ ຍ້ອນພິຈາຣະນາຜິດ

ໃນສິກຂາບົດທີ ໘ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ສິກຂາບົດທີ ໙

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ສາບແຊ່ງຕົນຫຼືຜູ້ອື່ນ ດ້ວຍນະຮົກຫຼືພົມມະຈັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຈັນທະກາລີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຈັນທະກາລີສາບແຊ່ງຕົນເອງແດ່ ຜູ້ອື່ນແດ່ ດ້ວຍນະຮົກແດ່ ດ້ວຍພົມມະຈັນແດ່

ໃນສິກຂາບົດທີ ໙ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ສິກຂາບົດທີ ໑໐

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຮ້ອງໄຫ້ທຸບຕີຕົນເອງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງປາຣົບໃຜ?

ຕອບ : ຊົງປາຣົບພິກຂຸນີຈັນທະກາລີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຈັນທະກາລີຮ້ອງໄຫ້ທຸບຕີຕົນເອງ

ໃນສິກຂາບົດທີ ໑໐ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

**ຣັດຕັນທະກາຣະວັກທີ ໔ ຈົບ**

## ໓. ນະຫານະວັກ(ນັກຄະວັກ)

## ສິກຂາບົດທີ ໑

[໔໔໐] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ເປືອຍກາຍອາບນ້ຳ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງປາຣົບໃຜ?

ຕອບ : ຊົງປາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງເປືອຍກາຍອາບນ້ຳ

ໃນສິກຂາບົດທີ ໑ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

## ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ໃຫ້ເຮັດຜ້າອາບນ້ຳເກີນຂະໜາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸນີສັບພັກຄີໃຊ້ຜ້າອາບນ້ຳບໍ່ໄດ້ຂະໜາດ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ສິກຂາບົດທີ ໖

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ເລາະຫຼືໃຊ້ໃຫ້ເລາະຈີວອນແລ້ວບໍ່ຫຍິບບໍ່ຂົນຂວາຍໃຫ້ຫຍິບ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາໃຫ້ເລາະຈີວອນຂອງພິກຂຸນີແລ້ວບໍ່ຫຍິບໃຫ້ທັງບໍ່ຂົນຂວາຍໃຊ້ຜູ້ອື່ນໃຫ້ຫຍິບ

ໃນສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

## ສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ໃຫ້ວາຣະຜັດປ່ຽນສັງຄາຕີທີ່ມີກຳນົດ ໕ ມື້ລ່ວງເລີຍໄປ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງຝາກຈີວອນໄວ້ກັບພິກຂຸນີທັງຫຼາຍແລ້ວມີພຽງອຸດຕະຣາສົງກັບອັນຕະຣະວາສິກຈາຣິກໄປສູ່ຊົນນະບົດ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ໗ລ໗

## ສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ໃຊ້ຈີວອນສັບປ່ຽນກັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງຫົ່ມຈີວອນຂອງພິກຂຸນີອື່ນໂດຍບໍ່ບອກກ່ອນ

ໃນສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ໗ລ໗

## ສິກຂາບົດທີ ໖

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ເຮັດອັນຕະລາຍແກ່ຈີວອນທີ່ຄະນະຈະເພິ່ງໄດ້ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາເຮັດອັນຕະລາຍແກ່ຈີວອນທີ່ຄະນະຈະເພິ່ງໄດ້

ໃນສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ສິກຂາບົດທີ ໆ

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຄັດຄ້ານການແຈກຈີວອນທີ່ຊອບທຳຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາຄັດຄ້ານການແຈກຈີວອນທີ່ຊອບທຳ

ໃນສິກຂາບົດທີ ໆ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ຜ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ສິກຂາບົດທີ ໘

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ໃຫ້ສະມະນະຈີວອນແກ່ຊາວບ້ານ ແກ່ປະຣິພາຊົກຫຼືແກ່ປະຣິພາຊິກາ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາໃຫ້ສະມະນະຈີວອນແກ່ຊາວບ້ານ

ໃນສິກຂາບົດທີ ໘ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ຜ ສະມຸດຖານ ເກີດດ້ວຍສະມຸດຖານ ຜ ສະມຸດຖານ ໗ລ໗

## ສິກຂາບົດທີ ໙

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ໃຫ້ສະໄໝແຫ່ງຈີວອນການລ່ວງໄປນຳຄວາມຫວັງໃນຈີວອນທີ່ເລື່ອນລອຍ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາໃຫ້ສະໄໝແຫ່ງຈີວອນການລ່ວງເລີຍໄປດ້ວຍຄວາມ ຫວັງໃນຈີວອນທີ່ເລື່ອນລອຍ

ໃນສິກຂາບົດທີ ໙ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ສິກຂາບົດທີ ໑໐

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຄັດຄ້ານການເດາະກະຖິນທີ່ຊອບທຳຢູ່ໄສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາຄັດຄ້ານການເດາະກະຖິນທີ່ຊອບທຳ

ໃນສິກຂາບົດທີ ໑໐ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

**ນະຫານະວັກທີ ໓ ຈົບ**

## ໔. ຕຸວັດຕະວັກ

## ສິກຂາບົດທີ ໑

[໔໔໑] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີ ໔ ອົງ ຜູ້ນອນເທິງຕຽງດຽວກັນ ຢູ່ໄສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງນອນເທິງຕຽງດຽວກັນ(ຕຽງລະ) ໔ ອົງ

ໃນສິກຂາບົດທີ ໑ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

## ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີ ໔ ອົງ ຜູ້ໃຊ້ຜ້າຜືນດຽວກັນເປັນທັງຜ້າປູນອນແລະຜ້າຫົ່ມ ນອນຮ່ວມກັນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງໃຊ້ຜ້າຜືນດຽວກັນເປັນທັງຜ້າປູນອນແລະຜ້າຫົ່ມ ນອນຮ່ວມກັນ ໔ ອົງ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ໗ລ໗

## ສິກຂາບົດທີ ໖

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຈົງໃຈກໍ່ຄວາມບໍ່ຜາສຸກແກ່ພິກຂຸນີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາຈົງໃຈກໍ່ຄວາມບໍ່ຜາສຸກແກ່ພິກຂຸນີ

ໃນສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ໗ລ໗

## ສິກຂາບົດທີ ໘

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ບໍ່ເບິ່ງແຍງຊ່ວຍເຫຼືອ ບໍໃສ່ໃຈມອບໝາຍໃຫ້ຜູ້ອື່ນເບິ່ງແຍງ ຊ່ອຍເຫຼືອສະຫະຊີວີນີຜູ້ໄດ້ຮັບຄວາມລຳບາກ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາບໍ່ເບິ່ງແຍງຊ່ວຍເຫຼືອບໍ່ໃສ່ໃຈມອບໝາຍ ໃຫ້ຜູ້ອື່ນເບິ່ງແຍງຊ່ວຍເຫຼືອສະຫະຊີວິນີຜູ້ໄດ້ຮັບຄວາມລຳບາກ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

## ສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ໃຫ້ທີ່ພັກແກ່ພິກຂຸນີແລ້ວຄຽດບໍ່ພໍໃຈລາກອອກໄປ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາໃຫ້ທີ່ພັກແກ່ພິກຂຸນີແລ້ວຄຽດບໍ່ພໍໃຈລາກອອກໄປ

ໃນສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ສິກຂາບົດທີ ໖

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ຄຸກຄີ ບໍ່ຍອມສະລະ ຈົນວ່າສູດສະມະນຸພາດຄົບ ໓ ຄັ້ງ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຈັນທະກາລີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຈັນທະກາລີຢູ່ຄຸກຄີ

ໃນສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

## ສິກຂາບົດທີ ໗

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນບ່ອນທີ່ຮູ້ກັນວ່າໜ້າຫວາດຣະແວງມີໄພເປັນຕາຢ້ານພາຍໃນຣັດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນບ່ອນທີ່ຮູ້ກັນວ່າໜ້າຫວາດຣະແວງມີໄພເປັນຕາຢ້ານພາຍໃນຣັດ

ໃນສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ৭ລ৭

## ສິກຂາບົດທີ ໘

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນບ່ອນທີ່ຮູ້ກັນວ່າໜ້າຫວາດຣະແວງມີໄພເປັນຕາຢ້ານພາຍນອກຣັດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງທ່ຽວຈາຣິກໄປບໍ່ມີກອງກວຽນເປັນເພື່ອນໃນ ທີ່ທີ່ຮູ້ກັນວ່າໜ້າຫວາດຣະແວງມີໄພເປັນຕາຢ້ານພາຍນອກຣັດ

ໃນສິກຂາບົດທີ ໘ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ৭ລ৭

## ສິກຂາບົດທີ ໙

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ທ່ຽວຈາຣິກໄປພາຍໃນພັນສາ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງທ່ຽວຈາຣິກໄປພາຍໃນພັນສາ

ໃນສິກຂາບົດທີ ໙ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ໆລໆ

## ສິກຂາບົດທີ ໑໐

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຫຼັງຢູ່ຈຳພັນສາແລ້ວບໍ່ຫຼີກຈາຣິກໄປ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນຣາດຊະຄຶ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງເມື່ອຢູ່ຈຳພັນສາແລ້ວບໍ່ຫຼີກທ່ຽວຈາຣິກໄປ

ໃນສິກຂາບົດທີ ໑໐ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດ ຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນປະຖົມປາຣາຊິກສະມຸດຖານ ໆລໆ

## ຕຸວັດຕະວັກທີ ໔ ຈົບ

## ໕. ຈິດຕາຄາຣະວັກ

### ສິກຂາບົດທີ ໑

[໔໔໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ໄປເບິ່ງໂຮງລະຄອນຫຼວງ ຫໍຈິດຕະກຳ ສວນສາທາລະນະ ອຸທະຍານ ຫຼືສະໂບກຂະຣະນີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງປາຣົບໃຜ?

ຕອບ : ຊົງປາຣົບພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີສັບພັກຄີໄປເບິ່ງໂຮງລະຄອນຫຼວງແດ່ ຫໍຈິດຕະກຳແດ່ ສວນສາທາລະນະແດ່ ອຸທະຍານແດ່ ສະໂບກຂະຣະນີແດ່

ໃນສິກຂາບົດທີ ໑ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

### ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ໃຊ້ຕັ່ງຍາວຫຼືແທ່ນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງປາຣົບໃຜ?

ຕອບ : ຊົງປາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງໃຊ້ຕັ່ງຍາວແດ່ ແທ່ນແດ່

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

### ສິກຂາບົດທີ ໓

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ປັ່ນດ້າຍ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງປັ່ນດ້າຍ

ໃນສິກຂາບົດທີ ໓ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ໗ລ໗

## ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຊ່ອຍກະທຳການຂົບຂວາຍເພື່ອຄະລຶຫັດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງຊ່ອຍທຳການຂົບຂວາຍເພື່ອຄະລຶຫັດ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ໗ລ໗

## ສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ອັນພິກຂຸນີຂໍຮ້ອງຢູ່ວ່າ "ແມ່ເຈົ້າ ໂຜດມາຊ່ອຍລະງັບ ອະທິກອນນີ້ດ້ວຍເທີ້ນ" ຮັບປາກແລ້ວ ບໍ່ຊ່ອຍລະງັບ ທັງບໍ່ຂົບຂວາຍໃຫ້ຜູ້ອື່ນຊ່ອຍລະງັບ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາອັນພິກຂຸນີຂໍຮ້ອງຢູ່ວ່າ "ແມ່ເຈົ້າ ໂຜດມາຊ່ອຍລະງັບອະທິກອນນີ້ດ້ວຍເທີ້ນ" ຮັບປາກແລ້ວ ບໍ່ຊ່ອຍລະງັບ ທັງບໍ່ຂົບຂວາຍໃຫ້ຜູ້ອື່ນຊ່ອຍລະງັບ

ໃນສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

## ສິກຂາບົດທີ ໖

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ໃຫ້ຂອງຫຍ້ຳຫຼືຂອງສັນດ້ວຍມືຂອງຕົນແກ່ຊາວບ້ານ ແກ່ປະຣິພາຊົກຫຼືປະຣິພາຊິກາ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາໃຫ້ຂອງຫຍ້ຳແດ່ ຂອງສັນແດ່ ດ້ວຍມືຂອງຕົນແກ່ຊາວບ້ານ

ໃນສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໘ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ຯລຯ

## ສິກຂາບົດທີ ໗

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ໃຊ້ຜ້າຊັບລະດູແລ້ວບໍ່ຍອມສະລະ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາໃຊ້ຜ້າຊັບລະດູແລ້ວບໍ່ຍອມສະລະ

ໃນສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໘ ສະມຸດຖານ ເປັນກະຖິນສະມຸດຖານ ຯລຯ

## ສິກຂາບົດທີ ໘

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ບໍ່ຍອມສະລະທີ່ພັກແລ້ວຫຼີກຈາຣິກໄປຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາບໍ່ຍອມສະລະທີ່ພັກແລ້ວຫຼີກຈາຣິກໄປ

ໃນສິກຂາບົດທີ ໘ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ຯລຯ

## ສິກຂາບົດທີ ໙

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ຮຽນເດຍຣັດສານວິຊາ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸນີສັບພັກຄີຮຽນເດຍຣັດສານວິຊາ

ໃນສິກຂາບົດທີ ໙ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນປະທະໂສທຳມະສະມຸດຖານ ຯລຯ

## ສິກຂາບົດທີ ໑໐

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ສອນເດຍຣັດສານວິຊາ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸນີສັບພັກຄີສອນເດຍຣັດສານວິຊາ

ໃນສິກຂາບົດທີ ໑໐ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນປະທະໂສທຳມະສະມຸດຖານ ຯລຯ

**ຈິດຕາຄາຣະວັກທີ ໕ ຈົບ**

## ໖. ອາຣາມະວັກ

### ສິກຂາບົດທີ ໑

[໔໔໓] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຮູ້ຢູ່ເຂົ້າໄປສູ່ອາຣາມທີ່ມີພິກຂຸໂດຍບໍ່ບອກ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງເຂົ້າໄປສູ່ອາຣາມໂດຍບໍ່ບອກ

ໃນສິກຂາບົດທີ ໑ ນັ້ນມີ ໑ ພຣະບັນຍັດ ໔ ອະນຸບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ໗ລ໗

### ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ດ່າກ່າວໂທດພິກຂຸ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນເວສາລີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸນີສັບພັກຄີດ່າທ່ານພຣະອຸບາລີ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

### ສິກຂາບົດທີ ໓

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຂີ້ງຄຽດກ່າວໂທດຄະນະ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາລົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາຂີ້ງຄຸງດກ່າວໂທດຄະນະ

ໃນສິກຂາບົດທີ ໓ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ໄດ້ຮັບນິມົນແລ້ວບອກຫ້າມພັດຕາຫານແລ້ວ ຫຍໍ້າຂອງຫຍໍ້າຫຼືສັນຂອງສັນອີກ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາລົບໃຜ?

ຕອບ : ຊົງຜາລົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງສັນສຳເລັດແລ້ວ ບອກຫ້າມພັດຕາຫານແລ້ວ ຍັງສັນໃນບ່ອນອື່ນອີກ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຯລຯ

## ສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຫວງຕະກູນ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາລົບໃຜ?

ຕອບ : ຊົງຜາລົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງຫວງຕະກູນ

ໃນສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ສິກຂາບົດທີ ໖

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຈຳພັນສາໃນອາວາດທີ່ບໍ່ມີພິກຂຸ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງຈຳພັນສາໃນອາວາດທີ່ບໍ່ມີພິກຂຸ

ໃນສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນເອລະກະໂລມະສະມຸດຖານ ໗ລ໗

## ສິກຂາບົດທີ ໗

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ຈຳພັນສາແລ້ວບໍ່ປະວາຣະນາໃນສົງ ໔ ຝ່າຍ ດ້ວຍຖານະ ໓ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງຈຳພັນສາແລ້ວບໍ່ປະວາຣະນາຕໍ່ພິກຂຸສົງ

ໃນສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ໗ລ໗

## ສິກຂາບົດທີ ໘

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ບໍ່ໄປຮັບໂອວາດຫຼືທຳເປັນເຫດຢູ່ຮ່ວມກັນຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ແຄວ້ນສັກກະ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸນີສັບພັກຄີບໍ່ໄປຮັບໂອວາດ

ໃນສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນປະຖົມປາຣາຊິກສະມຸດຖານ ຯລຯ

## ສິກຂາບົດທີ ໙

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ບໍ່ຖາມອຸໂປສົດ ບໍ່ຂໍໂອວາດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງບໍ່ຖາມອຸໂປສົດ ບໍ່ຂໍໂອວາດ

ໃນສິກຂາບົດທີ ໙ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

## ສິກຂາບົດທີ ໑໐

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ບໍ່ບອກສົງຫຼືຄະນະໃຊ້ໃຫ້ບົ່ງຝີຫຼືບາດແຜທີ່ເກີດ ໃນຮົ່ມຜ້າຢູ່ກັນສອງຕໍ່ສອງກັບຊາຍ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງໃຊ້ຊາຍໃຫ້ບົ່ງຝີທີ່ເກີດໃນຮົ່ມຜ້າຢູ່ກັນສອງຕໍ່ສອງ ກັບຊາຍ

ໃນສິກຂາບົດທີ ໑໐ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດ ຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ເປັນກະຖິນສະມຸດຖານ ຯລຯ

**ອາຣາມະວັກທີ ໖ ຈົບ**

## ກ. ຄັບພິນີວັກ

### ສິກຂາບົດທີ ໑

[໔໔໔] ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ບວດໃຫ້ສະຕີຖືພາ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງບວດໃຫ້ສະຕີຖືພາ

ໃນສິກຂາບົດທີ ໑ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

### ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ບວດໃຫ້ສະຕີມີລູກຍັງດື່ມນົມ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງບວດໃຫ້ສະຕີມີລູກຍັງດື່ມນົມ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

### ສິກຂາບົດທີ ໓

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ບວດໃຫ້ສິກຂະມານາໆຜູ້ຍັງບໍ່ໄດ້ສຶກສາສິກຂາ ໃນທຳ ໖ ຂໍ້ ຄົບ ໔ ປີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງບວດໃຫ້ສິກຂະມານາຜູ້ຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຄົບ ໒ ປີ

ໃນສິກຂາບົດທີ ໓ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ບວດໃຫ້ສິກຂະມານາຜູ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີແລ້ວ ແຕ່ສົງຍັງບໍ່ໄດ້ສົມມຸດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງບວດໃຫ້ສິກຂະມານາຜູ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໒ ປີ ແຕ່ສົງຍັງບໍ່ໄດ້ສົມມຸດ

ໃນສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕິແກ່ພິກຂຸນີຜູ້ບວດໃຫ້ຍິງທີ່ມີຄອບຄົວມີອາຍຸຕ່ຳກວ່າ ໑໒ ປີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງບວດໃຫ້ຍິງທີ່ມີຄອບຄົວມີອາຍຸຕ່ຳກວ່າ ໑໒ ປີ

ໃນສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ສິກຂາບົດທີ ໖

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໔ ປີ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ຍັງບໍ່ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໔ ປີ

ໃນສິກຂາບົດທີ ໖ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ສິກຂາບົດທີ ໗

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໔ ປີ ແຕ່ສົງຍັງບໍ່ໄດ້ສົມມຸດ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງບວດໃຫ້ຍິງທີ່ມີຄອບຄົວມີອາຍຸຄົບ ໑໔ ປີ ຜູ້ໄດ້ສຶກສາສິກຂາໃນທຳ ໖ ຂໍ້ ຕະຫຼອດ ໔ ປີ ແຕ່ສົງຍັງບໍ່ໄດ້ສົມມຸດ

ໃນສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ສິກຂາບົດທີ ໘

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຈິດຕີແກ່ພິກຂຸນີຜູ້ບວດໃຫ້ສະຫະຊີວິນີແລ້ວບໍ່ອະນຸເຄາະ ທັງບໍ່ໃຫ້ຜູ້ອື່ນອະນຸເຄາະຕະຫຼອດ ໔ ປີ ຢູ່ໃສ?

ຕອບ : ອາບັດຂອງພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ບັນດາ
ວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື (໑) ສີລະວິບັດ (໒) ອາຈາຣະວິບັດ

ฯລฯ

## ໕. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບວິບັດໃນປະຕິເທສະນີຍະກັນ

ฯລฯ

## ປະຕິເທສະນີຍະສິກຂາບົດທີ ໘

ຖາມ : ອາບັດຂອງພິກຂຸນີຜູ້ອອກປາກຂໍນົມສົ້ມມາສັນ ບັນດາວິບັດ ໔ ຢ່າງ ຈັດເປັນ
ວິບັດທີ່ໃດ?

ຕອບ : ອາບັດຂອງພິກຂຸນີຜູ້ອອກປາກຂໍນົມສົ້ມມາສັນ ບັນດາວິບັດ ໔ ຢ່າງ ຈັດເປັນ
ວິບັດ ໑ ຢ່າງ ຄື ອາຈາຣະວິບັດ

**ວິປັດຕິວາຣະທີ ໓ ຈົບ**

# ໔. ສັງຄະຫະວາຣະ

# ວາຣະວ່າດ້ວຍການຈັດເຂົ້າກອງອາບັດ

## ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບຈັດກອງອາບັດໃນປາຣາຊິກກັນ

## ປາຣາຊິກສິກຂາບົດທີ ໕

[໔໔໔] ຖາມ : ອາບັດຂອງພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ?

ຕອບ : ອາບັດຂອງພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ບັນດາ ກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໓ ກອງ ຄື (໑) ກອງອາບັດປາຣາ ຊິກ (໒) ກອງ ອາບັດຖຸນລັດໄຈ (໓) ກອງອາບັດທຸກກົດ

ຯລຯ

## ໕. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບຈັດກອງອາບັດໃນປະຕິເທສະນີຍະກັນ

ຯລຯ

### ປະຕິເທສະນີຍະສິກຂາບົດທີ ໑

ຖາມ : ອາບັດຂອງພິກຂຸນີຜູ້ອອກປາກຂໍນົມສົ້ມມາສັນ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ?

ຕອບ : ອາບັດຂອງພິກຂຸນີຜູ້ອອກປາກຂໍນົມສົ້ມມາສັນ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໒ ກອງ ຄື (໑) ກອງອາບັດປະຕິເທສະນີຍະ (໒) ກອງອາບັດທຸກກົດ

**ສັງຄະຫະວາຣະທີ ໔ ຈົບ**

# ໕. ສະມຸດຖານວາຣະ

# ວາຣະວ່າດ້ວຍສະມຸດຖານ

## ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບສະມຸດຖານອາບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໕

[໒໕໓] ຖາມ : ອາບັດຂອງພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ອາບັດຂອງພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ບັນດາ ສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍ ກັບຈິດ ບໍ່ແມ່ນເກີດທາງວາຈາ

ຯລຯ

## ໕. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບສະມຸດຖານອາບັດໃນປະຕິເທສະນີຍະກັນ

ຯລຯ

## ປະຕິເທສະນີຍະສິກຂາບົດທີ ໗

ຖາມ : ອາບັດຂອງພິກຂຸນີຜູ້ອອກປາກຂໍນົມສົ້ມມາສັນ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸddwwດຖານທໍ່ໃດ?

ຕອບ : ອາບັດຂອງພິກຂຸນີຜູ້ອອກປາກຂໍນົມສົ້ມມາສັນ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດ ທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍກັບວາຈາ ບໍ່ ແມ່ນເກີດທາງຈິດ (໓) ເກີດທາງ ກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໔) ເກີດທາງກາຍວາຈາກັບຈິດ

**ສະມຸດຖານວາຣະທີ ໕ ຈົບ**

# ໖. ອະທິກະຣະນະວາຣະ

# ວາຣະວ່າດ້ວຍການຈັດເປັນອະທິກອນ

## ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບອະທິກອນໃນປາຣາຊິກກັນ

## ປາຣາຊິກສິກຂາບົດທີ ໕

[໔໔໔] ຖາມ : ອາບັດຂອງພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ

ຕອບ : ອາບັດຂອງພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ฯลฯ

## ๕. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບອະທິກອນໃນປະຕິເທສະນີຍະກັນ

ฯลฯ

## ປະຕິເທສະນີຍະສິກຂາບົດທີ ๓

ຖາມ : ອາບັດຂອງພິກຂຸນີຜູ້ອອກປາກຂໍນົມສົ້ມມາສັນ ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ

ຕອບ : ອາບັດຂອງພິກຂຸນີຜູ້ອອກປາກຂໍນົມສົ້ມມາສັນ ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

**ອະທິກະຣະນະວາຣະທີ ๖ ຈົບ**

# ๗. ສະມະຖະວາຣະ

## ວາຣະວ່າດ້ວຍການລະງັບດ້ວຍສະມະຖະ

## ๑. ປາຣາຊິກກັນ

ຄຳຖາມ - ຄຳຕອບສະມະຖະໃນປາຣາຊິກກັນ

## ປາຣາຊິກສິກຂາບົດທີ ๕

[໔໔໕] ຖາມ : ອາບັດຂອງພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ບັນດາສະມະຖະ ๗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດຂອງພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ບັນດາສະມະຖະ ๗ ຢ່າງ ລະງັບດ້ວຍສະມະຖະ ๓ ຢ່າງ ຄື (๑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (๓) ສຳມຸຂາວິໄນກັບຕິນະວັດຖາຣະກະ

ฯลฯ

## ໕. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບສະມະຖະໃນປະຕິເທສະນີຍະກັນ

໗໑໗

### ປະຕິເທສະນີຍະສິກຂາບົດທີ ໗

ຖາມ : ອາບັດຂອງພິກຂຸນີຜູ້ອອກປາກຂໍນົມສົ້ມມາສັນ ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດຂອງພິກຂຸນີຜູ້ອອກປາກຂໍນົມສົ້ມມາສັນ ບັນດາສະມະຖະ ໗ ແນວລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນກັບຕິນະວັດຖາຣະກະ

**ສະມະຖະວາຣະທີ ໗ ຈົບ**

# ໗. ສະມຸດຈະຍະວາຣະ

## ວາຣະວ່າດ້ວຍການສະຫຼຸບລວມ

## ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບສະຫຼຸບລວມອາບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໕

[໔໔໓] ຖາມ : ພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ຕ້ອງອາບັດທີ່ໃດ?

ຕອບ : ພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ຕ້ອງອາບັດ ໓ ຢ່າງ ຄື

໑. ຍິນດີການຈັບຕ້ອງບໍລິເວນໃຕ້ບ່າລົງມາ ເໜືອຫົວເຂົ່າຂຶ້ນໄປ ຕ້ອງອາບັດປາຣາຊິກ

໒. ຍິນດີການຈັບຕ້ອງບໍລິເວນເໜືອບ່າຂຶ້ນໄປ ໃຕ້ຫົວເຂົ່າລົງມາ ຕ້ອງອາບັດຖຸນລັດໄຈ

໓. ຍິນດີການຈັບຕ້ອງຂອງເບື້ອງດ້ວຍກາຍ ຕ້ອງອາບັດທຸກກົດ

ພິກຂຸນີຜູ້ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ ຕ້ອງອາບັດ ໓ ຢ່າງ ເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ? ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື

(໑) ສີລະວິບັດ

(໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໓ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດຖຸນລັດໄຈ (໓) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນກັບຕິນະວັດຖາຣະກະ

ຯລຯ

## ໔. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບສະຫຼຸບລວມອາບັດໃນປະຕິເທສະນີຍະກັນ

ຯລຯ

## ປະຕິເທສະນີຍະສິກຂາບົດທີ ໗

ຖາມ : ພິກຂຸນີອອກປາກຂໍນົມສົ້ມມາສັນ ຕ້ອງອາບັດທີ່ໃດ?

ຕອບ : ພິກຂຸນີອອກປາກຂໍນົມສົ້ມມາສັນ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າຈະສັນ ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປະຕິເທສະນີຍະ ທຸກ ໆ ຄຳກືນ

ພິກຂຸນີອອກປາກຂໍນົມສົ້ມມາສັນ ຕ້ອງອາບັດ ໒ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາກອງ ອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດ

ຖານ ເກີດດ້ວຍສະມຸດຖານທີ່ໃດ? ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໑ ຢ່າງ ຄື

ອາຈາຣະວິບັດ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໒ ກອງ ຄື (໑) ກອງອາບັດປະຕິເທສະນີຍະ (໒) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໓) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໔) ເກີດທາງກາຍ ວາຈາກັບຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ

(໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນກັບຕິນະວັດຖາຣະກະ

**ສະມຸດຈະຍະວາຣະທີ ໗ ຈົບ**

# ໑. ກັດຖະປັນຍັດຕິວາຣະ

## ວາຣະວ່າດ້ວຍບັນຍັດ ຢູ່ໃສ?

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບໃນປາຣາຊິກກັນ

[໔໕໗] ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດປາຣາຊິກ ຍ້ອນຄວາມຍິນດີການຖືກຕ້ອງກາຍເປັນປັດໄຈ ຢູ່ໃສ? ຊົງຜາຣິບໃຜ? ຍ້ອນເລື້ອງອັນໃດ? ໆລໆ ໃຜນຳມາ

### ປາຣາຊິກສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນຊົງບັນຍັດປາຣາຊິກ ຍ້ອນຄວາມຍິນດີການຖືກຕ້ອງກາຍເປັນປັດໄຈຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີສຸນທະຣີນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີສຸນທະຣີນັນທາ ກຳໜັດຍິນດີການຖືກຕ້ອງກາຍຂອງຊາຍຜູ້ກຳໜັດ

ຖາມ : ໃນປາຣາຊິກສິກຂາບົດທີ ໕ ນັ້ນມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະ-ປັນນະບັນຍັດຢູ່ບໍ?

ຕອບ : ໃນປາຣາຊິກສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບໍ່ມີພຣະອະນຸບັນຍັດ ແລະອະນຸປະປັນນະບັນຍັດ

ຖາມ : ມີສັບພັດຖະບັນຍັດ ປະເທສະບັນຍັດຢູ່ບໍ

ຕອບ : ມີສັບພັດຖະບັນຍັດ

ຖາມ : ມີສາທາລະນະບັນຍັດ ອະສາທາລະນະບັນຍັດຢູ່ບໍ?

ຕອບ : ມີອະສາທາລະນະບັນຍັດ

ຖາມ : ມີເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ຕອບ : ມີເອກະໂຕບັນຍັດ

ຖາມ : ບັນດາພຣະປາຕິໂມກຂຸດເທດ ໘ ອຸດເທດ ປາຣາຊິກສິກຂາບົດທີ ໕ ນັ້ນ ຈັດເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ?

ຕອບ : ຈັດເຂົ້າໃນນິທານຸເທດ ນັບເນື່ອງໃນນິທານຸເທດ

ຖາມ : ມາສູ່ອຸດເທດ ໂດຍອຸເທດໃດ

ຕອບ : ມາສູ່ອຸດເທດ ໂດຍອຸດເທດທີ ໘

ຖາມ : ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ຕອບ : ເປັນສີລະວິບັດ

ຖາມ : ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?

ຕອບ : ເປັນກອງອາບັດປາຣາຊິກ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ຯລຯ

ຖາມ : ໃຜນຳມາ

ຕອບ : ພຣະເຖຣະທັງຫຼາຍນຳສືບ ໆ ກັນມາ

## ຣາຍນາມພຣະເຖຣະຜູ້ຊົງຈຳພຣະວິໄນສືບກັນມາ

ພຣະເຖຣະເຫຼົ່ານີ້ ຄື ພຣະອຸບາລີ ພຣະຂ້າທາສະກະ ພຣະໂສນະກະ ພຣະສິກຄະວະ ແລະພຣະໂມກຄັນລີບຸດ ລວມເປັນ ៥ ອົງ ເປັນຜູ້ນຳພຣະວິໄນສືບ ໆ ກັນມາໃນຊົມພູທະວີບອັນມີສີຣິ

ຈາກນັ້ນ ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ຄື ພຣະມະຫິນທະ ພຣະອິດຕິຍະ ພຣະອຸດຕິຍະ ພຣະສຳພະລະ ຯລຯ

ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຮູ້ພຣະວິໄນ ສະຫຼາດໃນມັກ ໄດ້ປະກາດພຣະວິໄນປິດົກໄວ້ໃນເກາະຕາມພະປັນນີ

## ປາຣາຊິກສິກຂາບົດທີ ໓

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກ ຍ້ອນການປົກປິດໂທດເປັນປັດໄຈ ຢູ່ໄສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາຮູ້ຢູ່ບໍ່ທັກທ້ວງພິກຂຸນີຜູ້ຕ້ອງທຳຄືປາຣາຊິກ ດ້ວຍຕົນເອງ ບໍ່ບອກແກ່ຄະນະ

ໃນປາຣາຊິກສິກຂາບົດທີ ໓ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

## ປາຣາຊິກສິກຂາບົດທີ ៤

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກ ຍ້ອນບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ເປັນປັດໄຈ ຢູ່ໄສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາປະພຶດຕາມພິກຂຸອະຣິດຖະຜູ້ມີບັນພະບຸຣຸດ ເປັນນາຍພານຂ້ານົກແຮ້ງ ທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳ

ໃນປາຣາຊິກສິກຂາບົດທີ ๗ ນັ້ນມີ ๑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານ ๑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ໆລໆ

## ປາຣາຊິກສິກຂາບົດທີ ๘

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປາຣາຊິກ ຍ້ອນເຮັດວັດຖຸຄົບທັງ ๘ ປະການເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພວກພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸນີສັບພັກຄີເຮັດວັດຖຸຄົບທັງ ๘ ປະການ

ໃນປາຣາຊິກສິກຂາບົດທີ ๘ ນັ້ນມີ ๑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານ ๑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ໆລໆ

**ປາຣາຊິກ ๘ ສິກຂາບົດ ຈົບ**

## ๔. ສັງຄາທິເສສະກັນ

ຄຳຖາມ - ຄຳຕອບໃນສັງຄາທິເສສະກັນ

[๔๔๗] ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນພິກຂຸນີຜູ້ກໍ່ຄະດີພິພາດເປັນປັດໄຈ ຢູ່ໃສ? ຊົງຜາຣົບໃຜ? ຍ້ອນເລື້ອງອັນໃດ? ໆລໆ ໃຜນຳມາ

## ສັງຄາທິເສດສິກຂາບົດທີ ๑

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນພິກຂຸນີຜູ້ກໍ່ຄະດີພິພາດເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາກໍ່ຄະດີພິພາດ

ຖາມ : ໃນສັງຄາທິເສດສິກຂາບົດທີ ໑ ນັ້ນມີພຣະບັນຍັດ ພຣະອະນຸບັນຍັດ ອະນຸປະປັນນະບັນຍັດຢູ່ບໍ?

ຕອບ : ໃນສັງຄາທິເສດສິກຂາບົດທີ ໑ ນັ້ນມີ ໑ ພຣະບັນຍັດ ບໍ່ມີພຣະອະນຸບັນຍັດ ແລະອະນຸປະປັນນະບັນຍັດ

ຖາມ : ມີສັບພັດຖະບັນຍັດ ປະເທສະບັນຍັດຢູ່ບໍ

ຕອບ : ມີສັບພັດຖະບັນຍັດ

ຖາມ : ມີສາທາລະນະບັນຍັດ ອະສາທາລະນະບັນຍັດຢູ່ບໍ?

ຕອບ : ມີອະສາທາລະນະບັນຍັດ

ຖາມ : ມີເອກະໂຕບັນຍັດ ອຸພະໂຕບັນຍັດຢູ່ບໍ?

ຕອບ : ມີເອກະໂຕບັນຍັດ

ຖາມ : ບັນດາພຣະປາຕິໂມກຂຸດເທດ ໔ ອຸດເທດ ສັງຄາທິເສດສິກຂາບົດທີ ໑ ນີ້ຈັດເຂົ້າໃນອຸດເທດໃດ? ນັບເນື່ອງໃນອຸດເທດໃດ?

ຕອບ : ຈັດເຂົ້າໃນນິທານຸດເທດ ນັບເນື່ອງໃນນິທານຸດເທດ

ຖາມ : ມາສູ່ອຸດເທດ ໂດຍອຸດເທດໃດ?

ຕອບ : ມາສູ່ອຸດເທດ ໂດຍອຸດເທດທີ ໓

ຖາມ : ບັນດາວິບັດ ໔ ຢ່າງ ເປັນວິບັດແນວໃດ?

ຕອບ : ເປັນສີລະວິບັດ

ຖາມ : ບັນດາກອງອາບັດ ໗ ກອງ ເປັນກອງອາບັດໃດ?

ຕອບ : ເປັນກອງອາບັດສັງຄາທິເສດ

ຖາມ : ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໔) ເກີດທາງກາຍວາຈາກັບຈິດ ຯລຯ

ຖາມ : ໃຜນຳມາ

ຕອບ : ພຣະເຖຣະທັງຫຼາຍນຳສືບ ໆ ກັນມາ

## ຣາຍນາມພຣະເຖຣະຜູ້ຊົງຈຳພຣະວິໄນສືບກັນມາ

ພຣະເຖຣະເຫຼົ່ານີ້ ຄື ພຣະອຸບາລີ ພຣະຂ້າທາສະກະ ພຣະໂສນະກະ ພຣະສິກຄະວະ ແລະພຣະໂມກຄັນລີບຸດ ລວມເປັນ ໕ ອົງ

ເປັນຜູ້ນຳພຣະວິໄນສືບ ໆ ກັນມາໃນຊົມພູທະວີບອັນມີສີຣີ
ຈາກນັ້ນ ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້
ຄື ພຣະມະຫິນທະ ພຣະອິດຕິຍະ ພຣະອຸດຕິຍະ ພຣະສຳພະລະ ຯລຯ
ພຣະເຖຣະຜູ້ປະເສີດມີປັນຍາຫຼາຍເຫຼົ່ານີ້ ຮູ້ພຣະວິໄນ
ສະຫຼາດໃນມັກ ໄດ້ປະກາດພຣະວິໄນປິດົກໄວ້ໃນເກາະຕາມພະປັນນີ

## ສັງຄາທິເສດສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນການບວດໃຫ້ສະຕີຜູ້ເປັນໂຈນເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາບວດໃຫ້ສະຕີຜູ້ເປັນໂຈນ

ໃນສັງຄາທິເສດສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍ ໔ ສະມຸດຖານ ຄື (໑) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໔) ເກີດທາງກາຍວາຈາກັບຈິດ ຯລຯ

## ສັງຄາທິເສດສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນພິກຂຸນີໄປສູ່ບໍລິເວນເຮືອນອົງດຽວເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງໄປສູ່ບໍລິເວນເຮືອນອົງດຽວ

ໃນສັງຄາທິເສດສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ໕ ພຣະອະນຸບັນຍັດ ບັນດາ ສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນປະຖົມປາຣາຊິກ ສະມຸດຖານ ຯລຯ

## ສັງຄາທິເສດສິກຂາບົດທີ ໔

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນພິກຂຸນີຮຽກພິກຂຸນີທີ່ສົງພ້ອມພຽງກັນລົງອຸກເຂປະນີຍະ ກຳ ໂດຍທຳ ໂດຍວິໄນ ໂດຍສັດຖຸສາດໃຫ້ກັບເຂົ້າໝູ່ ໂດຍບໍ່ບອກການກາຣົກສົງ ທັງບໍ່ຮັບຮູ້ສັນທະຂອງຄະນະເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາຮຽກພິກຂຸນີທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳ ໂດຍທຳ ໂດຍວິໄນ ໂດຍສັດຖຸສາດໃຫ້ກັບເຂົ້າໝູ່ ໂດຍບໍ່ບອກກາຣົກສົງ ທັງບໍ່ຮັບຮູ້ສັນທະຂອງຄະນະ

ໃນສັງຄາທິເສດສິກຂາບົດທີ ໔ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

## ສັງຄາທິເສດສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນພິກຂຸນີມີຄວາມກຳໜັດ ຮັບຂອງຫຍ້ຳ ຫຼືຂອງຂ້ອຍຈາກ ມືຂອງຊາຍຜູ້ກຳໜັດ ດ້ວຍມືຂອງຕົນແລ້ວສັນເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີສຸນທະຣີນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີສຸນທະຣີນັນທາກຳໜັດ ຮັບອາມິດຈາກມືຂອງຊາຍຜູ້ກຳໜັດ

ໃນສັງຄາທິເສດສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນປະຖົມປາຣາຊິກສະມຸດຖານ ຯລຯ

## ສັງຄາທິເສດສິກຂາບົດທີ ໕

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນພິກຂຸນີສົ່ງເສີມກ່າວຊັກຊວນວ່າ "ແມ່ເຈົ້າ ຊາຍຜູ້ນັ້ນຈະກຳໜັດບໍ່ກຳໜັດກໍຕາມ ເຮັດຫຍັງທ່ານບໍ່ໄດ້ ຍ້ອນທ່ານບໍ່ກຳໜັດ ນິມົນເທີ້ນ ແມ່ເຈົ້າ ຊາຍຜູ້ນັ້ນຈະຖວາຍສິ່ງໃດເປັນຂອງຫຍ້ຳຫຼືຂອງສັນກໍຕາມແກ່ທ່ານ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນ ແລ້ວຫຍ້ຳຫຼືສັນເທີ້ນ" ດັ່ງນີ້ ເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີອົງໜຶ່ງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີອົງໜຶ່ງສົ່ງເສີມກ່າວຊັກຊວນວ່າ "ແມ່ເຈົ້າ ຊາຍຜູ້ນັ້ນຈະກຳໜັດບໍ່ກຳໜັດກໍຕາມ ກໍເຮັດຫຍັງທ່ານບໍ່ໄດ້ ຍ້ອນທ່ານບໍ່ກຳໜັດ ນິມົນເທີ້ນ ແມ່ເຈົ້າ ຊາຍຜູ້ນັ້ນຈະຖວາຍສິ່ງໃດເປັນຂອງຫຍ້ຳຫຼືຂອງສັນກໍຕາມແກ່ທ່ານ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນ ແລ້ວຫຍ້ຳຫຼືສັນເທີ້ນ"

ໃນສັງຄາທິເສດສິກຂາບົດທີ ໕ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ສັງຄາທິເສດສິກຂາບົດທີ ໗

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນພິກຂຸນີຜູ້ໂກດ ບໍ່ພໍໃຈ ບໍ່ຍອມສະລະກຳ ຈົນວ່າ ສົງສູດສະມະນຸພາດຄົບ ໓ ຄັ້ງເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງຜາຣົບໃຜ?

ຕອບ : ຊົງຜາຣົບພິກຂຸນີຈັນທະກາລີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຈັນທະກາລີຄຽດບໍ່ພໍໃຈກ່າວແນວນີ້ວ່າ "ເຮົາຂໍບອກ ຄືນພຣະພຸດທະ ບອກຄືນພຣະທຳ ບອກຄືນພຣະສົງ ບອກຄືນສິກຂາ

ໃນສັງຄາທິເສດສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ຯລຯ

## ສັງຄາທິເສດສິກຂາບົດທີ ໘

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນພິກຂຸນີຜູ້ຖືກຕັດສິນໃຫ້ປຣາໄຊຄະດີໃນອະທິກອນບາງເລື້ອງໂກດ ບໍ່ ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຈັນທະກາລີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຈັນທະກາລີຖືກຕັດສິນໃຫ້ປຣາໄຊຄະດີໃນອະທິກອນບາງເລື້ອງຄຽດບໍ່ພໍໃຈ ກ່າວແນວນີ້ວ່າ "ພວກພິກຂຸນີລຳອຽງຍ້ອນຮັກ ພວກພິກຂຸນີລຳອຽງ ຍ້ອນຊັງ ພວກພິກຂຸນີລຳອຽງຍ້ອນຫຼົງ ພວກພິກຂຸນີລຳອຽງຍ້ອນຢ້ານ

ໃນສັງຄາທິເສດສິກຂາບົດທີ ໘ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ៗລៗ

## ສັງຄາທິເສດສິກຂາບົດທີ ໙

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນພິກຂຸນີທັງຫຼາຍຄຸກຄີກັນ ບໍ່ຍອມສະລະກຳຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຫຼາຍອົງ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຫຼາຍອົງ ຢູ່ຄຸກຄີກັນ

ໃນສັງຄາທິເສດສິກຂາບົດທີ ໙ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ ៗລៗ

## ສັງຄາທິເສດສິກຂາບົດທີ ໑໐

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດສັງຄາທິເສດ ຍ້ອນພິກຂຸນີສົ່ງເສີມກ່າວຊັກຊວນວ່າ "ແມ່ເຈົ້າ

ທັງຫຼາຍ ທ່ານທັງຫຼາຍຈົ່ງຢູ່ຄຸກຄີກັນ ຢ່າແຍກກັນຢູ່" ຍັງບໍ່ຍອມສະລະກໍາ ຈົນ ວ່າສົງສູດ ສະມະນຸພາດຄົບ ໓ ຄັ້ງເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພິກຂຸນີຖຸນລະນັນທາ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພິກຂຸນີຖຸນລະນັນທາສົ່ງເສີມກ່າວຊັກຊວນວ່າ "ແມ່ເຈົ້າທັງຫຼາຍ ຂໍ ທ່ານທັງຫຼາຍຈົ່ງຢູ່ຄຸກຄີກັນ ຢ່າແຍກກັນຢູ່"

ໃນສັງຄາທິເສດສິກຂາບົດທີ ໑໐ ນັ້ນມີ ໑ ພຣະບັນຍັດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ເປັນທຸຣະນິກເຂປະສະມຸດຖານ

ຯລຯ

## ໕. ປະຕິເທສະນີຍະກັນ

ຄໍາຖາມ - ຄໍາຕອບໃນປະຕິເທສະນີຍະກັນ

ຯລຯ

## ປະຕິເທສະນີຍະສິກຂາບົດທີ ໗

ຖາມ : ພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າພຣະອົງນັ້ນ ຜູ້ຊົງຮູ້ຊົງເຫັນ ຊົງບັນຍັດປະຕິເທສະນີຍະ ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນເປັນປັດໄຈ ຢູ່ໃສ?

ຕອບ : ຊົງບັນຍັດ ຢູ່ນະຄອນສາວັດຖີ

ຖາມ : ຊົງພາຣົບໃຜ?

ຕອບ : ຊົງພາຣົບພວກພິກຂຸນີສັບພັກຄີ

ຖາມ : ຍ້ອນເລື້ອງອັນໃດ?

ຕອບ : ຍ້ອນເລື້ອງທີ່ພວກພິກຂຸນີສັບພັກຄີອອກປາກຂໍນົມສົ້ມມາສັນ

ໃນປະຕິເທສະນີຍະສິກຂາບົດທີ ໗ ນັ້ນມີ ໑ ພຣະບັນຍັດ ໑ ພຣະອະນຸບັນຍັດ ບັນດາ ສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດ ທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດ ທາງຈິດ (໓) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໔) ເກີດທາງກາຍວາຈາກັບຈິດ

ຯລຯ

**ກັດຖະປັນຍັດຕິວາຣະທີ ໑ ຈົບ**

# ໔. ກະຕາປັດຕິວາຣະ

## ວາຣະວ່າດ້ວຍຕ້ອງອາບັດທີ່ໃດ?

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບຈຳນວນອາບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໕

[໔໕໗] ຖາມ : ຍ້ອນຍິນດີການຖືກຕ້ອງກາຍເປັນປັດໄຈ ຕ້ອງອາບັດທີ່ໃດ?

ຕອບ : ຍ້ອນຍິນດີການຖືກຕ້ອງກາຍເປັນປັດໄຈ ຕ້ອງອາບັດ ໕ ຢ່າງ ຄື

໑. ພິກຂຸນີຜູ້ກຳໜັດ ຍິນດີການຖືກຕ້ອງບໍລິເວນໃຕ້ບ່າລົງມາ ເໜືອຫົວເຂົ່າຂຶ້ນໄປຂອງຊາຍຜູ້ກຳໜັດ ຕ້ອງອາບັດປາຣາຊິກ

໒. ພິກຂຸໃຊ້ກາຍຈັບຕ້ອງກາຍ ຕ້ອງອາບັດສັງຄາທິເສດ

໓. ພິກຂຸໃຊ້ກາຍຈັບຕ້ອງຂອງທີ່ເນື່ອງດ້ວຍກາຍ ຕ້ອງອາບັດຖຸນລັດໄຈ

໔. ພິກຂຸໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງຂອງເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

໕. ພິກຂຸໃຊ້ນີ້ວຈີ້ກັນ ຕ້ອງອາບັດປາຈິດຕີ

ຍ້ອນຍິນດີການຖືກຕ້ອງກາຍເປັນປັດໄຈ ຕ້ອງອາບັດ ໕ ຢ່າງເຫຼົ່ານີ້

### ປາຣາຊິກສິກຂາບົດທີ ໖

ຖາມ : ຍ້ອນປົກປິດໂທດເປັນປັດໄຈ ຕ້ອງອາບັດທີ່ໃດ?

ຕອບ : ຍ້ອນປົກປິດໂທດເປັນປັດໄຈ ຕ້ອງອາບັດ ໔ ຢ່າງ ຄື

໑. ພິກຂຸນີຮູ້ຢູ່ວ່າພິກຂຸນີຕ້ອງກະທຳຄືປາຣາຊິກປົກປິດໄວ້ ຕ້ອງອາບັດປາຣາຊິກ

໒. ພິກຂຸນີສົງໄສປົກປິດໄວ້ ຕ້ອງອາບັດຖຸນລັດໄຈ

໓. ພິກຂຸປົກປິດອາບັດສັງຄາທິເສດ ຕ້ອງອາບັດປາຈິດຕີ

໔. ພິກຂຸປົກປິດອາຈາຣະວິບັດ ຕ້ອງອາບັດທຸກກົດ

ຍ້ອນປົກປິດໂທດເປັນປັດໄຈ ຕ້ອງອາບັດ ໔ ຢ່າງເຫຼົ່ານີ້

## ປາຣາຊິກສິກຂາບົດທີ ໗

ຖາມ : ຍ້ອນບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ເປັນປັດໄຈ ຕ້ອງອາບັດ ໕ ຢ່າງ ຄື

໑. ພິກຂຸນີປະພຶດຕາມພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຈົບຍັດຕິ ຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ

໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດປາຣາຊິກ

໔. ພິກຂຸນີປະພຶດຕາມພິກຂຸຜູ້ທຳລາຍສົງ ບໍ່ຍອມສະລະກຳ ຈົນວ່າ ສົງສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດສັງຄາທິເສດ

໕. ບໍ່ຍອມສະລະທິດຖິບາບ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດປາຈິດຕີ

ຍ້ອນບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງເປັນປັດໄຈ ຕ້ອງອາບັດ ໕ ຢ່າງເຫຼົ່ານີ້

## ປາຣາຊິກສິກຂາບົດທີ ໘

ຖາມ : ຍ້ອນເຮັດວັດຖຸຄົບທັງ ໘ ປະການເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນເຮັດວັດຖຸຄົບທັງ ໘ ປະການເປັນປັດໄຈ ຕ້ອງອາບັດ ໓ ຢ່າງ ຄື

໑. ພິກຂຸນີທີ່ຊາຍສັ່ງວ່າ "ຈົ່ງມາຍັງທີ່ຊື່ນີ້" ແລ້ວຍ່າງໄປ ຕ້ອງອາບັດທຸກກົດ

໒. ພໍຍ່າງເຂົ້າສູ່ໄລຍະແຂນຂອງຊາຍ ຕ້ອງອາບັດຖຸນລັດໄຈ

໓. ເຮັດວັດຖຸຄົບທັງ ໘ ປະການ ຕ້ອງອາບັດປາຣາຊິກ

ຍ້ອນເຮັດວັດຖຸຄົບທັງ ໘ ປະການເປັນປັດໄຈ ຕ້ອງອາບັດ ໓ ຢ່າງເຫຼົ່ານີ້

**ປາຣາຊິກ ໘ ສິກຂາບົດ ຈົບ**

# ໒. ສັງຄາທິເສສະກັນ
# ຈຳນວນອາບັດໃນສັງຄາທິເສສະກັນ

## ສັງຄາທິເສດສິກຂາບົດທີ ໑

[໔໕໐] ຍ້ອນພິກຂຸນີຜູ້ກໍ່ຄະດີພິພາດເປັນປັດໄຈ ຕ້ອງອາບັດ ໓ ຢ່າງ ຄື

໑. ບອກເລື້ອງຂອງຄົນໜຶ່ງ ຕ້ອງອາບັດທຸກກົດ
໒. ບອກເລື້ອງຂອງຄົນທີ່ສອງ ຕ້ອງອາບັດຖຸນລັດໄຈ
໓. ເມື່ອສານຕັດສິນແລ້ວ ຕ້ອງອາບັດສັງຄາທິເສດ

## ສັງຄາທິເສດສິກຂາບົດທີ ໒

ຍ້ອນບວດໃຫ້ສະຕີຜູ້ເປັນໂຈນ ຕ້ອງອາບັດ ໓ ຢ່າງ ຄື
໑. ຈົບຍັດຕິ ຕ້ອງອາບັດທຸກກົດ
໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ
໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

## ສັງຄາທິເສດສິກຂາບົດທີ ໓

ຍ້ອນພິກຂຸນີເຂົ້າໄປສູ່ບໍລິເວນເຮືອນອົງດຽວ ຕ້ອງອາບັດ ໓ ຢ່າງ ຄື
໑. ກຳລັງຍ່າງໄປ ຕ້ອງອາບັດທຸກກົດ
໒. ກ້າວຂາກ້າວທີ ໑ ເຂົ້າສູ່ບໍລິເວນຮົ້ວ ຕ້ອງອາບັດຖຸນລັດໄຈ
໓. ກ້າວຂາກ້າວທີ ໒ ຕ້ອງອາບັດສັງຄາທິເສດ

## ສັງຄາທິເສດສິກຂາບົດທີ ໔

ຍ້ອນພິກຂຸນີຮຽກພິກຂຸນີທີ່ສົງພ້ອມພຽງກັນລົງອຸກເຂປະນີຍະກຳ ໂດຍທຳ ໂດຍວິໄນ ໂດຍສັດຖຸສາດໃຫ້ກັບເຂົ້າໝູ່ ຕ້ອງອາບັດ ໓ ຢ່າງ ຄື
໑. ຈົບຍັດຕິ ຕ້ອງອາບັດທຸກກົດ
໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ
໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

## ສັງຄາທິເສດສິກຂາບົດທີ ໕

ຍ້ອນພິກຂຸນີກຳໜັດ ຮັບຂອງຫຍ້ຳຫຼືຂອງສັນ ຈາກມືຊາຍຜູ້ກຳໜັດດ້ວຍມືຂອງຕົນແລ້ວສັນ ຕ້ອງອາບັດ ໓ ຢ່າງ ຄື
໑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະຫຍ້ຳ ຈະສັນ" ຕ້ອງອາບັດຖຸນລັດໄຈ
໒. ສັນ ຕ້ອງອາບັດສັງຄາທິເສດ ທຸກ ໆ ຄຳກືນ
໓. ຮັບປະເຄນນ້ຳແລະໄມ້ຖູແຂ້ວ ຕ້ອງອາບັດທຸກກົດ

## ສັງຄາທິເສດສິກຂາບົດທີ ໖

ຍ້ອນພິກຂຸນີສົ່ງເສີມກ່າວຊັກຊວນວ່າ "ແມ່ເຈົ້າ ຊາຍຜູ້ນີ້ຈະກຳໜັດບໍ່ກຳໜັດກໍຕາມ ກໍເຮັດຫຍັງທ່ານບໍ່ໄດ້ ຍ້ອນທ່ານບໍ່ກຳໜັດ ນິມົນເທີ້ນແມ່ເຈົ້າ ຊາຍຜູ້ນີ້ຈະຖວາຍ ສິ່ງໃດ ຈະເປັນຂອງຫຍໍ້າ ຫຼືຂອງສັນກໍດີແກ່ທ່ານ ທ່ານຈົ່ງຮັບປະເຄນຂອງນັ້ນດ້ວຍມືຂອງຕົນແລ້ວຫຍໍ້າຫຼືສັນເທີ້ນ" ດັ່ງນີ້ ຕ້ອງອາບັດ ໓ ຢ່າງ ຄື

໑. ຮັບປະເຄນຕາມຄຳຂອງພິກຂຸນີນັ້ນດ້ວຍຕັ້ງໃຈວ່າຈະຫຍໍ້າຈະສັນ ຕ້ອງອາບັດທຸກກົດ
໒. ສັນ ຕ້ອງອາບັດຖຸນລັດໄຈ ທຸກ ໆ ຄຳກືນ
໓. ສັນສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ

## ສັງຄາທິເສດສິກຂາບົດທີ ໗

ຍ້ອນພິກຂຸນີຜູ້ໂກດ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ
໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ
໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

## ສັງຄາທິເສດສິກຂາບົດທີ ໘

ຍ້ອນພິກຂຸນີຜູ້ຖືກຕັດສິນໃຫ້ປຣາໄຊຄະດີໃນອະທິກອນບາງເລື້ອງ ໂກດ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ
໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ
໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

## ສັງຄາທິເສດສິກຂາບົດທີ ໙

ຍ້ອນພິກຂຸນີຢູ່ຄຸກຄີກັນ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດ ຄົບ ໓ ຄັ້ງ ຕ້ອງອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ
໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ
໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

## ສັງຄາທິເສດສິກຂາບົດທີ ໑໐

ຍ້ອນພິກຂຸນີສົ່ງເສີມກ່າວຊັກຊວນວ່າ "ນາງທັງຫຼາຍ ທ່ານທັງຫຼາຍຈົ່ງຢູ່ຄຸກຄີກັນ ຢ່າແຍກກັນຢູ່" ບໍ່ຍອມສະລະກຳ ຈົບວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດ ໓ ຢ່າງ ຄື

໑. ຈົບຍັດຕິ ຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ

໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດສັງຄາທິເສດ

**ສັງຄາທິເສດ ໑໐ ສິກຂາບົດ ຈົບ**

ຯລຯ

(ເພິ່ງຂະຫຍາຍຄວາມຄືຂ້າງຕົ້ນ ປັດໄຈທີ່ນັ້ນທີ່ເປັນເຫດໃຫ້ຕ່າງກັນ)

## ໕. ປະຕິເທສະນີຍະກັນ

## ຈຳນວນອາບັດໃນປະຕິເທສະນີຍະກັນ

ຯລຯ

## ປະຕິເທສະນີຍະສິກຂາບົດທີ ໗

ຖາມ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ຕ້ອງອາບັດທີ່ໃດ?

ຕອບ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ຕ້ອງອາບັດ ໒ ຢ່າງ ຄື

໑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັດທຸກກົດ

໒. ສັນ ຕ້ອງອາບັດປະຕິເທສະນີຍະ ທຸກ ໆ ຄຳກືນ

ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ຕ້ອງອາບັດ ໒ ຢ່າງເຫຼົ່ານີ້

**ກະຕາປັດຕິວາຣະທີ ໒ ຈົບ**

# ၆. ວິປັດຕິວາຣະ

## ວາຣະວ່າດ້ວຍເປັນວິບັດ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບວິບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໕

[໔໕໑] ຖາມ : ຍ້ອນຍິນດີການຖືກຕ້ອງກາຍ ອາບັດທັງຫຼາຍ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ?

ຕອບ : ຍ້ອນຍິນດີການຖືກຕ້ອງກາຍ ອາບັດທັງຫຼາຍ ບັນດາວິບັດ ໔ ຢ່າງຈັດເປັນວິບັດ ໒ ຢ່າງ ຄື (໑) ສີລະວິບັດ (໒) ອາຈາຣະວິບັດ

ຯລຯ

### ໕. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບວິບັດໃນປະຕິເທສະນີຍະກັນ

ຯລຯ

### ປະຕິເທສະນີຍະສິກຂາບົດທີ ໓

ຖາມ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ອາບັດທັງຫຼາຍ ບັນດາວິບັດ ໔ ຢ່າງຈັດເປັນວິບັດທີ່ໃດ?

ຕອບ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ອາບັດທັງຫຼາຍ ບັນດາວິບັດ ໔ ຢ່າງຈັດເປັນວິບັດ ໑ ຢ່າງ ຄື ອາຈາຣະວິບັດ

**ວິປັດຕິວາຣະທີ ၆ ຈົບ**

# ໔. ສັງຄະຫະວາຣະ

## ວາຣະວ່າດ້ວຍການຈັດເຂົ້າກອງອາບັດ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບຈັດກອງອາບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໕

[໔໕໔] ຖາມ : ຍ້ອນຍິນດີການຖືກຕ້ອງກາຍ ອາບັດທັງຫຼາຍ ບັນດາກອງອາບັດ ໆ ກອງ ຈັດເຂົ້າກອງອາບັດທີ່ໃດ?

ຕອບ : ຍ້ອນຍິນດີການຖືກຕ້ອງກາຍ ອາບັດທັງຫຼາຍ ບັນດາກອງອາບັດ ໆ ກອງ ຈັດເຂົ້າກອງອາບັດ ໕ ກອງ ຄື (໑) ກອງອາບັດປາຣາຊິກ (໔) ກອງອາບັດສັງຄາທິເສດ (໓) ກອງອາບັດຖຸນລັດໄຈ (໔) ກອງອາບັດປາຈິດຕີ (໕) ກອງອາບັດທຸກກົດ

ຯລຯ

### ໕. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບຈັດກອງອາບັດໃນປະຕິເທສະນີຍະກັນ

ຯລຯ

### ປະຕິເທສະນີຍະສິກຂາບົດທີ ໗

ຖາມ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ອາບັດທັງຫຼາຍ ບັນດາກອງ ອາບັດ ໆ ກອງ ຈັດເຂົ້າກອງອາບັດທີ່ໃດ?

ຕອບ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ອາບັດທັງຫຼາຍ ບັນດາກອງອາບັດ ໆ ກອງ ຈັດເຂົ້າກອງອາບັດ ໔ ກອງ ຄື (໑) ກອງອາບັດປະຕິເທສະນີຍະ

(໔) ກອງອາບັດທຸກກົດ

**ສັງຄະຫະວາຣະທີ ໔ ຈົບ**

# ໕. ສະມຸດຖານວາຣະ

## ວາຣະວ່າດ້ວຍສະມຸດຖານ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບສະມຸດຖານໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໕

[໔໕໓] ຖາມ : ຍ້ອນພິກຂຸນີຍິນດີການຖືກຕ້ອງກາຍ ອາບັດທັງຫຼາຍ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ຍ້ອນພິກຂຸນີຍິນດີການຖືກຕ້ອງກາຍ ອາບັດທັງຫຼາຍ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ฯลฯ

### ໕. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບສະມຸດຖານອາບັດໃນປະຕິເທສະນີຍະກັນ

ฯลฯ

### ປະຕິເທສະນີຍະສິກຂາບົດທີ ໗

ຖາມ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ອາບັດທັງຫຼາຍ ບັນດາສະມຸດຖານ ແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ອາບັດທັງຫຼາຍ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໔ ຢ່າງ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໓) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໔) ເກີດທາງກາຍວາຈາກັບຈິດ

**ສະມຸດຖານວາຣະທີ ໕ ຈົບ**

# ໖. ອະທິກະຣະນະວາຣະ

## ວາຣະວ່າດ້ວຍການຈັດເປັນອະທິກອນ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບອະທິກອນໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໕

[໘໕໔] ຖາມ : ຍ້ອນຍິນດີການຖືກຕ້ອງກາຍ ອາບັດທັງຫຼາຍ ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ

ຕອບ : ຍ້ອນຍິນດີການຖືກຕ້ອງກາຍ ອາບັດທັງຫຼາຍ ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ຯລຯ

### ໕. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບອະທິກອນໃນປະຕິເທສະນີຍະກັນ

ຯລຯ

### ປະຕິເທສະນີຍະສິກຂາບົດທີ ໗

ຖາມ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ອາບັດທັງຫຼາຍ ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ

ຕອບ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ອາບັດທັງຫຼາຍ ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

**ອະທິກະຣະນະວາຣະທີ ໖ ຈົບ**

# ၇. ສະມະຖະວາຣະ

## ວາຣະວ່າດ້ວຍການລະງັບດ້ວຍສະມະຖະ

### ໑. ປາຣາຊິກກັນ

ຄຳຖາມ - ຄຳຕອບສະມະຖະໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໕

[໔໕໕] ຖາມ : ຍ້ອນຍິນດີການຖືກຕ້ອງກາຍ ອາບັດທັງຫຼາຍ ບັນດາສະມະຖະ ၇ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ຍ້ອນຍິນດີການຖືກຕ້ອງກາຍ ອາບັດທັງຫຼາຍ ບັນດາສະມະຖະ ၇ ຢ່າງ ລະງັບ ດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໔) ປະຕິນຍາຕະກະຣະນະ

(໓) ສຳມຸຂາວິໄນກັບຕິນະວັດຖາຣະກະ

ฯลฯ

### ໕. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບສະມະຖະໃນປະຕິເທສະນີຍະກັນ

ฯลฯ

### ປະຕິເທສະນີຍະສິກຂາບົດທີ ໗

ຖາມ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ອາບັດທັງຫຼາຍ ບັນດາສະມະຖະ ၇ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ອາບັດທັງຫຼາຍ ບັນດາສະມະຖະ ၇ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໔) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນກັບຕິນະວັດຖາຣະກະ

**ສະມະຖະວາຣະທີ ၇ ຈົບ**

# ໗. ສະມຸດຈະຍະວາຣະ

## ວາຣະວ່າດ້ວຍການສະຫຼຸບລວມ

### ໑. ປາຣາຊິກກັນ

ຄໍາຖາມ - ຄໍາຕອບສະຫຼຸບລວມອາບັດໃນປາຣາຊິກກັນ

### ປາຣາຊິກສິກຂາບົດທີ ໕

[໔໕໖] ຖາມ : ຍ້ອນຍິນດີການຖືກຕ້ອງກາຍເປັນປັດໄຈ ຕ້ອງອາບັດທີ່ໃດ?

ຕອບ : ຍ້ອນຍິນດີການຖືກຕ້ອງກາຍເປັນປັດໄຈ ຕ້ອງອາບັດ ໕ ຢ່າງ ຄື

໑. ພິກຂຸນີຜູ້ກໍາໜັດ ຍິນດີການຖືກຕ້ອງບໍລິເວນໃຕ້ບ່າລົງມາ ເໜືອຫົວເຂົ່າຂຶ້ນໄປ ຂອງຊາຍຜູ້ກໍາໜັດ ຕ້ອງອາບັດປາຣາຊິກ

໒. ພິກຂຸໃຊ້ກາຍຈັບຕ້ອງກາຍ ຕ້ອງອາບັດສັງຄາທິເສດ

໓. ພິກຂຸໃຊ້ກາຍຈັບຕ້ອງຂອງເນື່ອງດ້ວຍກາຍ ຕ້ອງອາບັດຖຸນລັດໄຈ

໔. ພິກຂຸໃຊ້ຂອງທີ່ເນື່ອງດ້ວຍກາຍຈັບຕ້ອງຂອງເນື່ອງດ້ວຍກາຍ ຕ້ອງອາບັດທຸກກົດ

໕. ພິກຂຸໃຊ້ນີ້ວຈີ້ກັນ ຕ້ອງອາບັດປາຈິດຕີ

ຍ້ອນຍິນດີການຈັບຕ້ອງກາຍເປັນປັດໄຈ ຕ້ອງອາບັດ ໕ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາກອງ ອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ? ບັນດາອະທິກອນ ໔ ຢ່າງ ເປັນອະທິກອນໃດ ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື (໑) ສີລະວິບັດ (໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໕ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດສັງຄາທິເສດ (໓) ກອງອາບັດຖຸນລັດໄຈ (໔) ກອງອາບັດປາຈິດຕີ (໕) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານ ๑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ບັນດາອະທິກອນ ๔ ຢ່າງ ເປັນອາປັດຕາທິກອນ

ບັນດາສະມະຖະ ๗ ຢ່າງ ລະງັບດ້ວຍສະມະຖະ ๓ ຢ່າງ ຄື (๑) ສຳມຸຂາວິໄນ (๒) ປະຕິນຍາຕະກະຣະນະ (๓) ສຳມຸຂາວິໄນແລະຕິນະວັດຖາຣະກະ

ฯລฯ

## ๔. ປະຕິເທສະນີຍະກັນ

ຄຳຖາມ - ຄຳຕອບສະຫຼຸບລວມອາບັດໃນປະຕິເທສະນີຍະກັນ

ฯລฯ

## ປະຕິເທສະນີຍະສິກຂາບົດທີ ๓

ຖາມ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ຕ້ອງອາບັດທີ່ໃດ?

ຕອບ : ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ຕ້ອງອາບັດ ๒ ຢ່າງ ຄື

๑. ຮັບປະເຄນດ້ວຍຕັ້ງໃຈວ່າ "ຈະສັນ" ຕ້ອງອາບັດທຸກກົດ

๒. ສັນ ຕ້ອງອາບັດປະຕິເທສະນີຍະ ທຸກ ໆ ຄຳກືນ

ຍ້ອນພິກຂຸນີອອກປາກຂໍນົມສົ້ມມາສັນ ຕ້ອງອາບັດ ๒ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ๔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາກອງ ອາບັດ ๗ ກອງຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ? ບັນດາອະທິກອນ ๔ ຢ່າງ ເປັນອະທິກອນອັນໃດ? ບັນດາສະມະຖະ ๗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ๔ ຢ່າງ ຈັດເປັນວິບັດ ๑ ຢ່າງ ຄື ອາຈາຣະວິບັດ ບັນດາກອງອາບັດ ๗ ກອງ ຈັດເຂົ້າກອງອາບັດ ๒ ກອງ ຄື (๑) ກອງອາບັດປະຕິເທສະນີຍະ (๒) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານ ๔ ສະມຸດຖານ ຄື (๑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (๒) ເກີດທາງກາຍກັບວາຈາ ບໍ່ແມ່ນ ເກີດທາງຈິດ (๓) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (๔) ເກີດທາງກາຍວາຈາກັບຈິດ

ບັນດາອະທິກອນ ๔ ຢ່າງ ເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນແລະຕິນະວັດຖາຣະກະ

**ສະມຸດຈະຍະວາຣະທີ ໗ ຈົບ ໗ ປັດຈະຍະວາຣະ ຈົບ**

**ໂສລະສະມະຫາວາຣະໃນພິກຂຸນີວິພັງ ຈົບ**

## ໓. ສະມຸດຖານະສີສະສັງເຂບ

## ວ່າດ້ວຍການຫຍໍ້ຫົວຂໍ້ສະມຸດຖານ

[໔໕໗] ສັງຂານທັງປວງທີ່ປັດໄຈປຸງແຕ່ງ ບໍ່ທ່ຽງ ເປັນທຸກ ເປັນອະນັດຕາ
ພຣະນິບພານແລະບັນຍັດ ທ່ານວິນິດໄສວ່າເປັນອະນັດຕາ[1]
ເມື່ອດວງຈັນຄືພຣະພຸດທະເຈົ້າຍັງບໍ່ເກີດຂຶ້ນ
ເມື່ອດວງອາທິດຄືພຣະພຸດທະເຈົ້າຍັງບໍ່ອຸໄທຂຶ້ນມາ
ພຽງຊື່ຂອງສະພາຄະທຳເຫຼົ່ານັ້ນ ກໍຍັງບໍ່ມີໃຜຮູ້ຈັກ
ພຣະມະຫາທີຣະເຈົ້າທັງຫຼາຍຜູ້ຊຶ່ງເປັນດວງຕາ
ຊຶ່ງເຮັດທຸກກະຣະກິຣິຍາຫຼາຍຢ່າງ
ພ່ຳເພັງພຣະປາຣະມີແລ້ວສະເດັດອຸບັດຂຶ້ນໃນໂລກອັນເປັນໄປພ້ອມທັງພົມມະໂລກ
ພຣະອົງຊຶ່ງສະແດງພຣະສັດທຳອັນກຳຈັດເຊິ່ງທຸກນຳມາເຊິ່ງຄວາມສຸກ
ພຣະອັງຄີຣົດສາກະຍະມຸນີຊຶ່ງເປັນຜູ້ອະນຸເຄາະແກ່ໝູ່ສັດທຸກຖ້ວນໜ້າ
ພຣະອົງຜູ້ຊຶ່ງອຸດົມກວ່າສັບພະສັດຄືຣາດຊະສີ
ຊຶ່ງສະແດງພຣະໄຕຣປິດົກ ຄື ພຣະສຸດຕັນຕະ
ພຣະອະພິທຳ ພຣະວິໄນ ເຊິ່ງມີຄຸນຫຼາຍ
ພຣະສັດທຳຈະເປັນໄປໄດ້ ຫາກພຣະວິໄນຄືອຸພະໂຕວິພັງ
ຂັນທະກະແລະມາຕິກາຍັງດຳລົງຢູ່
ພຣະວິໄນທ່ານຮ້ອຍກອງໄວ້ດ້ວຍຄຳພີປະຣິວານ
ຄືດອກໄມ້ຮ້ອຍດ້ວຍເສັ້ນດ້າຍ
ສະມຸດຖານແຫ່ງຄຳພີປະຣິວານນັ້ນແລ ທ່ານຈັດໄວ້ແນ່ນອນແລ້ວ
ຄວາມປະປົນ ນິທານແລະສິ່ງອື່ນ ຈະຜາກົດໃນພຣະສູດທາງໜ້າ
ຍ້ອນແນວນັ້ນ ພິກຂຸຜູ້ມີສີນເປັນທີ່ຮັກ
ຕ້ອງການສຶກສາພຣະທຳກໍເພິ່ງສຶກສາຄຳພີປະຣິວານເທີ້ນ

## ສະມຸດຖານ ໑໓

ໃນມື້ອຸໂປສົດ ພິກຂຸແລະພິກຂຸນີຍ່ອມສູດສິກຂາບົດ
ທີ່ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ
ຜູ້ຊົງຮູ້ຊົງເຫັນຊົງບັນຍັດໄວ້ໃນວິພັງທັງ ๔
ຂ້າພະເຈົ້າຈະກ່າວສະມຸດຖານຕາມທີ່ຮູ້ມາ
ຂໍທ່ານທັງຫຼາຍຈົ່ງຟັງຂ້າພະເຈົ້າເທີ້ນ
ປະຖົມປາຣາຊິກສິກຂາບົດ ທຸຕິຍະປາຣາຊິກສິກຂາບົດ
ຖັດຈາກນັ້ນ ສັນຈະຣິຕະສິກຂາບົດ ສະມະນຸພາສະນະສິກຂາບົດ
ອະຕິເຣກະຈີວະຣະສິກຂາບົດ ເອລະກະໂລມະສິກຂາບົດ
ປະທະໂສທຳມະສິກຂາບົດ ພູຕາໂຣຈະນະສິກຂາບົດ
ສັງວິທານະສິກຂາບົດ ເຖັຍຍະສັດຖະສິກຂາບົດ
ເທສະນາສິກຂາບົດ ໂຈຣີວຸດຖານະປະນະສິກຂາບົດ
ລວມກັບການບວດສະຕີທີ່ບິດາມານດາຫຼືສາມີບໍ່ອະນຸຍາດ
ລວມເປັນສະມຸດຖານ ໑໓ ໃນອຸພະໂຕວິພັງນີ້
ໃນແຫ່ງສະມຸດຖານທັງ ໑໓ ນີ້ວິນຍູຊົນທັງຫຼາຍຄິດກັນແລ້ວ
ຍ່ອມຜາກົດຄ້າຍຄືກັນ ໃນແຕ່ລະສະມຸດຖານ

## ໑. ປະຖົມປາຣາຊິກສະມຸດຖານ

[໔໕໗] ສິກຂາບົດວ່າດ້ວຍການເສບເມຖຸນທຳ
ສິກຂາບົດວ່າດ້ວຍການຈົງໃຈເຮັດນ້ຳອະສຸຈິໃຫ້ເຄື່ອນ
ສິກຂາບົດວ່າດ້ວຍການຖືກຕ້ອງກາຍກັບມາຕຸຄາມ
ອະນິຍະຕະສິກຂາບົດທີໜຶ່ງ
ສິກຂາບົດວ່າດ້ວຍການເຂົ້າໄປແຊກແຊງພິກຂຸຜູ້ເຂົ້າໄປຢູ່ກ່ອນ
ສິກຂາບົດວ່າດ້ວຍການສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມ
ສິກຂາບົດວ່າດ້ວຍການຢູ່ໃນບ່ອນລັບກັບພິກຂຸນີ
ສິກຂາບົດວ່າດ້ວຍການເຂົ້າໄປແຊກແຊງໃນບ່ອນທີ່ມີຄົນ ๔ ຄົນ
ສິກຂາບົດວ່າດ້ວຍການຢູ່ໃນບ່ອນລັບ ๔ ສິກຂາບົດ
ສິກຂາບົດວ່າດ້ວຍການໃຊ້ນິ້ວມືຈີ້ກັນແລະກັນ
ສິກຂາບົດວ່າດ້ວຍການຫຼິ້ນນ້ຳ
ສິກຂາບົດວ່າດ້ວຍການທຳຮ້າຍເພື່ອນພິກຂຸ

ສິກຂາບົດວ່າດ້ວຍການເງື້ອຫອກຄືຝາມືຂຶ້ນເຮັດຄືວ່າຈະທຳຮ້າຍ
ເສຂິຍະວັດ ໕໓ ສິກຂາບົດ
ສິກຂາບົດວ່າດ້ວຍການຍິນດີການທີ່ຊາຍຈັບຕ້ອງທີ່ບໍລິເວນເໜືອເຂົ່າຂຶ້ນໄປ
ສິກຂາບົດວ່າດ້ວຍການເຂົ້າບໍລິເວນໝູ່ບ້ານຕາມລຳພັງ
ສິກຂາບົດວ່າດ້ວຍພິກຂຸນີກຳໜັດຮັບໂພຊະນະຈາກມືຊາຍຜູ້ກຳໜັດ
ສິກຂາບົດວ່າດ້ວຍການໃຊ້ຝາມືຕົບອົງກຳເນີດ
ສິກຂາບົດວ່າດ້ວຍການໃຊ້ທ່ອນຢາງ
ສິກຂາບົດວ່າດ້ວຍການໃຊ້ນ້ຳຊຳຮະ
ສິກຂາບົດວ່າດ້ວຍພິກຂຸນີຈຳພັນສາແລ້ວບໍ່ຫຼີກຈາຣິກໄປ
ສິກຂາບົດວ່າດ້ວຍການບໍ່ໄປຮັບໂອວາດ
ສິກຂາບົດວ່າດ້ວຍການບໍ່ຕິດຕາມປະວັດຕິນີ
ລວມສິກຂາບົດເຫຼົ່ານີ້ເປັນ ໆ໖ ສິກຂາບົດ
ທ່ານຈັດໄວ້ເປັນສິກຂາບົດມີກາຍກັບຈິດເປັນສະມຸດຖານ
ທຸກສິກຂາບົດມີສະມຸດຖານອັນໜຶ່ງຄືປະຖົມປາຣາຊິກສິກຂາບົດ ສັນນັ້ນ

**ປະຖົມປາຣາຊິກສະມຸດຖານ ຈົບ**

## ໘. ທຸຕິຍະປາຣາຊິກສະມຸດຖານ

[໘໕໗] ສິກຂາບົດວ່າດ້ວຍການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້
ສິກຂາບົດວ່າດ້ວຍການພາກກາຍມະນຸດ
ສິກຂາບົດວ່າດ້ວຍການກ່າວອວດອຸດຕະຣິມະນຸດສະທຳ
ສິກຂາບົດວ່າດ້ວຍການເວົ້າກ້ຽວຍິງ
ສິກຂາບົດວ່າດ້ວຍການໃຊ້ປິ່ນເປີຄວາມຕ້ອງການຂອງຕົນ
ສິກຂາບົດວ່າດ້ວຍພິກຂຸຂັດເຄືອງມີໂທສະໃສ່ຄວາມພິກຂຸ
ດ້ວຍອາບັດປາຣາຊິກທີ່ບໍ່ມີມູນ
ສິກຂາບົດວ່າດ້ວຍພິກຂຸຂັດເຄືອງມີໂທສະອ້າງເອົາ
ບາງສ່ວນແຫ່ງອະທິກອນເລື້ອງອື່ນ
ອະນິຍະຕະສິກຂາບົດທີສອງ
ຈີວະຣະອັດສິນທະນະສິກຂາບົດ ວ່າດ້ວຍການໃຫ້ຈີວອນແລ້ວຍາດເອົາຄືນ
ປະຣິນະຕະສິກຂາບົດ ວ່າດ້ວຍການນ້ອມລາບ
ມຸສາວາທະສິກຂາບົດ ວ່າດ້ວຍການກ່າວຕົວະ

ໂອມະສະວາທະສິກຂາບົດ ວ່າດ້ວຍການກ່າວສຽດສີ

ເປສຸນຍະສິກຂາບົດ ວ່າດ້ວຍການກ່າວສັບສໍ່

ທຸດຖຸນລາໂຣຈະນະສິກຂາບົດ ວ່າດ້ວຍການບອກອາບັດຊົ່ວຫຍາບ

ປະຖະວີຂະນະນະສິກຂາບົດ ວ່າດ້ວຍການຂຸດດິນ

ພູຕະຄາມະສິກຂາບົດ ວ່າດ້ວຍການພາກພູຕະຄາມ

ອັນຍະວາທະກະສິກຂາບົດ ວ່າດ້ວຍການກ່າວປີກປິດ

ອຸດຊາປະນະສິກຂາບົດ ວ່າດ້ວຍການກ່າວໃຫ້ເພ່ງໂທດ

ນິກກັດທະນະສິກຂາບົດ ວ່າດ້ວຍການລາກອອກ

ສິນຈະນະສິກຂາບົດ ວ່າດ້ວຍການເອົານ້ຳຫົດຫຍ້າແລະດິນ[໑]

ອາມິສະສິກຂາບົດ ວ່າດ້ວຍການສັ່ງສອນພິກຂຸນີຍ້ອນເຫັນແກ່ອາມິດ

ພຸດຕາວີສິກຂາບົດ ວ່າດ້ວຍພິກຂຸສັນແລ້ວ[໑]

ເອຫິສິກຂາບົດ ວ່າດ້ວຍການຊັກຊວນວ່າມາເຫີ້ນ[໒]

ອະນາທະຣິຍະສິກຂາບົດ ວ່າດ້ວຍຄວາມບໍ່ເອື້ອເຟື້ອຕໍ່ຄຳຕັກເຕືອນ

ພິງສາປະນະສິກຂາບົດ ວ່າດ້ວຍການເຮັດໃຫ້ຕົກໃຈ

ອະປະນິທານະສິກຂາບົດ ວ່າດ້ວຍການເຊື່ອງບໍຣິຂານ[໓]

ຊີວິຕະສິກຂາບົດ ວ່າດ້ວຍຄວາມຈົງໃຈປົງຊີວິດສັດ[໔]

ຊານະສັບປານະກະສິກຂາບົດ ວ່າດ້ວຍພິກຂຸຮູ້ຢູ່ບໍຣິໂພກນ້ຳທີ່ມີສັດມີຊີວິດ[໔]

ກຳມະສິກຂາບົດ ວ່າດ້ວຍການຮື້ກຳຂຶ້ນມາພິຈາລະນາໃໝ່[໕]

ອູນະວີສະຕິວັດສະສິກຂາບົດ ວ່າດ້ວຍການອຸປະສົມບົດໃຫ້ບຸກຄົນມີ
ອາຍຸຍ່ອນກວ່າ ໒໐ ປີ

ສັງວາສະສິກຂາບົດ ວ່າດ້ວຍການຢູ່ຮ່ວມກັບພິກຂຸທີ່ຖືກສົງລົງອຸກເຂປະນີຍະກຳ ກ ນາສະນະສິກຂາບົດ ວ່າດ້ວຍສະມະນຸດເທດຊີ່ກັນຕະກະຖືກສົງນາສະນະ

ສະຫະທຳມິກະສິກຂາບົດ ວ່າດ້ວຍການກ່າວຕັກເຕືອນຜູ້ຮ່ວມປະພຶດທຳ
ໂດຍຖືກຕ້ອງຕາມທຳ

ວິເລຂະນະສິກຂາບົດ ວ່າດ້ວຍຄວາມຫຍຸ້ງຍາກແຫ່ງສິກຂາບົດ

ໂມຫະນະສິກຂາບົດ ວ່າດ້ວຍການເຮັດໃຫ້ຜູ້ອື່ນຫຼົງ

ອະມູລະກະສິກຂາບົດ ວ່າດ້ວຍການໃສ່ຄວາມດ້ວຍອາບັດສັງຄາທິເສດທີ່ບໍ່ມີມູນ

ກຸກກຸດຈະສິກຂາບົດ ວ່າດ້ວຍການຈົງໃຈກໍ່ຄວາມລຳຄານ[໗]

ທຳມິກະສິກຂາບົດ ວ່າດ້ວຍການໃຫ້ສັນທະເພື່ອກຳທີ່ຖືກຕ້ອງ[໘]

(ຈີວະຣະທັດຕະວາສິກຂາບົດ ວ່າດ້ວຍການໃຫ້ຈີວອນແລ້ວຕິຕຽນ)[໑]

ປະຣິນາມະນະສິກຂາບົດ ວ່າດ້ວຍການນ້ອມລາບທີ່ເປັນຂອງສົງໄປເພື່ອບຸກຄົນ ກິນເຕ ສິກຂາບົດ ວ່າດ້ວຍການເຮັດຫຍັງທ່ານໄດ້[໒]

ອະກາລະສິກຂາບົດ ວ່າດ້ວຍການອະທິຖານອະກາລະຈີວອນເປັນການຈີວອນ[໓]

ອັດສິນທະສິກຂາບົດ ວ່າດ້ວຍການແລກປ່ຽນຈີວອນແລ້ວຍາດເອົາຄືນ[໔]

ທຸກຄະຫິຕະສິກຂາບົດ ວ່າດ້ວຍການເຂົ້າໃຈຜິດ

ນິຣະຍະສິກຂາບົດ ວ່າດ້ວຍການສາບແຊ່ງດ້ວຍນະຮົກ[໕]

ຄະນະສິກຂາບົດ ວ່າດ້ວຍການເຮັດອັນຕະລາຍແກ່ຈີວອນລາບຂອງຄະນະ

ວິພັງຄະສິກຂາບົດ ວ່າດ້ວຍການຄັດຄ້ານການແຈກຈີວອນທີ່ຊອບທຳ

ທຸບພະລະສິກຂາບົດ ວ່າດ້ວຍການຫວັງຈີວອນທີ່ເລື່ອນລອຍ

ກະຖິນະສິກຂາບົດ ວ່າດ້ວຍການຄັດຄ້ານການເດາະກະຖິນທີ່ຊອບທຳ

ອະຜາສຸສິກຂາບົດ ວ່າດ້ວຍການກໍ່ຄວາມບໍ່ຜາສຸກ

ອຸປັດສະຍະສິກຂາບົດ ວ່າດ້ວຍການໃຫ້ທີ່ຢູ່ແລ້ວລາກອອກ

ອັກໂກສະສິກຂາບົດ ວ່າດ້ວຍການດ່າພິກຂຸ

ຈັນຖີສິກຂາບົດ ວ່າດ້ວຍການຂຶ້ງຄຽດກ່າວໂທດຄະນະ

ມັດສະຣີສິກຂາບົດ ວ່າດ້ວຍຄວາມຫວງຕະກູນ

ຄັບພິນີສິກຂາບົດ ວ່າດ້ວຍການບວດໃຫ້ສະຕີຖືພາ

ປາຍັນຕີສິກຂາບົດ ວ່າດ້ວຍການບວດໃຫ້ສະຕີຜູ້ມີລູກຍັງດື່ມນົມ

ທະເວະວັດສະສິກຂາບົດ ວ່າດ້ວຍການບວດໃຫ້ສິກຂະມານາຜູ້ຍັງບໍ່ໄດ້ສຶກສາ
　　　ແລະຜູ້ຍັງບໍ່ໄດ້ສຶກສາທຳ ໖ ຂໍ້ ຕະຫຼອດ ໒ ປີ

ຄິຫິຄະຕາສິກຂາບົດ ວ່າດ້ວຍການບວດໃຫ້ສະຕີທີ່ມີຄອບຄົວ ໖ ສິກຂາບົດ[໑] ກຸມາຣີພູ ຕະສິກຂາບົດ ວ່າດ້ວຍການບວດໃຫ້ກຸມາຣີ ໖ ສິກຂາບົດ[໒]

ອູນທະວາທະສະວັດສະສິກຂາບົດ ວ່າດ້ວຍພິກຂຸນີມີພັນສາຕ່ຳກວ່າ ໑໒
　　　ເປັນປະວັດຕິນີ

ອະສຳມະຕາສິກຂາບົດ ວ່າດ້ວຍພິກຂຸນີມີພັນສາຄົບ ໑໒ ເປັນປະວັດຕິນີ
　　　ແຕ່ສົງຍັງບໍ່ໄດ້ສົມມຸດ

ອະລັນຕາວະສິກຂາບົດ ວ່າດ້ວຍພິກຂຸນີທີ່ສົງຫ້າມວ່າຢ່າເລີຍ[໓]

ໂສກາວັດສະສິກຂາບົດ ວ່າດ້ວຍພິກຂຸນີຜູ້ເຮັດຊາຍໃຫ້ຣະທົມໂສກ

ສັນທະສິກຂາບົດ ວ່າດ້ວຍການບວດໃຫ້ສິກຂະມານາດ້ວຍການໃຫ້ປາຣິວາສິກະສັນທະ

ອະນຸວັດສະສິກຂາບົດ ວ່າດ້ວຍການບວດໃຫ້ສິກຂະມານາທຸກ ໆ ປີ

ວັດສະສິກຂາບົດ ວ່າດ້ວຍການບວດໃຫ້ສິກຂະມານາປີລະ ໒ ອົງ

ລວມສິກຂາບົດເຫຼົ່ານີ້ເປັນ ໗໐ ສິກຂາບົດ ຈັດເປັນ ໖ ສະມຸດຖານ

ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ
ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ແລະເກີດທາງທະວາຣະທັງ ໓
ຄືທຸຕິຍະປາຣາຊິກສິກຂາບົດ ສັນນັ້ນ

**ທຸຕິຍະປາຣາຊິກສະມຸດຖານ ຈົບ**

## ໓. ສັນຈະຣິດຕະສະມຸດຖານ

[໔໘໐] ສັນຈະຣິຕະສິກຂາບົດ ວ່າດ້ວຍການຊັກສື່
ກຸຕິກາຣະສິກຂາບົດ ວ່າດ້ວຍການກໍ່ສ້າງກຸດຕິ
ວິຫາຣະກາຣະສິກຂາບົດ ວ່າດ້ວຍການສ້າງວິຫານ
ໂທວະນະສິກຂາບົດ ວ່າດ້ວຍການໃຫ້ຊັກຈີວອນເກົ່າ
ປະຕິກຄະຫະສິກຂາບົດ ວ່າດ້ວຍການຮັບຈີວອນ
ວິນຍັດຕິສິກຂາບົດ ວ່າດ້ວຍການອອກປາກຂໍຄະລຶຫັດຜູ້ບໍ່ແມ່ນຍາດ
ຕະຕຸດຕະຣິສິກຂາບົດ ວ່າດ້ວຍການອອກປາກຂໍຈີວອນເກີນ
ອຸພົນນະສິກຂາບົດ ວ່າດ້ວຍຄົນກະກຽມຊັບເປັນຄ່າຈີວອນ ໒ ສິກຂາບົດ[๑]
ທູຕະກະສິກຂາບົດ ວ່າດ້ວຍຊັບເປັນຄ່າຈີວອນທີ່ພຣະຣາຊາເປັນຕົ້ນ
ໃຫ້ທູດນຳມາຖວາຍ
ໂກສິຍະສິກຂາບົດ ວ່າດ້ວຍການເຮັດສັນຖັດປະສົມໃຍໄໝ
ສຸດທະກາລະກະສິກຂາບົດ ວ່າດ້ວຍການເຮັດສັນຖັດໂດຍໃຊ້ຂົນຈຽມດຳລ້ວນ
ທະເວພາຄະສິກຂາບົດ ວ່າດ້ວຍການເຮັດສັນຖັດໂດຍໃຊ້ຂົນຈຽມດຳ ໒ ສ່ວນ
ສັບພັດສະສິກຂາບົດ ວ່າດ້ວຍການເກັບສັນຖັດໄວ້ ໖ ປີ
ນິສີທະນະສັນຖະຕະສິກຂາບົດ ວ່າດ້ວຍການເຮັດສັນຖັດສຳລັບຮອງນັ່ງ
ຣິນຈັນຕິສິກຂາບົດ ວ່າດ້ວຍການລະເລີຍອຸດເທດ[๒]
ຣູປິຍະສິກຂາບົດ ວ່າດ້ວຍການຮັບຣູປິຍະ
ນານັບປະກາຣະກະສິກຂາບົດ ວ່າດ້ວຍການແລກປ່ຽນກັນດ້ວຍຣູປິຍະ
ແລະການຊື້ຂາຍມີປະການຕ່າງ ໆ
ອູນະພັນທະນະສິກຂາບົດ ວ່າດ້ວຍບາດມີຮອຍຊ່ອມຢ່ອນກວ່າ ໕ ແຫ່ງ
ວັດສິກະສາຕິກະສິກຂາບົດ ວ່າດ້ວຍຜ້າອາບນ້ຳຝົນ
ສຸດຕະສິກຂາບົດ ວ່າດ້ວຍການອອກປາກຂໍດ້າຍ
ວິກັບປະນະສິກຂາບົດ ວ່າດ້ວຍການກຳນົດຊະນິດຈີວອນ[๓]
ທະວາຣະສິກຂາບົດ ວ່າດ້ວຍການຕິດຕັ້ງບານປະຕູໃກ້ວົງກົບປະຕູ[๔]

ທານະສິກຂາບົດ ວ່າດ້ວຍການຖວາຍຈີວອນ
ສິບພິນິສິກຂາບົດ ວ່າດ້ວຍການຫຍິບຈີວອນໃຫ້ພິກຂຸນີ
ປູວະສິກຂາບົດ ວ່າດ້ວຍທາຍົກນຳເຂົ້າໜົມມາປະວາຣະນາ[໔]
ປັດຈະຍະສິກຂາບົດ ວ່າດ້ວຍການຍິນດີການປະວາຣະນາດ້ວຍປັດໄຈ[໑]
ໂຊຕິກະສິກຂາບົດ ວ່າດ້ວຍການດັງໄຟຜີງ
ຣະຕະນະສິກຂາບົດ ວ່າດ້ວຍການເກັບຣະຕະນະທີ່ເຈົ້າຂອງລືມໄວ້
ສູຈິຄະຣະສິກຂາບົດ ວ່າດ້ວຍການເຮັດກ່ອງເຂັມດ້ວຍກະດູກເປັນຕົ້ນ
ມັນຈະປີຖະສິກຂາບົດ ວ່າດ້ວຍການເຮັດຕຽງແລະຕັ່ງ
ຕູໂລນັດທະສິກຂາບົດ ວ່າດ້ວຍການເຮັດຕຽງຕັ່ງຫຸ້ມນຸ່ນ
ນິສີທະນະສິກຂາບົດ ວ່າດ້ວຍການເຮັດຜ້າຮອງນັ່ງ
ກັນທຸປະຕິດສາທິສິກຂາບົດ ວ່າດ້ວຍການເຮັດຜ້າອັດຝີ
ວັດສິກະສາຕິກາສິກຂາບົດ ວ່າດ້ວຍການເຮັດຜ້າອາບນ້ຳຝົນ
ສຸຄະຕະສິກຂາບົດ ວ່າດ້ວຍທ່ານພຣະນັນທະເຮັດຈີວອນມີຂະໜາດທໍ່ສຸຄົດຈີວອນ
ວິນຍັດຕິສິກຂາບົດ ວ່າດ້ວຍການອອກປາກຂໍຂອງແນວໜຶ່ງແລ້ວ
ອອກປາກຂໍຂອງແນວອື່ນ
ອັນຍະເຈຕາປະນະສິກຂາບົດ ວ່າດ້ວຍການສັ່ງໃຫ້ຊື້ຂອງແນວອື່ນ
ສັງຄິກະສິກຂາບົດ ວ່າດ້ວຍຂອງທີ່ເຂົາບໍລິຈາກແກ່ສົງ ໔ ສິກຂາບົດ[໒]
ມະຫາຊະນິກະສິກຂາບົດ ວ່າດ້ວຍຂອງທີ່ເຂົາບໍລິຈາກ
ແກ່ພິກຂຸນີຈຳນວນຫຼາຍ ໔ ສິກຂາບົດ[໓]
ປຸກຄະລິກະສິກຂາບົດ ວ່າດ້ວຍຂອງທີ່ເຂົາບໍລິຈາກແກ່ບຸກຄົນ
ຄະຣຸສິກະຂາບົດ ວ່າດ້ວຍການຂໍຜ້າຫົ່ມໜາ
ລະຫຸກະສິກຂາບົດ ວ່າດ້ວຍການຂໍຜ້າຫົ່ມບາງ
ວິຄາຕະສິກຂາບົດ ວ່າດ້ວຍການຖີ້ມຂອງເປັນເງື່ອນ ໔ ສິກຂາບົດ[໔]
ອຸທະກະສາຕິກະສິກຂາບົດ ວ່າດ້ວຍການໃຊ້ຜ້າອາບນ້ຳບໍ່ໄດ້ຂະໜາດ
ສະມະນະຈີວະຣະສິກຂາບົດ ວ່າດ້ວຍການໃຫ້ສະມະນະຈີວອນແກ່ຜູ້ບໍ່ແມ່ນພິກຂຸນີ
ທຳຄືສິກຂາບົດເຫຼົ່ານີ້ ລວມ ໕໐ ສິກຂາບົດ ເກີດດ້ວຍ ໖ ສະມຸດຖານ
ຄື ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ
ເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ
ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ
ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ
ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ ແລະເກີດທາງທະວາຣະທັງ ໓

ອັນໜຶ່ງ ສິກຂາບົດເຫຼົ່ານີ້ ມີ ໖ ສະມຸດຖານ ເຊັ່ນກັບສັນຈະຣິດຕະສິກຂາບົດ

**ສັນຈະຣິດຕສະມຸດຖານ ຈົບ**

## ໔. ສະມະນຸພາສະນາສະມຸດຖານ

[໔໖໑] ເພທະສິກຂາບົດ ວ່າດ້ວຍການເຮັດສົງໃຫ້ແຕກກັນ
ອະນຸວັດຕະສິກຂາບົດ ວ່າດ້ວຍພິກຂຸຜູ້ປະພຶດຕາມ
ກ່າວສະໜັບສະໜູນພິກຂຸຜູ້ທຳລາຍສົງ
ທຸບພະຈະສິກຂາບົດ ວ່າດ້ວຍພິກຂຸເປັນຄົນວ່າຍາກ
ທູສະສິກຂາບົດ ວ່າດ້ວຍພິກຂຸຜູ້ປະທຸດສະຮ້າຍຕະກູນ
ທຸດຖຸນລະສິກຂາບົດ ວ່າດ້ວຍການປົກປິດອາບັດຊົ່ວຫຍາບ
ທິດຖິສິກຂາບົດ ວ່າດ້ວຍການບໍ່ຍອມສະລະທິດຖິ໑
ສັນທະສິກຂາບົດ ວ່າດ້ວຍການບໍ່ໃຫ້ສັນທະແລ້ວໄປ
ອຸດຊັກຄິກະສິກຂາບົດ ວ່າດ້ວຍການຫົວສຽງດັງໃນເຮືອນ ໔ ສິກຂາບົດ
ສັດທະສິກຂາບົດ ວ່າດ້ວຍການເວົ້າສຽງຄ່ອຍໃນເຮືອນ ໔ ສິກຂາບົດ
ນະພະຍາຫະນະສິກຂາບົດ ວ່າດ້ວຍການບໍ່ເວົ້າຂະນະມີຄຳເຂົ້າຢູ່ໃນປາກ
ສະມາສິກຂາບົດ ວ່າດ້ວຍພິກຂຸນັ່ງທີ່ພື້ນຈັກບໍ່ສະແດງທຳ
ແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງເທິງອາສະນະ
ນີຈາສະນະສິກຂາບົດ ວ່າດ້ວຍພິກຂຸນັ່ງເທິງອາສະນະຕ່ຳຈັກບໍ່ສະແດງທຳ
ແກ່ຄົນບໍ່ເປັນໄຂ້ຜູ້ນັ່ງເທິງອາສະນະສູງ
ຖານະສິກຂາບົດ ວ່າດ້ວຍພິກຂຸຢືນຢູ່ຈັກບໍ່ສະແດງທຳ
ແກ່ຄົນທີ່ບໍ່ເປັນໄຂ້ຜູ້ນັ່ງຢູ່
ປັດສະໂຕສິກຂາບົດ ວ່າດ້ວຍພິກຂຸຍ່າງຢູ່ທາງຫຼັງຈັກບໍ່ສະແດງທຳ
ແກ່ຄົນທີ່ບໍ່ເປັນໄຂ້ຜູ້ຍ່າງໄປທາງໜ້າ
ອຸປະປະເຖນະສິກຂາບົດ ວ່າດ້ວຍພິກຂຸຍ່າງໄປນອກທາງຈັກບໍ່ສະແດງທຳ
ແກ່ຄົນທີ່ບໍ່ເປັນໄຂ້ຜູ້ຍ່າງໄປໃນທາງ
ວັດຊະສິກຂາບົດ ວ່າດ້ວຍການປົກປິດໂທດ໑
ອະນຸວັດຕິສິກຂາບົດ ວ່າດ້ວຍການປະພຶດຕາມພິກຂຸທີ່ຖືກ
ສົງລົງອຸກເຂປະນີຍະກຳ
ຄະຫະນະສິກຂາບົດ ວ່າດ້ວຍການຍິນດີການຈັບມືຂອງຊາຍເປັນຕົ້ນ
ໂອສາເຣສິກຂາບົດ ວ່າດ້ວຍການຮຽກພິກຂຸນີທີ່ຖືກສົງລົງອຸກເຂປະນີຍະກຳເຂົ້າໝູ່

ປັດຈາຈິກຂະນາສິກຂາບົດ ວ່າດ້ວຍການບອກຄືນພຣະຣັດຕະນະໄຕຣ
ກັດສະມິງສິກຂາບົດ ວ່າດ້ວຍພິກຂຸນີຖືກຕັດສິນໃຫ້ປຣາໄຊຄະດີໃນອະທິກອນໜຶ່ງ
ສັງສັດຖາສິກຂາບົດ ວ່າດ້ວຍພິກຂຸນີກັບພິກຂຸນີຢູ່ຄຸກຄີກັນ
ວະທິສິກຂາບົດ ວ່າດ້ວຍການຮ້ອງໄຫ້ທຸບຕີຕົນເອງ
ວິຊຸບພະສິກຂາບົດ ວ່າດ້ວຍການເລາະຈີວອນແລ້ວບໍ່ຫຍິບ
ທຸກຂິຕາສິກຂາບົດ ວ່າດ້ວຍການບໍ່ໃສ່ໃຈເບິ່ງແຍງເພື່ອນພິກຂຸນີ
ປຸນະສັງສັດຖາສິກຂາບົດ ວ່າດ້ວຍການຢູ່ຄຸກຄີກັບຄະລືຫັດ
ນະວູປະສະມະສິກຂາບົດ ວ່າດ້ວຍການບໍ່ຊ່ອຍລະງັບອະທິກອນ
ອາຣາມະສິກຂາບົດ ວ່າດ້ວຍການເຂົ້າອາຣາມໂດຍບໍ່ບອກ
ປະວາຣະນາສິກຂາບົດ ວ່າດ້ວຍການບໍ່ປະວາຣະນາໃນສົງ ໒ ຝ່າຍ
ອັນວັດທະມາສະສິກຂາບົດ ວ່າດ້ວຍເພິ່ງຫວັງທຳ ໘ ຢ່າງທຸກເຄິ່ງເດືອນ
ສະຫະຊີວິນີສິກຂາບົດ ວ່າດ້ວຍການບໍ່ອະນຸເຄາະສະຫະຊີວິນີຕະຫຼອດ ໒ ປີ
ຈີວະຣະສິກຂາບົດ ວ່າດ້ວຍການບອກສິກຂະມານາໃຫ້ຖວາຍຈີວອນແລ້ວບໍ່ບວດໃຫ້
ອະນຸພັນທະນາສິກຂາບົດ ວ່າດ້ວຍການບອກສິກຂະມານາໃຫ້ຕິດຕາມ
ຕະຫຼອດ ໒ ປີ ແລ້ວບໍ່ບວດໃຫ້

ທຳ ຄື ສິກຂາບົດເຫຼົ່ານີ້ ລວມ ໓໗ ສິກຂາບົດ
ເກີດທາງກາຍວາຈາກັບຈິດ ທຸກສິກຂາບົດມີສະມຸດຖານອັນໜຶ່ງ
ຄືສະມະນຸພາສະນະສິກຂາບົດ

**ສະມະນຸພາສະນາສະມຸດຖານ ຈົບ**

## ໕. ກະຖິນະສະມຸດຖານ

[໘໖໘] ອຸພະຕະກະຖິນະສິກຂາບົດ ວ່າດ້ວຍກະຖິນເດາະ ໓ ສິກຂາບົດ[1]
ປະຖົມປັດຕະສິກຂາບົດ ວ່າດ້ວຍບາດສິກຂາບົດທີ ໑
ເພສັດຊະສິກຂາບົດ ວ່າດ້ວຍເພສັດ ອັດເຈກະສິກຂາບົດ ວ່າດ້ວຍອັດເຈກະຈີວອນ
ສາສັງກະສິກຂາບົດ ວ່າດ້ວຍເສນາສະນະປ່າທີ່ໜ້າຫວາດຣະແວງ
ປັກກະມັນຕະສິກຂາບົດ ວ່າດ້ວຍເມື່ອຈະຈາກໄປ ໒ ສິກຂາບົດ[2]
ອຸປັດສະຍະສິກຂາບົດ ວ່າດ້ວຍການໄປສັ່ງສອນພິກຂຸນີເຖິງທີ່ສຳນັກ
ປະຣຳປະຣະສິກຂາບົດ ວ່າດ້ວຍການສັນປະຣຳປະຣະໂພຊະນະ
ອະນະຕິຣິຕະສິກຂາບົດ ວ່າດ້ວຍການສັນຂອງສັນທີ່ບໍ່ເປັນເດນ[3]
ນິມັນຕະນາສິກຂາບົດ ວ່າດ້ວຍການໄດ້ຮັບນິມົນ[4]

ວິກັບປະສິກຂາບົດ ວ່າດ້ວຍການວິກັບຈີວອນ
ຣັນໂຍສິກຂາບົດ ວ່າດ້ວຍການເຂົ້າໄປໃນຕຳໜັກທີ່ບັນທົມຂອງພຣະຣາຊາ[໔]
ວິກາລະສິກຂາບົດ ວ່າດ້ວຍການເຂົ້າໝູ່ບ້ານໃນເວລາວິການ
ໂວສາສະສິກຂາບົດ ວ່າດ້ວຍການບໍ່ຫ້າມພິກຂຸນີຜູ້ຖ້າບົງການ
ອາຣັນຍະກະສິກຂາບົດ ວ່າດ້ວຍການຮັບຂອງຫຍໍ້າໃນເສນາສະນະປ່າ[໑]
ອຸສູຍາສິກຂາບົດ ວ່າດ້ວຍພິກຂຸນີກໍ່ຄະດີພິພາດ
ສັນນິຈະຍະສິກຂາບົດ ວ່າດ້ວຍການສະສົມບາດ
ປູເຣພັດຕະສິກຂາບົດ ວ່າດ້ວຍການເຂົ້າໄປສູ່ຕະກູນໃນເວລາກ່ອນສັນພັດຕາຫານ[໒]
ປັດສາພັດຕະສິກຂາບົດ ວ່າດ້ວຍການເຂົ້າໄປສູ່ຕະກູນໃນເວລາຫຼັງສັນພັດຕາຫານ
ວິກາລະສິກຂາບົດ ວ່າດ້ວຍການເຂົ້າໄປສູ່ຕະກູນໃນເວລາວິການ[໓]
ປັນຈາຫິກະສິກຂາບົດ ວ່າດ້ວຍການໃຫ້ວາຣະຜັດປ່ຽນສັງຄາຕິ
        ມີກຳນົດໄລຍະເວລາ ໕ ມື້ລ່ວງເລີຍໄປ
ສັງກະມະນີສິກຂາບົດ ວ່າດ້ວຍການຫົ່ມຈີວອນສັບປ່ຽນກັນ
ອາວະສະຖະສິກຂາບົດ ໔ ສິກຂາບົດ ວ່າດ້ວຍການໃຊ້ຜ້າຊັບລະດູແລ້ວ
        ບໍ່ສະລະແລະວ່າດ້ວຍການບໍ່ສະລະທີ່ພັກ
ປະສາກະສິກຂາບົດ ວ່າດ້ວຍການໃຫ້ບົ່ງຝີໃນຮົ່ມຜ້າ
ອາສະນະສິກຂາບົດ ວ່າດ້ວຍການນັ່ງເທິງອາສະນະ
        ໂດຍບໍ່ຂໍໂອກາດກ່ອນ ທຳ ຄືສິກຂາບົດເຫຼົ່ານີ້
ລວມ ໔໗ ສິກຂາບົດ ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ
ແລະເກີດທາງທະວານທັງ ໓ ທຸກສິກຂາບົດ ມີ ໔ ສະມຸດຖານ
ຄືກັບກະຖິນະສິກຂາບົດ

**ກະຖິນະສະມຸດຖານ ຈົບ**

## ໙. ເອລະກະໂລມະສະມຸດຖານ

[໔໙໓] ເອລະກະສິກຂາບົດ ວ່າດ້ວຍການເຮັດສັນຖັດປະສົມໃຍໄໝ
ເສີຍຍະສິກຂາບົດ ໔ ສິກຂາບົດ ວ່າດ້ວຍການນອນຮ່ວມກັນ[໔]
ອາຫັດຈະປາທະກະສິກຂາບົດ ວ່າດ້ວຍເລື້ອງຕຽງຕັ່ງມີຂາຕິດໄມ້ຂອບ[໑]
ປິນດະໂພຊະນະສິກຂາບົດ ວ່າດ້ວຍການສັນພັດຕາຫານໃນບ່ອນພັກແຮມ
ຄະນະໂພຊະນະສິກຂາບົດ ວ່າດ້ວຍການສັນຄະນະໂພຊະນະ
ວິກາລະໂພຊະນະສິກຂາບົດ ວ່າດ້ວຍການສັນໂພຊະນະໃນເວລາວິການ

ສັນນິທິກາຣະກະສິກຂາບົດ ວ່າດ້ວຍການສະສົມໂພຊະນະ
ທັນຕະໂປນະສິກຂາບົດ ວ່າດ້ວຍການຮັບປະເຄນອາຫານນອກຈາກນ້ຳແລະໄມ້ຖູແຂ້ວ
ອະເຈລະກະສິກຂາບົດ ວ່າດ້ວຍນັກບວດເປືອຍກາຍ
ອຸຍຍຸດຕະສິກຂາບົດ ວ່າດ້ວຍກອງທັບທີ່ເຄື່ອນຂະບວນອອກຮົບ
ອຸຍໂຍທິກະສິກຂາບົດ ວ່າດ້ວຍການໄປເບິ່ງສະໜາມຮົບ
ສຸຣາປານະສິກຂາບົດ ວ່າດ້ວຍການດື່ມສຸຣາແລະເມໄຣ
ໂອເຣນະນະຫາຍະນະສິກຂາບົດ ວ່າດ້ວຍຍັງບໍ່ເຖິງເຄິ່ງເດືອນອາບນ້ຳ
ທຸບພັນນະສິກຂາບົດ ວ່າດ້ວຍການເຮັດຈີວອນໃໝ່ໃຫ້ເສຍສີ
ປະຕິເທສະນີຍະສິກຂາບົດ ໘ ສິກຂາບົດ໌
ລະສຸນະສິກຂາບົດ ວ່າດ້ວຍການຂໍກະທຽມ
ອຸປະຕິດຖະສິກຂາບົດ ວ່າດ້ວຍການປົ່ນນິບັດ
ນັດຈາສິກຂາບົດ ວ່າດ້ວຍການໄປເບິ່ງການຟ້ອນລຳ
ນາຫະນະສິກຂາບົດ ວ່າດ້ວຍການເປືອຍກາຍອາບນ້ຳ
ເອກັດຖະຣະນະປາປຸຣະນະສິກຂາບົດ ວ່າດ້ວຍການໃຊ້ຜ້າຜືນດຽວ
ເປັນທັງຜ້າປູນອນເປັນທັງຜ້າຫົ່ມ
ເສີຍຍະສິກຂາບົດ ວ່າດ້ວຍການນອນເທິງຕຽງດຽວກັນ
ອັນໂຕຣັດຖະສິກຂາບົດ ວ່າດ້ວຍການທ່ຽວຈາຣິກໄປໃນບ່ອນທີ່ໜ້າຫວາດຣະແວງພາຍໃນຣັດ
ພະຫິຣັດຖະສິກຂາບົດ ວ່າດ້ວຍການທ່ຽວຈາຣິກໄປໃນບ່ອນ
ທີ່ໜ້າຫວາດຣະແວງພາຍນອກຣັດ
ອັນໂຕວັດສະສິກຂາບົດ ວ່າດ້ວຍການທ່ຽວຈາຣິກໄປພາຍໃນພັນສາ
ຈິດຕາຄາຣະສິກຂາບົດ ວ່າດ້ວຍການໄປເບິ່ງຫໍຈິດຕະກຳ
ອາສັນທິສິກຂາບົດ ວ່າດ້ວຍໃຊ້ຕັ່ງຍາວ
ສຸດຕະກັນຕະນາສິກຂາບົດ ວ່າດ້ວຍການປັ່ນດ້າຍ
ເວີຍຍາວັດຈະສິກຂາບົດ ວ່າດ້ວຍການຊ່ອຍກະທຳການຂົນຂວາຍ
ສະຫັດຖາສິກຂາບົດ ວ່າດ້ວຍການໃຫ້ຂອງຫຍ້ຳດ້ວຍມືຕົນ
ອະພິກຂຸກາວາສະສິກຂາບົດ ວ່າດ້ວຍການຢູ່ຈຳພັນສາໃນອາວາດທີ່ບໍ່ມີພິກຂຸ
ສັດຕະສິກຂາບົດ ວ່າດ້ວຍພິກຂຸນີຜູ້ບໍ່ເປັນໄຂ້ກັ້ງຄັນຮົ່ມແລະໃສ່ເກີບ
ຍານະສິກຂາບົດ ວ່າດ້ວຍການເດີນທາງດ້ວຍຍານພາຫະນະ
ສັງຄານິສິກຂາບົດ ວ່າດ້ວຍການໃຊ້ເຄື່ອງປະດັບແອວ
ອະລັງກາຣະສິກຂາບົດ ວ່າດ້ວຍການໃຊ້ເຄື່ອງປະດັບຂອງສະຕີ

ຄັນທະສິກຂາບົດ ວ່າດ້ວຍການໃຊ້ຂອງຫອມ
ວາສິຕະສິກຂາບົດ ວ່າດ້ວຍການໃຊ້ແປ້ງອົບກິ່ນ
ພິກຂຸນີສິກຂາບົດ ວ່າດ້ວຍການໃຊ້ພິກຂຸນີໃຫ້ບີບນວດ
ສິກຂະມານາສິກຂາບົດ ວ່າດ້ວຍການໃຊ້ສິກຂະມານາໃຫ້ບີບນວດ
ສາມະເນຣີສິກຂາບົດ ວ່າດ້ວຍການໃຊ້ສາມະເນຣີໃຫ້ບີບນວດ
ຄິຫິນີສິກຂາບົດ ວ່າດ້ວຍການໃຊ້ຄະລືຫັດຍິງໃຫ້ບີບນວດ
ອະສັງກັດສິກາສິກຂາບົດ ວ່າດ້ວຍການເຂົ້າໝູ່ບ້ານໂດຍບໍ່ມີຜ້າຮັດຖັນ
ລວມເປັນ ໔໔ ສິກຂາບົດ
ເກີດທາງກາຍ ບໍ່ແມ່ນເກີດທາງວາຈາກັບຈິດ
ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ
ທຸກສິກຂາບົດມີ ໔ ສະມຸດຖານ ຄືກັບເອລະກະໂລມະສິກຂາບົດ

**ເອລະກະໂລມະສະມຸດຖານ ຈົບ**

## ໗. ປະທະໂສທຳມະສະມຸດຖານ

[໔໗໔] ປະທະໂສທຳມະສິກຂາບົດ ວ່າດ້ວຍການສອນໃຫ້ກ່າວທຳແຂ່ງກັນເປັນບົດ ໆ
ອັນຍັດຕະຣະສິກຂາບົດ ວ່າດ້ວຍພິກຂຸສະແດງທຳແກ່ມາຕຸຄາມ
 ເກີນ ໕-໖ ຄຳ ເວັ້ນໄວ້ແຕ່ມີບຸຣຸດຮູ້ດຽງສາຢູ່
ອະສຳມະຕະສິກຂາບົດ ວ່າດ້ວຍພິກຂຸບໍ່ໄດ້ຮັບແຕ່ງຕັ້ງສັ່ງສອນພິກຂຸນີ
ອັດຖັງຄະຕະສິກຂາບົດ ວ່າດ້ວຍການສັ່ງສອນພິກຂຸນີໃນເວລາ
 ທີ່ດວງອາທິດອັດສະດົງແລ້ວ
ຕິຣັດສານະວິດຊາສິກຂາບົດ ໔ ສິກຂາບົດ ວ່າດ້ວຍການຮຽນເດຍຣັດສານວິຊາ
 ແລະວ່າດ້ວຍການສອນເດຍຣັດສານວິຊາ
ອະໂນກາສະປຸດສາສິກຂາບົດ ວ່າດ້ວຍການຖາມບັນຫາພິກຂຸໂດຍບໍ່ຂໍໂອກາດ
ລວມສິກຂາບົດເຫຼົ່ານີ້ເປັນ ໗ ສິກຂາບົດ
ເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ
ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ
ທຸກສິກຂາບົດມີ ໔ ສະມຸດຖານ ຄືປະທະໂສທຳມະສິກຂາບົດ

**ປະທະໂສທຳມະສະມຸດຖານ ຈົບ**

## ໗. ອັດທານະສະມຸດຖານ

[໔໖໕] ອັດທານະສິກຂາບົດ ວ່າດ້ວຍການຊັກຊວນກັນເດີນທາງໄກຮ່ວມກັນກັບພິກຂຸນີ
ນາວະສິກຂາບົດ ວ່າດ້ວຍການຊັກຊວນພິກຂຸນີໂດຍສານເຮືອລຳດຽວກັນ
ປະນີຕະສິກຂາບົດ ວ່າດ້ວຍການອອກປາກຂໍໂພຊະນະອັນປະນີດ
ມາຕຸຄາມະສິກຂາບົດ ວ່າດ້ວຍການຊັກຊວນເດີນທາງໄກຮ່ວມກັບມາຕຸຄາມ
ສັງຫະຣະສິກຂາບົດ ວ່າດ້ວຍການລັກຂົນໃນບ່ອນແຄບ
ທັນຍະສິກຂາບົດ ວ່າດ້ວຍການອອກປາກຂໍເຂົ້າເປືອກດິບ
ນິມັນຕິຕາສິກຂາບົດ ວ່າດ້ວຍພິກຂຸນີໄດ້ຮັບນິມົນ[໑]
ປະຕິເທສະນີຍະສິກຂາບົດ ໗ ສິກຂາບົດ[໒]
ສິກຂາບົດເຫຼົ່ານີ້ ລວມເປັນ ໑໕ ສິກຂາບົດ
ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ
ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ
ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ
ເກີດທາງກາຍວາຈາກັບຈິດ ລວມເປັນ ໔ ສະມຸດຖານ
ພຣະພຸດທະເຈົ້າຜູ້ຊົງມີພຣະຍານຊົງບັນຍັດໄນໄວ້ສະເໝີກັບອັດທານະສິກຂາບົດ

**ອັດທານະສະມຸດຖານ ຈົບ**

## ໘. ເຖີຍຍະສັດຖະສະມຸດຖານ

[໔໖໖] ເຖີຍຍະສັດຖະສິກຂາບົດ ວ່າດ້ວຍການເດີນທາງໄກຮ່ວມ
ກັບພໍ່ຄ້າກວຽນຜູ້ເປັນໂຈນ
ອຸປັດສຸຕິສິກຂາບົດ ວ່າດ້ວຍການຈອບຟັງພິກຂຸຜິດຖຽງກັນ
ສູປະວິນຍາປະນະສິກຂາບົດ ວ່າດ້ວຍການອອກປາກຂໍແກງແລະເຂົ້າສຸກ[໑]
ຣັດຕິສິກຂາບົດ ວ່າດ້ວຍການສົນທະນາກັບຊາຍໃນເວລາຄ່ຳຄືນ
ສັນນະສິກຂາບົດ ວ່າດ້ວຍການຢືນຄຽງຄູ່ກັນສອງຕໍ່ສອງກັບຊາຍ
ໃນໂອກາດທີ່ກຳບັງ
ໂອກາສະສິກຂາບົດ ວ່າດ້ວຍການຢືນຄຽງຄູ່ກັນສອງຕໍ່ສອງກັບຊາຍໃນກາງແຈ້ງ
ພະຍູຫະສິກຂາບົດ ວ່າດ້ວຍການຢືນຄຽງຄູ່ກັນສອງຕໍ່ສອງ
ກັບຊາຍໃນຮ່ອມຕັນ
ສິກຂາບົດເຫຼົ່ານີ້ລວມເປັນ ໗ ສິກຂາບົດ

ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ ເກີດທາງທະວານທັງ ໓
ສິກຂາບົດເຫຼົ່ານີ້ມີ ໔ ສະມຸດຖານ
ພຣະພຸດທະເຈົ້າຜູ້ຊົງເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກ
ໄດ້ຊົງສະແດງໄນໄວ້ ຄືເຖີຍຍະສັດຖະສະມຸດຖານ

**ເຖີຍຍະສັດຖະສະມຸດຖານ ຈົບ**

## ໑໐. ທຳມະເທສະນາສະມຸດຖານ

[໔໖໗] ພຣະຕະຖາຄົດເຈົ້າຈະບໍ່ຊົງສະແດງພຣະສັດທຳແກ່ຄົນກັ້ງຄັນຮົ່ມ
ຜູ້ຖືໄມ້ຄ້ອນ ຜູ້ຖືສັດຕາ ຜູ້ຖືອາວຸດ ຜູ້ໃສ່ຊຽງຕີນ
ຜູ້ໃສ່ເກີບ ຜູ້ຢູ່ໃນຍານພາຫະນະ ຜູ້ຢູ່ເທິງບ່ອນນອນ ຜູ້ນັ່ງກອດເຂົ່າ
ຜູ້ໂພກຫົວ ຜູ້ຄຸມຫົວ ລວມເປັນ ໑໑ ສິກຂາບົດພໍດີ
ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ
ທຸກສິກຂາບົດມີສະມຸດຖານອັນໜຶ່ງ ສະເໝີກັບທຳມະເທສະນາສິກຂາບົດ

**ທຳມະເທສະນາສະມຸດຖານ ຈົບ**

## ໑໑. ພູຕາໂຣຈະນະສະມຸດຖານ

[໔໖໘] ພູຕາໂຣຈະນະສິກຂາບົດວ່າດ້ວຍການບອກອຸດຕະຣິມະນຸດສະທຳທີ່ມີຈິງ
ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ
ເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ
ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ
ຂຶ້ນຊື່ວ່າພູຕາໂຣຈະນະສິກຂາບົດຍ່ອມເກີດຈາກ ໓ ສະມຸດຖານ

**ພູຕາໂຣຈະນະສະມຸດຖານ ຈົບ**

## ໑໔. ໂຈຣິວຸດຖາປະນະສະມຸດຖານ

[໔໖໙] ໂຈຣິວຸດຖາປະນະສິກຂາບົດ ວ່າດ້ວຍການບວດໃຫ້ສະຕີຜູ້ເປັນໂຈນ
ໂຈຣິວຸດຖາປະນະສິກຂາບົດນີ້ ເກີດທາງວາຈາກັບຈິດ
ບໍ່ແມ່ນເກີດທາງກາຍ ແລະເກີດທາງທະວານທັງ ໓

ສິກຂາບົດນີ້ພຣະພຸດທະເຈົ້າຜູ້ຊົງເປັນພຣະທຳຣາຊາຊົງບັນຍັດໄວ້ວ່າມີ
໔ ສະມຸດຖານ ບໍ່ຊ້ຳກັນ

**ໂຈຣີວຸດຖາປະນະສະມຸດຖານ ຈົບ**

## ໑໓. ອະນະນຸນຍາຕະສະມຸດຖານ

[໔໗໐] ອະນະນຸນຍາຕະສິກຂາບົດ ວ່າດ້ວຍການບວດໃຫ້ສິກຂະມານາ
ທີ່ຍັງບໍ່ໄດ້ຮັບອະນຸຍາດ
ເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ
ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ
ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ
ແລະເກີດທາງທະວານທັງ ໓
ຈຶ່ງມີ ໔ ສະມຸດຖານ ບໍ່ຊ້ຳກັນ

**ອະນະນຸນຍາຕະສະມຸດຖານ ຈົບ**

ຄວາມຈິງ ສະມຸດຖານໂດຍຫຍໍ້ທັງ ໑໓ ສິກຂາບົດ
ພຣະອົງຊົງສະແດງໄວ້ດີແລ້ວ ເຊິ່ງເປັນເຫດກະທຳຄວາມບໍ່ຫຼົງ
ອະນຸໂລມະໃນຫົວຂໍ້ຫຼັກທຳທີ່ເປັນແບບແຜນ
ວິນຍູຊົນເມື່ອຈື່ສະມຸດຖານນີ້ໄວ້ໄດ້
ກໍຈະບໍ່ຫຼົງໃນສະມຸດຖານແລ

**ສະມຸດຖານະສີສະສັງເຂບ ຈົບ**

# ອັນຕະຣະເປີຍຍາລະ

## ວ່າດ້ວຍການລະຂໍ້ຄວາມໃນລະຫວ່າງ

### ກະຕິປຸດສາວາຣະ

### ວາຣະວ່າດ້ວຍການຖາມວ່າມີທີ່ໃດ?

[໔໗໑] ຖາມ : ອາບັດມີທີ່ໃດ? ກອງອາບັດມີທີ່ໃດ? ວິນີຕະວັດຖຸມີທີ່ໃດ? ຄວາມບໍ່ເຄົາລົບມີທີ່ໃດ? ຄວາມເຄົາລົບມີທີ່ໃດ? ວິນີຕະວັດຖຸມີທີ່ໃດ? ວິບັດມີທີ່ໃດ? ສະມຸດຖານແຫ່ງອາບັດມີທີ່ໃດ? ມູນແຫ່ງຜິດຖຽງມີທີ່ໃດ? ມູນແຫ່ງການໂຈດມີທີ່ໃດ? ສາຣານີຍະທຳ(ທຳເປັນບ່ອນຕັ້ງແຫ່ງຄວາມຣະນຶກເຖິງກັນ)ມີທີ່ໃດ? ສັງຄະເພດ(ເລື້ອງກະທຳຄວາມແຕກຮ້າວ)ມີທີ່ໃດ? ອະທິກອນມີທີ່ໃດ? ສະມະຖະມີທີ່ໃດ?

ຕອບ : ອາບັດມີ ໕ ກອງອາບັດມີ ໕ ວິນີຕະວັດຖຸມີ ໕ ອາບັດມີ ໗ ກອງອາບັດມີ ໗ ວິນີຕະວັດຖຸມີ ໗ ຄວາມບໍ່ເຄົາລົບມີ ໖ ຄວາມເຄົາລົບມີ ໖ ວິນີຕະວັດຖຸມີ ໖ ວິບັດມີ ໔ ສະມຸດຖານແຫ່ງອາບັດມີ ໖ ມູນແຫ່ງຜິດຖຽງມີ ໖ ມູນແຫ່ງການໂຈດມີ ໖ ສາຣານີຍະທຳ

ມີ ໖ ສັງຄະເພດມີ ໑໘ ອະທິກອນມີ ໔ ສະມະຖະມີ ໗

### ອາບັດ ໕

ໃນຫົວຂໍ້ເຫຼົ່ານັ້ນ ອາບັດ ໕ ເປັນແນວໃດ? ຄື

໑. ອາບັດປາຣາຊິກ
໒. ອາບັດສັງຄາທິເສດ
໓. ອາບັດປາຈິດຕີ
໔. ອາບັດປະຕິເທສະນີຍະ
໕. ອາບັດທຸກກົດ

ນີ້ຄືອາບັດ ໕ ຢ່າງ

### ກອງອາບັດ ໕

ໃນຫົວຂໍ້ເຫຼົ່ານັ້ນ ກອງອາບັດ ໕ ເປັນແນວໃດ? ຄື

໑. ກອງອາບັດປາຣາຊິກ
໒. ກອງອາບັດສັງຄາທິເສດ
໓. ກອງອາບັດປາຈິດຕີ
໔. ກອງອາບັດປະຕິເທສະນີຍະ

໕. ກອງອາບັດທຸກກົດ

ນີ້ຄືກອງອາບັດ ໕ ກອງ

## ວິນີຕະວັດຖຸ ໕

ໃນຫົວຂໍ້ເຫຼົ່ານັ້ນ ວິນີຕະວັດຖຸ ໕ ເປັນແນວໃດ? ຄື

໑. ການເວັ້ນໄກ ໒. ການເວັ້ນຂາດ

໓. ການງົດເວັ້ນ ໔. ເຈຕະນາເຄື່ອງງົດເວັ້ນຈາກກອງ

## ອາບັດ ໕

໕. ຄວາມບໍ່ປະກອບ ການບໍ່ເຮັດ ການບໍ່ແກ້ງຕ້ອງ ການບໍ່ລະເມີດເວລາ ການກຳຈັດດ້ວຍອະຣິຍະມັກຊື່ເສຕຸ

ນີ້ຄືວິນີຕະວັດຖຸ ໕ ຢ່າງ

## ອາບັດ ໗

ໃນຫົວຂໍ້ເຫຼົ່ານັ້ນ ອາບັດ ໗ ເປັນແນວໃດ? ຄື

໑. ອາບັດປາຣາຊິກ ໒. ອາບັດສັງຄາທິເສດ

໓. ອາບັດຖຸນລັດໄຈ ໔. ອາບັດປາຈິດຕີ

໕. ອາບັດປະຕິເທສະນີຍະ ໖. ອາບັດທຸກກົດ

໗. ອາບັດທຸບພາສິດ

ນີ້ຄືອາບັດ ໗ ຢ່າງ

## ກອງອາບັດ ໗

ໃນຫົວຂໍ້ເຫຼົ່ານັ້ນ ກອງອາບັດ ໗ ເປັນແນວໃດ? ຄື

໑. ກອງອາບັດປາຣາຊິກ ໒. ກອງອາບັດສັງຄາທິເສດ

໓. ກອງອາບັດຖຸນລັດໄຈ ໔. ກອງອາບັດປາຈິດຕີ

໕. ກອງອາບັດປະຕິເທສະນີຍະ ໖. ກອງອາບັດທຸກກົດ

໗. ກອງອາບັດທຸບພາສິດ

ນີ້ຄືກອງອາບັດ ໗ ກອງ

## ວິນິຕະວັດຖຸ ໗

ໃນຫົວຂໍ້ເຫຼົ່ານັ້ນ ວິນິຕະວັດຖຸ ໗ ເປັນແນວໃດ? ຄື

໑. ການເວັ້ນໄກ ໔. ການເວັ້ນຂາດ

໓. ການງົດເວັ້ນ ໔. ເຈຕະນາເຄື່ອງງົດເວັ້ນຈາກກອງອາບັດ ໗

໕. ຄວາມບໍ່ປະກອບ

໖. ການບໍ່ເຮັດ ການບໍ່ແກ້ງຕ້ອງ ການບໍ່ລະເມີດເວລາ

໗. ການກຳຈັດດ້ວຍອະຣິຍະມັກຊີ່ເສຕຸ

ນີ້ຄືວິນິຕະວັດຖຸ ໗ ຢ່າງ

## ຄວາມບໍ່ເຄົາລົບ ໖

ໃນຫົວຂໍ້ເຫຼົ່ານັ້ນ ຄວາມບໍ່ເຄົາລົບ ໖ ເປັນແນວໃດ? ຄື

໑. ຄວາມບໍ່ເຄົາລົບໃນພຣະພຸດທະເຈົ້າ ໔. ຄວາມບໍ່ເຄົາລົບໃນພຣະທຳ

໓. ຄວາມບໍ່ເຄົາລົບໃນພຣະສົງ ໔. ຄວາມບໍ່ເຄົາລົບໃນສິກຂາ

໕. ຄວາມບໍ່ເຄົາລົບໃນອັບປະມາທະທຳ ໖. ຄວາມບໍ່ເຄົາລົບໃນປະຕິສັນຖານ

ນີ້ຄືຄວາມບໍ່ເຄົາລົບ ໖ ປະການ

## ຄວາມເຄົາລົບ ໖

ໃນຫົວຂໍ້ເຫຼົ່ານັ້ນ ຄວາມເຄົາລົບ ໖ ເປັນແນວໃດ? ຄື

໑. ຄວາມເຄົາລົບໃນພຣະພຸດທະເຈົ້າ ໔. ຄວາມເຄົາລົບໃນພຣະທຳ

໓. ຄວາມເຄົາລົບໃນພຣະສົງ ໔. ຄວາມເຄົາລົບໃນສິກຂາ

໕. ຄວາມເຄົາລົບໃນອັບປະມາທະທຳ ໖. ຄວາມເຄົາລົບໃນປະຕິສັນຖານ

ນີ້ຄືຄວາມເຄົາລົບ ໖ ປະການ

## ວິນິຕະວັດຖຸ ໖

ໃນຫົວຂໍ້ເຫຼົ່ານັ້ນ ວິນິຕະວັດຖຸ ໖ ເປັນແນວໃດ? ຄື

໑. ການເວັ້ນໄກ ໔. ການເວັ້ນຂາດ

໓. ການງົດເວັ້ນ ໔. ເຈຕະນາເຄື່ອງງົດເວັ້ນຈາກຄວາມ

## ບໍ່ເຄົາລົບ ໖

໕. ຄວາມບໍ່ປະກອບ ການບໍ່ເຮັດ ການບໍ່ແກ້ງຕ້ອງ ການບໍ່ລະເມີດເວລາ

໖. ການກຳຈັດດ້ວຍອະຣິຍະມັກຊື່ເສຕຸ

ນີ້ຄືວິນີຕະວັດຖຸ ໖ ປະການ

## ວິບັດ ໔

ໃນຫົວຂໍ້ເຫຼົ່ານັ້ນ ວິບັດ ໔ ເປັນແນວໃດ? ຄື

໑. ສີລະວິບັດ

໒. ອາຈາຣະວິບັດ

໓. ທິດຖິວິບັດ

໔. ອາຊີວະວິບັດ

ນີ້ຄືວິບັດ ໔ ຢ່າງ

## ສະມຸດຖານແຫ່ງອາບັດ ໖

ໃນຫົວຂໍ້ເຫຼົ່ານັ້ນ ສະມຸດຖານແຫ່ງອາບັດ ໖ ເປັນແນວໃດ? ຄື

໑. ອາບັດເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ

໒. ອາບັດເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ

໓. ອາບັດເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ

໔. ອາບັດເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

໕. ອາບັດເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ

໖. ອາບັດເກີດທາງກາຍວາຈາກັບຈິດ

ນີ້ຄືສະມຸດຖານແຫ່ງອາບັດ ໖ ສະມຸດຖານ

## ມູນເຫດແຫ່ງຜິດຖຽງ ໖

[໒໗໒] ໃນຫົວຂໍ້ເຫຼົ່ານັ້ນ ມູນເຫດແຫ່ງຜິດຖຽງ ໖ ປະການ ຄື

ພິກຂຸໃນທຳວິໄນ

໑. ເປັນຜູ້ມັກໂກດ ຜູກໂກດໄວ້ ພິກຂຸໃດເປັນຜູ້ມັກໂກດ ຜູກໂກດໄວ້ ພິກຂຸນັ້ນບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ບໍ່ມີຄວາມເຄົາລົບບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສົງ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ໃນພຣະສົງ ແລະບໍ່ເຮັດ

ສິກຂາໃຫ້ບໍລິບູນ ຍ່ອມກໍ່ຜິດຖຽງໃຫ້ເກີດຂຶ້ນໃນສົງ ເຊິ່ງເປັນໄປເພື່ອບໍ່ເກື້ອກູນແກ່ຊົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາ ແລະມະນຸດທັງຫຼາຍ ພິກຂຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາ ເຫັນມູນເຫດແຫ່ງຜິດຖຽງແນວນີ້ພາຍໃນຫຼືພາຍນອກ ທ່ານທັງຫຼາຍເພິ່ງພະຍາຍາມເພື່ອລະມູນເຫດແຫ່ງຜິດຖຽງແນວນີ້ທີ່ເປັນບາບພາຍໃນຫຼືພາຍນອກນັ້ນແລຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນເຫດແຫ່ງຜິດຖຽງແນວນີ້ພາຍໃນຫຼືພາຍນອກ ທ່ານທັງຫຼາຍເພິ່ງປະຕິບັດເພື່ອໃຫ້ມູນເຫດແຫ່ງຜິດຖຽງທີ່ເປັນບາບນັ້ນ ແລຍືດເຍື້ອຕໍ່ໄປ ການລະມູນເຫດແຫ່ງຜິດຖຽງທີ່ເປັນບາບນັ້ນຍ່ອມມີໄດ້ ແລະມູນເຫດແຫ່ງຜິດຖຽງທີ່ເປັນບາບນັ້ນ ຍ່ອມບໍ່ຍືດເຍື້ອຕໍ່ໄປ

໒. ເປັນຜູ້ລົບຫຼູ່ ຕີສະເໝີ ຯລຯ

໓. ເປັນຜູ້ຣິດສະຫຍາ ມີຄວາມຂີ້ຖີ່ ຯລຯ

໔. ເປັນຜູ້ໂອ້ອວດ ມີມາຍາ ຯລຯ

໕. ເປັນຜູ້ມີຄວາມປາຖະໜາຊົ່ວເປັນມິດສາທິດຖິ ຯລຯ

໖. ເປັນຜູ້ຢຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຖືໝັ້ນໄດ້ຍາກ ພິກຂຸທັງຫຼາຍ ພິກຂຸໃດ ເປັນຜູ້ຢຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຢຶດໝັ້ນໄດ້ຍາກ ພິກຂຸນັ້ນບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີ ຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສົງ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ຯລຯ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ຍ່ອມກໍ່ຜິດຖຽງ ໃຫ້ເກີດຂຶ້ນໃນສົງ ເຊິ່ງເປັນໄປເພື່ອບໍ່ເກື້ອກູນແກ່ຊົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາ ແລະມະນຸດທັງຫຼາຍ ພິກຂຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາເຫັນມູນເຫດແຫ່ງຜິດຖຽງແນວນີ້ທັງພາຍໃນຫຼືພາຍນອກ ທ່ານທັງຫຼາຍເພິ່ງພະຍາຍາມເພື່ອລະມູນເຫດແຫ່ງຜິດຖຽງແນວນີ້ທີ່ເປັນບາບພາຍໃນຫຼືພາຍນອກ ນັ້ນແລ ຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນເຫດແຫ່ງຜິດຖຽງແນວນີ້ພາຍໃນ ຫຼືພາຍນອກ ທ່ານທັງຫຼາຍເພິ່ງປະຕິບັດເພື່ອໃຫ້ມູນເຫດແຫ່ງຜິດຖຽງທີ່ເປັນບາບນັ້ນແລຍືດເຍື້ອຕໍ່ໄປ ການລະມູນເຫດແຫ່ງຜິດຖຽງທີ່ເປັນບາບນັ້ນຍ່ອມມີໄດ້ ແລະມູນເຫດແຫ່ງຜິດຖຽງທີ່ເປັນບາບນັ້ນ ຍ່ອມບໍ່ຍືດເຍື້ອຕໍ່ໄປ

# ມູນເຫດແຫ່ງການໂຈດ ໖

[໔໗໓] ໃນຫົວຂໍ້ເຫຼົ່ານັ້ນ ມູນເຫດແຫ່ງການໂຈດ ໖ ປະການ ຄື
ພິກຂຸໃນທຳວິໄນ

໑. ເປັນຜູ້ມັກໂກດ ຜູກໂກດໄວ້ ພິກຂຸໃດເປັນຜູ້ມັກໂກດ ຜູກໂກດໄວ້ ພິກຂຸນັ້ນບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ບໍ່ມີຄວາມເຄົາລົບບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ໃນພຣະສົງ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ໃນພຣະສົງ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ຍ່ອມກໍ່ການໂຈດໃຫ້ເກີດຂຶ້ນໃນສົງ ເຊິ່ງເປັນໄປເພື່ອບໍ່ເກື້ອກູນແກ່ຊົນທັງຫຼາຍ ເພື່ອບໍ່ແມ່ນສຸກແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ ເທວະດາແລະມະນຸດທັງຫຼາຍ ພິກຂຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາ ເຫັນມູນເຫດແຫ່ງການໂຈດແນວນີ້ພາຍໃນຫຼືພາຍນອກ ທ່ານທັງຫຼາຍເພິ່ງພະຍາຍາມເພື່ອລະມູນເຫດແຫ່ງການໂຈດແນວນີ້ທີ່ເປັນບາບພາຍໃນຫຼືພາຍນອກນັ້ນແລຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນເຫດແຫ່ງການໂຈດ ແນວນີ້ພາຍໃນຫຼືພາຍນອກ ທ່ານທັງຫຼາຍເພິ່ງປະຕິບັດເພື່ອໃຫ້ມູນເຫດແຫ່ງການໂຈດທີ່ເປັນບາບນັ້ນແລຍືດເຍື້ອຕໍ່ໄປ ການລະມູນເຫດແຫ່ງການໂຈດ ທີ່ເປັນບາບນັ້ນຍ່ອມມີໄດ້ ແລະມູນເຫດແຫ່ງການໂຈດ ທີ່ເປັນບາບນັ້ນ ຍ່ອມບໍ່ຍືດເຍື້ອຕໍ່ໄປ

໒. ເປັນຜູ້ລົບຫຼູ່ ຕີສະເໝີ ຯລຯ

໓. ເປັນຜູ້ຣິດສະຫຍາ ມີຄວາມຂີ້ຖີ່ ຯລຯ

໔. ເປັນຜູ້ໂອ້ອວດ ມີມາຍາ ຯລຯ

໕. ເປັນຜູ້ມີຄວາມປາຖະໜາຊົ່ວເປັນມິດສາທິດຖິ ຯລຯ

໖. ເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຖືໝັ້ນໄດ້ຍາກ ພິກຂຸທັງຫຼາຍ ພິກຂຸໃດ ເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມ ສະລະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ ພິກຂຸນັ້ນບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສາດສະດາ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະທຳ ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງໃນພຣະສົງ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ມີຄວາມເຄົາລົບ ບໍ່ມີຄວາມຢຳເກງ ໃນພຣະສາດສະດາ ຯລຯ ແລະບໍ່ເຮັດສິກຂາໃຫ້ບໍລິບູນ ຍ່ອມກໍ່ການໂຈດ ໃຫ້ເກີດຂຶ້ນໃນສົງ ເຊິ່ງເປັນໄປເພື່ອບໍ່ເກື້ອກູນແກ່ຊົນທັງຫຼາຍ ເພື່ອບໍ່ແມ່ນສຸກ

ແກ່ຄົນທັງຫຼາຍ ເພື່ອບໍ່ແມ່ນປະໂຫຍດແກ່ຄົນທັງຫຼາຍ ເພື່ອບໍ່ເກື້ອກູນ ເພື່ອທຸກແກ່ເທວະດາແລະມະນຸດທັງຫຼາຍ ພິກຂຸທັງຫຼາຍ ຖ້າທ່ານທັງຫຼາຍພິຈາລະນາເຫັນມູນເຫດແຫ່ງການໂຈດແນວນີ້ ທັງພາຍໃນຫຼືພາຍນອກ ທ່ານທັງຫຼາຍ ເພິ່ງພະຍາຍາມເພື່ອລະມູນເຫດແຫ່ງການໂຈດທີ່ເປັນບາບນັ້ນແລທັງພາຍໃນຫຼືພາຍນອກນັ້ນ ຖ້າທ່ານທັງຫຼາຍບໍ່ພິຈາລະນາເຫັນມູນເຫດແຫ່ງການໂຈດແນວນີ້ ພາຍໃນຫຼືພາຍນອກ ທ່ານທັງຫຼາຍເພິ່ງປະຕິບັດ ເພື່ອໃຫ້ມູນເຫດແຫ່ງການໂຈດທີ່ເປັນບາບນັ້ນແລບໍ່ຍືດເຍື້ອຕໍ່ໄປ ການລະ

ມູນເຫດແຫ່ງການໂຈດທີ່ເປັນບາບນັ້ນຍ່ອມມີໄດ້ ແລະມູນເຫດແຫ່ງການໂຈດທີ່ເປັນບາບນັ້ນ ຍ່ອມບໍ່ຍືດເຍື້ອຕໍ່ໄປ

ພິກຂຸທັງຫຼາຍ ມູນເຫດແຫ່ງການໂຈດ ๖ ປະການນີ້ແລ

## **ສາຣານີຍະທຳ ๖ ປະການ**

[๘໗๔] ໃນຫົວຂໍ້ເຫຼົ່ານັ້ນ ສາຣານີຍະທຳ ๖ ປະການ ຄື

ພິກຂຸໃນທຳວິໄນ

໑. ຕັ້ງໝັ້ນເມດຕາກາຍຍະກຳໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໒. ຕັ້ງໝັ້ນເມດຕາວະຈີກຳ ຯລຯ

໓. ຕັ້ງໝັ້ນເມດຕາມະໂນກຳໃນເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໔. ບໍຣິໂພກໂດຍບໍ່ແບ່ງແຍກລາບທັງຫຼາຍທີ່ປະກອບດ້ວຍທຳ ໄດ້ມາໂດຍທຳ ໂດຍທີ່ສຸດແມ່ນພຽງບິນທະບາດ ບໍຣິໂພກຮ່ວມກັບພົມມະຈາຣີທັງຫຼາຍ ຜູ້ມີສີນ ແມ່ນນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໕. ມີສີນທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣານີຍະທຳ ທີ່ເຮັດ

ໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໖. ມີອະຣິຍະທິດຖິ ອັນເປັນທຳເຄື່ອງນຳອອກເພື່ອຄວາມສິ້ນທຸກໂດຍຊອບແກ່ຜູ້ເຮັດຕາມ ສະເໝີກັນກັບເພື່ອນພົມມະຈາຣີທັງຫຼາຍ ທັງຕໍ່ໜ້າແລະລັບຫຼັງ ແມ່ນນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

ສາຣານີຍະທຳ ໖ ປະການນີ້ແລ

## ສັງຄະເພດ ໑໘ ປະການ

[໔໗໕] ໃນຫົວຂໍ້ເຫຼົ່ານັ້ນ ເລື້ອງທຳຄວາມແຕກຮ້າວກັນ ໑໘ ປະການ ເປັນແນວໃດ? ຄື ພິກຂຸໃນທຳວິໄນນີ້

໑. ສະແດງອະທຳວ່າ ເປັນທຳ

໒. ສະແດງທຳວ່າ ເປັນອະທຳ

໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ ເປັນວິໄນ

໔. ສະແດງວິໄນວ່າ ບໍ່ແມ່ນວິໄນ

໕. ສະແດງສິ່ງທີ່ພຣະຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ຕັດໄວ້ວ່າ ພຣະຕະຖາຄົດໄດ້ພາສິດໄວ້ ໄດ້ຕັດໄວ້

໖. ສະແດງສິ່ງທີ່ພຣະຕະຖາຄົດໄດ້ພາສິດໄວ້ ໄດ້ຕັດໄວ້ວ່າ ພຣະຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ຕັດໄວ້

໗. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ພຣະຕະຖາຄົດບໍ່ໄດ້ຊົງປະພຶດມາວ່າ ພຣະຕະຖາຄົດໄດ້ຊົງປະພຶດມາ

໘. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ພຣະຕະຖາຄົດໄດ້ຊົງປະພຶດມາວ່າ ພຣະຕະຖາຄົດບໍ່ໄດ້ ຊົງປະພຶດມາ

໙. ສະແດງສິ່ງທີ່ພຣະຕະຖາຄົດບໍ່ໄດ້ຊົງບັນຍັດໄວ້ວ່າ ພຣະຕະຖາຄົດໄດ້ຊົງບັນຍັດໄວ້

໑໐. ສະແດງສິ່ງທີ່ພຣະຕະຖາຄົດໄດ້ຊົງບັນຍັດໄວ້ວ່າ ພຣະຕະຖາຄົດບໍ່ໄດ້ຊົງບັນຍັດໄວ້

໑໑. ສະແດງອາບັດວ່າ ເປັນອະນາບັດ

໑໒. ສະແດງອະນາບັດວ່າ ເປັນອາບັດ

໑໓. ສະແດງອາບັດເບົາວ່າ ເປັນອາບັດໜັກ

໑໔. ສະແດງອາບັດໜັກວ່າ ເປັນອາບັດເບົາ

໑໕. ສະແດງອາບັດທີ່ມີສ່ວນເຫຼືອວ່າ ເປັນອາບັດທີ່ບໍ່ມີສ່ວນເຫຼືອ

໑໖. ສະແດງອາບັດທີ່ບໍ່ມີສ່ວນເຫຼືອວ່າ ເປັນອາບັດທີ່ມີສ່ວນເຫຼືອ

໑໗. ສະແດງອາບັດຊົ່ວຫຍາບວ່າ ເປັນອາບັດບໍ່ຊົ່ວຫຍາບ

໑໘. ສະແດງອາບັດບໍ່ຊົ່ວຫຍາບວ່າ ເປັນອາບັດຊົ່ວຫຍາບ

ນີ້ຄື ເລື້ອງກະທຳຄວາມແຕກຮ້າວກັນ ໑໘ ປະການ

## ອະທິກອນ ໔

ໃນຫົວຂໍ້ເຫຼົ່ານັ້ນ ອະທິກອນ ໔ ເປັນແນວໃດ? ຄື

໑. ວິວາທາທິກອນ ໒. ອະນຸວາທາທິກອນ

໓. ອາປັດຕາທິກອນ ໔. ກິດຈາທິກອນ

ນີ້ຄືອະທິກອນ ໔ ຢ່າງ

## ສະມະຖະ ໗

ໃນຫົວຂໍ້ເຫຼົ່ານັ້ນ ສະມະຖະ ໗ ເປັນແນວໃດ? ຄື

໑. ສຳມຸຂາວິໄນ ໒. ສະຕິວິໄນ

໓. ອະມູລະຫະວິໄນ ໔. ປະຕິນຍາຕະກະຣະນະ

໕. ເຍພຸຍຍະສິກາ ໖. ຕັດສະປາປິຍະສິກາ

໗. ຕິນະວັດຖາຣະກະ

ນີ້ຄືສະມະຖະ ໗ ຢ່າງ

### ກະຕິປຸດສາວາຣະ ຈົບ

## ຫົວຂໍ້ປະຈຳວາຣະ

ອາບັດ ກອງອາບັດ ວິນິຕະວັດຖຸ ແລະອາບັດ ກອງອາບັດ ວິນິຕະວັດຖຸ
ອີກຢ່າງ ລະ ໗ ຄວາມບໍ່ເຄົາລົບ ຄວາມເຄົາລົບ
ວິນິຕະວັດຖຸອີກ ໗ ວິບັດ ສະມຸດຖານແຫ່ງອາບັດ
ມູນແຫ່ງການຜິດຖຽງແລະການໂຈດ
ສາຣານີຍະທຳ ສັງຄະເພດ ອະທິກອນ ແລະສະມະຖະ ໗
ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວ ລວມເປັນ ໑໗ ບົດ

## ๑. ສະອາປັດຕິສະມຸດຖານະວາຣະ

## ວາຣະວ່າດ້ວຍສະມຸດຖານແຫ່ງອາບັດ ๖ ສະມຸດຖານ

[໘໗๖] ຖາມ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ๑ ພິກຂຸຕ້ອງອາບັດປາຣາຊິກບໍ

ຕອບ : ບໍ່ຕ້ອງເລີຍ

ຖາມ : ຕ້ອງອາບັດສັງຄາທິເສດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດຖຸນລັດໄຈບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປາຈິດຕີບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປະຕິເທສະນີຍະບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດທຸກກົດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງທຸບພາສິດບໍ

ຕອບ : ບໍ່ຕ້ອງເລີຍ

ຖາມ : ດ້ວຍສະມຸດຖານແຫ່ງອາບັດທີ ໘ ພິກຂຸຕ້ອງອາບັດປາຣາຊິກບໍ

ຕອບ : ບໍ່ຕ້ອງເລີຍ

ຖາມ : ຕ້ອງອາບັດສັງຄາທິເສດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດຖຸນລັດໄຈບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປາຈິດຕີບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປະຕິເທສະນີຍະບໍ

ຕອບ : ບໍ່ຕ້ອງເລີຍ

ຖາມ : ຕ້ອງອາບັດທຸກກົດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງທຸບພາສິດບໍ

ຕອບ : ບໍ່ຕ້ອງເລີຍ

ຖາມ : ດ້ວຍສະມຸດຖານແຫ່ງອາບັດທີ ໓ ພິກຂຸຕ້ອງອາບັດປາຣາຊິກບໍ

ຕອບ : ບໍ່ຕ້ອງເລີຍ

ຖາມ : ຕ້ອງອາບັດສັງຄາທິເສດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດຖຸນລັດໄຈບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປາຈິດຕີບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປະຕິເທສະນີຍະບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດທຸກກົດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງທຸບພາສິດບໍ

ຕອບ : ບໍ່ຕ້ອງເລີຍ

ຖາມ : ດ້ວຍສະມຸດຖານແຫ່ງອາບັດທີ ໔ ພິກຂຸຕ້ອງອາບັດປາຣາຊິກບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດສັງຄາທິເສດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດຖຸນລັດໄຈບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປາຈິດຕີບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປະຕິເທສະນີຍະບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດທຸກກົດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງທຸບພາສິດບໍ

ຕອບ : ບໍ່ຕ້ອງເລີຍ

ຖາມ : ດ້ວຍສະມຸດຖານແຫ່ງອາບັດທີ ໕ ພິກຂຸຕ້ອງອາບັດປາຣາຊິກບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດສັງຄາທິເສດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດຖຸນລັດໄຈບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປາຈິດຕີບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປະຕິເທສະນີຍະບໍ

ຕອບ : ບໍ່ຕ້ອງເລີຍ

ຖາມ : ຕ້ອງອາບັດທຸກກົດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງທຸບພາສິດບໍ

ຕອບ : ຕ້ອງກໍມີ

ຖາມ : ດ້ວຍສະມຸດຖານແຫ່ງອາບັດທີ ໖ ພິກຂຸຕ້ອງອາບັດປາຣາຊິກບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດສັງຄາທິເສດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດຖຸນລັດໄຈບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປາຈິດຕີບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດປະຕິເທສະນີຍະບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງອາບັດທຸກກົດບໍ

ຕອບ : ຕ້ອງກໍມີ

ຖາມ : ຕ້ອງທຸບພາສິດບໍ

ຕອບ : ບໍ່ຕ້ອງເລີຍ

**ສະອາປັດຕິສະມຸດຖານະວາຣະທີ ໑ ຈົບ**

## ໒. ກະຕາປັດຕິວາຣະ

## ວາຣະວ່າດ້ວຍຕ້ອງອາບັດທີ່ໃດ?

[໒ກກ] ຖາມ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໑ ພິກຂຸຕ້ອງອາບັດທີ່ໃດ?

ຕອບ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໑ ພິກຂຸຕ້ອງອາບັດ ໕ ຢ່າງ ຄື

໑. ພິກຂຸມີຄວາມສຳຄັນວ່າຄວນ ສ້າງກຸດຕິເຊິ່ງສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເກີນຂະໜາດ ມີອັນຕະລາຍ ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ຍັງເຫຼືອດິນຈີ່ອີກກ້ອນໜຶ່ງຈຶ່ງຈະສຳເລັດ ຕ້ອງອາບັດຖຸນລັດໄຈ

໓. ດິນຈີ່ກ້ອນສຸດທ້າຍສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ

໔. ພິກຂຸມີຄວາມສຳຄັນວ່າຄວນ ສັນໂພຊະນະໃນເວລາວິການ ຕ້ອງອາບັດປາຈິດຕີ

໕. ພິກຂຸມີຄວາມສຳຄັນວ່າຄວນ ຮັບຂອງຫຍ້ຳຫຼືຂອງສັນຈາກມືພິກຂຸນີ ຜູ້ບໍ່ແມ່ນຍາດ ຜູ້ເຂົ້າໄປສູ່ບໍລິເວນເຮືອນ ດ້ວຍມືຂອງຕົນມາສັນ ຕ້ອງອາບັດ ປະຕິເທສະນີຍະ

ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໑ ພິກຂຸຕ້ອງອາບັດ ໕ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາກອງອາບັດ ກ ກອງ ຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ

ເກີດດ້ວຍສະມຸດຖານທີ່ໃດ? ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ ບັນດາສະມະຖະ ກ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື

(໑) ສີລະວິບັດ (໒) ອາຈາຣະວິບັດ

ບັນດາກອງອາບັດ ກ ກອງ ຈັດເຂົ້າກອງອາບັດ ໕ ກອງ ຄື (໑) ກອງອາບັດສັງຄາທິເສດ (໒) ກອງອາບັດຖຸນລັດໄຈ (໓) ກອງອາບັດປາຈິດຕີ (໔) ກອງອາບັດປະຕິເທສະນີຍະ (໕) ກອງອາ ບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ៗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສໍາມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສໍາມຸຂາວິໄນແລະຕິນະວັດຖາຣະກະ

[໒໗໙] ຖາມ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໒ ພິກຂຸຕ້ອງອາບັດທີ່ໃດ?

ຕອບ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໒ ພິກຂຸຕ້ອງອາບັດ ໔ ຢ່າງ ຄື

໑. ພິກຂຸມີຄວາມສໍາຄັນວ່າຄວນ ສັ່ງວ່າ "ຈົ່ງສ້າງກຸດຕິໃຫ້ເຮົາ" ຜູ້ຮັບຄໍາສັ່ງສ້າງກຸດຕິໃຫ້ພິກຂຸນັ້ນ ເຊິ່ງສົງບໍ່ໄດ້ສະແດງພື້ນທີ່ໃຫ້ ສ້າງເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ຍັງເຫຼືອດິນຈີ່ກ້ອນໜຶ່ງຈຶ່ງຈະສໍາເລັດ ຕ້ອງອາບັດຖຸນລັດໄຈ

໓. ດິນຈີ່ກ້ອນສຸດທ້າຍສໍາເລັດແລ້ວ ຕ້ອງອາບັດສັງຄາທິເສດ

໔. ພິກຂຸມີຄວາມສໍາຄັນວ່າຄວນ ສອນອະນຸປະສໍາບັນໃຫ້ກ່າວທໍາແຂ່ງກັນເປັນບົດ ໆ ຕ້ອງອາບັດປາຈິດຕິ

ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໒ ພິກຂຸຕ້ອງອາບັດ ໔ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ฯລฯ

ບັນດາສະມະຖະ ៗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື

(໑) ສີລະວິບັດ

(໒) ອາຈາຣະວິບັດ

ບັນດາກອງອາບັດ ៗ ກອງ ຈັດເຂົ້າກອງອາບັດ ໔ ກອງ ຄື (໑) ກອງອາບັດສັງຄາທິເສດ (໒) ກອງອາບັດຖຸນລັດໄຈ (໓) ກອງອາບັດປາຈິດຕິ (໔) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄືເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ៗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສໍາມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສໍາມຸຂາວິໄນແລະຕິນະວັດຖາຣະກະ

[໒໘໐] ຖາມ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໓ ພິກຂຸຕ້ອງອາບັດທີ່ໃດ?

ຕອບ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໓ ພິກຂຸຕ້ອງອາບັດ ໕ ຢ່າງ ຄື

໑. ພິກຂຸມີຄວາມສໍາຄັນວ່າຄວນ ສ້າງກຸດຕິເຊິ່ງສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເກີນຂະໜາດ ມີອັນຕະລາຍ ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໒. ຍັງເຫຼືອດິນຈີ່ອີກກ້ອນໜຶ່ງຈຶ່ງຈະສໍາເລັດ ຕ້ອງອາບັດຖຸນລັດໄຈ

໓. ດິນຈີ່ກ້ອນສຸດທ້າຍສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ

໔. ພິກຂຸມີຄວາມສຳຄັນວ່າຄວນ ອອກປາກຂໍໂພຊະນະອັນປະນີດມາເພື່ອ ປະໂຫຍດຕົນແລ້ວສັນ ຕ້ອງອາບັດປາຈິດຕີ

໕. ພິກຂຸມີຄວາມສຳຄັນວ່າຄວນ ບໍ່ຫ້າມພິກຂຸນີຜູ້ຖ້າບົງການສັນຢູ່ ຕ້ອງອາບັດ ປະຕິເທສະນີຍະ

ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໓ ພິກຂຸຕ້ອງອາບັດ ໕ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທໍ່ໃດ? ຯລຯ ລະງັບ ດ້ວຍສະມະຖະທໍ່ໃດ? ບັນດາສະມະຖະ ໗ ຢ່າງ

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື

(໑) ສີລະວິບັດ

(໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໕ ກອງ ຄື (໑) ກອງອາບັດສັງຄາທິເສດ (໒) ກອງອາບັດຖຸນລັດໄຈ (໓) ກອງອາບັດປາຈິດຕີ (໔) ກອງອາບັດປະຕິເທສະນີຍະ (໕) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ

ຄື ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນແລະຕິນະວັດຖາຣະກະ

[໔໓໐] ຖາມ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໔ ພິກຂຸຕ້ອງອາບັດທໍ່ໃດ?

ຕອບ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໔ ພິກຂຸຕ້ອງອາບັດ ໖ ຢ່າງ ຄື

໑. ພິກຂຸເສບເມຖຸນທຳ ຕ້ອງອາບັດປາຣາຊິກ

໒. ພິກຂຸມີຄວາມສຳຄັນວ່າບໍ່ຄວນ ສ້າງກຸດຕິດ້ວຍການຂໍເອົາເອງ ເຊິ່ງສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເກີນຂະໜາດ ມີອັນຕະລາຍ ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໓. ຍັງເຫຼືອດິນຈີ່ອີກກ້ອນໜຶ່ງຈຶ່ງຈະສຳເລັດ ຕ້ອງອາບັດຖຸນລັດໄຈ

໔. ດິນຈີ່ກ້ອນສຸດທ້າຍສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ

໕. ພິກຂຸມີຄວາມສຳຄັນວ່າບໍ່ຄວນ ສັນໂພຊະນະໃນເວລາວິການ ຕ້ອງອາບັດປາຈິດຕີ

໖. ພິກຂຸມີຄວາມສຳຄັນວ່າບໍ່ຄວນ ຮັບຂອງຫຍ້ຳຫຼືຂອງສັນຈາກມືພິກຂຸນີ ທີ່ບໍ່ແມ່ນຍາດ ຜູ້ເຂົ້າໄປສູ່ບໍລິເວນເຮືອນ ດ້ວຍມືຂອງຕົນມາສັນ ຕ້ອງອາບັດປະຕິເທສະນີຍະ

ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໔ ພິກຂຸຕ້ອງອາບັດ ໖ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທໍ່ໃດ? ຯລຯ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທໍ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື

(໑) ສີລະວິບັດ

(໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໖ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດສັງຄາທິເສດ (໓) ກອງອາບັດຖຸນລັດໄຈ (໔) ກອງອາບັດປາຈິດຕີ (໕) ກອງອາບັດປະຕິເທສະນີຍະ (໖) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ

ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນແລະຕິນະວັດຖາຣະກະ

[໔໗໑] ຖາມ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໕ ພິກຂຸຕ້ອງອາບັດທໍ່ໃດ?

ຕອບ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໕ ພິກຂຸຕ້ອງອາບັດ ໖ ຢ່າງ ຄື

໑. ພິກຂຸມີຄວາມປາຖະໜາຊົ່ວຊ້າ ຖືກຄວາມຢາກຄອບງຳ ກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ ບໍ່ເປັນຈິງ ຕ້ອງອາບັດປາຣາຊິກ

໒. ພິກຂຸມີຄວາມສຳຄັນວ່າບໍ່ຄວນ ສັ່ງວ່າ "ຈົ່ງສ້າງກຸດຕິໃຫ້ເຮົາ" ຜູ້ຮັບຄຳສັ່ງສ້າງກຸດຕິໃຫ້ແກ່ພິກຂຸນັ້ນ ເຊິ່ງສົງບໍ່ໄດ້ສະແດງພື້ນທີ່ໃຫ້ ສ້າງເກີນຂະໜາດ ເປັນພື້ນທີ່ມີອັນຕະລາຍ ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ

໓. ຍັງເຫຼືອດິນຈີ່ອີກກ້ອນໜຶ່ງຈຶ່ງຈະສຳເລັດ ຕ້ອງອາບັດຖຸນລັດໄຈ

໔. ດິນຈີ່ກ້ອນສຸດທ້າຍສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ

໕. ພິກຂຸມີຄວາມສຳຄັນວ່າບໍ່ຄວນ ສອນອະນຸປະສຳບັນໃຫ້ກ່າວທຳແຂ່ງກັນເປັນບົດ ໆ ຕ້ອງອາບັດປາຈິດຕີ

໖. ພິກຂຸບໍ່ຕ້ອງການຈະດ່າ ບໍ່ຕ້ອງການຈະສົບປະໝາດ ບໍ່ຕ້ອງການຈະເຮັດໃຫ້ເກີ້ເຂີນ ຕ້ອງການຈະຫຼິ້ນ ກ່າວກັບອຸປະສຳບັນຊາດກຳເນີດຕ່ຳ ດ້ວຍຄຳເວົ້າບົ່ງເຖິງຊາດກຳເນີດຕ່ຳ ຕ້ອງອາບັດທຸບພາສິດ

ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໕ ພິກຂຸຕ້ອງອາບັດ ໖ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ฯລฯ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື

(໑) ສີລະວິບັດ

(໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໖ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດສັງຄາທິເສດ (໓) ກອງອາບັດຖຸນລັດໄຈ (໔) ກອງອາບັດປາຈິດຕີ (໕) ກອງອາບັດທຸກກົດ (໖) ກອງອາບັດທຸບພາສິດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ

ຄື ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນແລະຕິນະວັດຖາຣະກະ

[໔໗໒] ຖາມ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໖ ພິກຂຸຕ້ອງອາບັດທີ່ໃດ?

ຕອບ : ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໖ ພິກຂຸຕ້ອງອາບັດ ໖ ຢ່າງຄື

໑. ພິກຂຸຊວນກັນໄປລັກຊັບ ຕ້ອງອາບັດປາຣາຊິກ
໒. ພິກຂຸມີຄວາມສຳຄັນວ່າບໍ່ຄວນ ສ້າງກຸດຕິເຊິ່ງສົງບໍ່ໄດ້ສະແດງພື້ນທີ່ໃຫ້ ເກີນຂະໜາດ ມີອັນຕະລາຍ ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດທຸກກົດ ຍ້ອນພະຍາຍາມ
໓. ຍັງເຫຼືອດິນຈີ່ອີກກ້ອນໜຶ່ງຈຶ່ງຈະສຳເລັດ ຕ້ອງອາບັດຖຸນລັດໄຈ
໔. ດິນຈີ່ກ້ອນສຸດທ້າຍສຳເລັດແລ້ວ ຕ້ອງອາບັດສັງຄາທິເສດ
໕. ພິກຂຸມີຄວາມສຳຄັນວ່າບໍ່ຄວນ ອອກປາກຂໍໂພຊະນະອັນປະນີດມາເພື່ອປະໂຫຍດແກ່ຕົນແລ້ວສັນ ຕ້ອງອາບັດປາຈິດຕີ
໖. ພິກຂຸມີຄວາມສຳຄັນວ່າບໍ່ຄວນ ບໍ່ຫ້າມພິກຂຸນີຜູ້ຖ້າບົງການ ສັນຢູ່ ຕ້ອງອາບັດປະຕິເທສະນີຍະ

ດ້ວຍສະມຸດຖານແຫ່ງອາບັດຂໍ້ທີ ໖ ພິກຂຸຕ້ອງອາບັດ ໖ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາກອງ ອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ? ບັນດາອະທິກອນ ໔ ຢ່າງ ຈັດເປັນອະທິກອນໃດ ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື

(໑) ສີລະວິບັດ

(໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໖ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດສັງຄາທິເສດ (໓) ກອງອາບັດຖຸນລັດໄຈ (໔) ກອງອາບັດ

ປາຈິດຕີ (໕) ກອງອາບັດປະຕິເທສະນີຍະ (໖) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນແລະຕິນະວັດຖາຣະກະ

**ກະຕາປັດຕິວາຣະແຫ່ງສະມຸດຖານະວາຣະແຫ່ງອາບັດ ໖ ທີ ໒ ຈົບ**

## ໓. ອາປັດຕິສະມຸດຖານະຄາຖາ

## ວ່າດ້ວຍຄາຖາສະແດງສະມຸດຖານແຫ່ງອາບັດ

[໒໗໓] ຖາມ : ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ[໑]
ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ
ໄດ້ຕັດບອກສະມຸດຖານທາງກາຍໄວ້ແລ້ວ
ອາບັດທີ່ເກີດໂດຍສະມຸດຖານນັ້ນມີທີ່ໃດ?
ຂ້າພະເຈົ້າຂໍຖາມ ທ່ານຜູ້ສະຫຼາດໃນວິພັງໂຜດບອກຂໍ້ນັ້ນເທີ້ນ

ຕອບ : ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ
ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ
ໄດ້ຕັດບອກສະມຸດຖານທາງກາຍໄວ້ແລ້ວ
ອາບັດທີ່ເກີດໂດຍສະມຸດຖານນັ້ນມີຢູ່ ໕

ທ່ານຜູ້ສະຫຼາດໃນວິພັງ ຂ້າພະເຈົ້າຂໍບອກຂໍ້ນັ້ນແກ່ທ່ານ

ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ

ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ

ໄດ້ຕັດບອກສະມຸດຖານທາງວາຈາໄວ້ແລ້ວ

ອາບັດທີ່ເກີດໂດຍສະມຸດຖານນັ້ນມີທໍ່ໃດ?

ຂ້າພະເຈົ້າຂໍຖາມ ໂຜດບອກຂໍ້ນັ້ນເທີ້ນ ທ່ານຜູ້ສະຫຼາດໃນວິພັງ

ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ

ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ

ໄດ້ຕັດບອກສະມຸດຖານທາງວາຈາໄວ້ແລ້ວ

ອາບັດທີ່ເກີດໂດຍສະມຸດຖານນັ້ນມີຢູ່ ໔

ທ່ານຜູ້ສະຫຼາດໃນວິພັງ ຂ້າພະເຈົ້າຂໍບອກຂໍ້ນັ້ນແກ່ທ່ານ

ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ

ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ

ໄດ້ຕັດບອກສະມຸດຖານທາງກາຍ ທາງວາຈາໄວ້ແລ້ວ

ອາບັດທີ່ເກີດໂດຍສະມຸດຖານນັ້ນມີທໍ່ໃດ?

ຂ້າພະເຈົ້າຂໍຖາມ ໂຜດບອກຂໍ້ນັ້ນເທີ້ນ ທ່ານຜູ້ສະຫຼາດໃນວິພັງ

ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ

ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ

ໄດ້ຕັດບອກສະມຸດຖານທາງກາຍ ທາງວາຈາໄວ້ແລ້ວ

ອາບັດທີ່ເກີດໂດຍສະມຸດຖານນັ້ນມີຢູ່ ໕

ທ່ານຜູ້ສະຫຼາດໃນວິພັງ ຂ້າພະເຈົ້າຂໍບອກຂໍ້ນັ້ນແກ່ທ່ານ

ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ

ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ

ໄດ້ຕັດບອກສະມຸດຖານທາງກາຍ ທາງຈິດໄວ້ແລ້ວ

ອາບັດທີ່ເກີດໂດຍສະມຸດຖານນັ້ນມີທໍ່ໃດ?

ຂ້າພະເຈົ້າຂໍຖາມ ໂຜດບອກຂໍ້ນັ້ນເທີ້ນ ທ່ານຜູ້ສະຫຼາດໃນວິພັງ

ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ

ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ

ໄດ້ຕັດບອກສະມຸດຖານທາງກາຍ ທາງຈິດໄວ້ແລ້ວ

ອາບັດທີ່ເກີດໂດຍສະມຸດຖານນັ້ນມີຢູ່ ໖

ທ່ານຜູ້ສະຫຼາດໃນວິພັງ ຂ້າພະເຈົ້າຂໍບອກຂໍ້ນັ້ນແກ່ທ່ານ

ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ
ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ
ໄດ້ຕັດບອກສະມຸດຖານທາງວາຈາ ທາງຈິດໄວ້ແລ້ວ
ອາບັດທີ່ເກີດໂດຍສະມຸດຖານນັ້ນມີທໍ່ໃດ?
ຂ້າພະເຈົ້າຂໍຖາມ ໂຜດບອກຂໍ້ນັ້ນເທີ້ນ ທ່ານຜູ້ສະຫຼາດໃນວິພັງ
ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ
ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ
ໄດ້ຕັດບອກສະມຸດຖານທາງວາຈາ ທາງຈິດໄວ້ແລ້ວ
ອາບັດທີ່ເກີດໂດຍສະມຸດຖານນັ້ນມີຢູ່ ໖
ທ່ານຜູ້ສະຫຼາດໃນວິພັງ ຂ້າພະເຈົ້າຂໍບອກຂໍ້ນັ້ນແກ່ທ່ານ
ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ
ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ
ໄດ້ຕັດບອກສະມຸດຖານທາງກາຍ ທາງວາຈາ ທາງຈິດໄວ້ແລ້ວ
ອາບັດທີ່ເກີດໂດຍສະມຸດຖານນັ້ນມີທໍ່ໃດ?
ຂ້າພະເຈົ້າຂໍຖາມ ໂຜດບອກຂໍ້ນັ້ນເທີ້ນ ທ່ານຜູ້ສະຫຼາດໃນວິພັງ
ພຣະພຸດທະເຈົ້າຜູ້ຊົງເຫັນທຳບໍ່ມີບ່ອນສຸດ
ຊົງເກື້ອກູນແກ່ສັດໂລກ ຊົງເຫັນວິເວກ
ໄດ້ຕັດບອກສະມຸດຖານທາງກາຍ ທາງວາຈາ ທາງຈິດໄວ້ແລ້ວ
ອາບັດທີ່ເກີດໂດຍສະມຸດຖານນັ້ນມີຢູ່ ໖
ທ່ານຜູ້ສະຫຼາດໃນວິພັງ ຂ້າພະເຈົ້າຂໍບອກຂໍ້ນັ້ນແກ່ທ່ານ

**ອາປັດຕິສະມຸດຖານຄາຖາທີ ໓ ຈົບ**

## ໔. ວິປັດຕິປັດຈະຍະວາຣະ

## ວາຣະວ່າດ້ວຍຄວາມວິບັດເປັນປັດໄຈ

[໔໗໔] ຖາມ : ຍ້ອນສີລະວິບັດເປັນປັດໄຈ ຕ້ອງອາບັດທໍ່ໃດ?
ຕອບ : ຍ້ອນສີລະວິບັດເປັນປັດໄຈ ຕ້ອງອາບັດ ໔ ຢ່າງ ຄື
໑. ພິກຂຸນີຮູ້ຢູ່ ປົກປິດທຳຄືປາຣາຊິກ ຕ້ອງອາບັດປາຣາຊິກ
໒. ພິກຂຸນີສົງໄສປົກປິດ ຕ້ອງອາບັດຖຸນລັດໄຈ
໓. ພິກຂຸປົກປິດອາບັດສັງຄາທິເສດ ຕ້ອງອາບັດປາຈິດຕີ[១]

໔. ພິກຂຸປົກປິດອາບັດຊົ່ວຫຍາບຂອງຕົນ ຕ້ອງອາບັດທຸກກົດ

ຍ້ອນສີລະວິບັດເປັນປັດໄຈ ຕ້ອງອາບັດ ໔ ຢ່າງນີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທໍ່ໃດ? ຯລຯ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທໍ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື

(໑) ສີລະວິບັດ

(໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໔ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດຖຸນລັດໄຈ (໓) ກອງອາບັດປາຈິດຕີ (໔) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສໍາມຸຂາວິໄນ

(໒) ປະຕິນຍາຕະກະຣະນະ

(໓) ສໍາມຸຂາວິໄນແລະຕິນະວັດຖາຣະກະ

[໒໗໕] ຖາມ : ຍ້ອນອາຈາຣະວິບັດເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນອາຈາຣະວິບັດເປັນປັດໄຈ ຕ້ອງອາບັດ ໑ ຢ່າງ ຄື ພິກຂຸປົດ ອາຈາຣະວິບັດ ຕ້ອງອາບັດທຸກກົດ

ຍ້ອນອາຈາຣະວິບັດເປັນປັດໄຈ ຕ້ອງອາບັດ ໑ ຢ່າງນີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທໍ່ໃດ? ຯລຯ ບັນດາ ສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທໍ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໑ ຢ່າງ ຄື ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໑ ກອງ ຄື ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສໍາມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສໍາມຸຂາວິໄນແລະຕິນະວັດຖາຣະກະ

[໒໗໖] ຖາມ : ຍ້ອນທິດຖິວິບັດເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນທິດຖິວິບັດເປັນປັດໄຈ ຕ້ອງອາບັດ ໒ ຢ່າງ ຄື

໑. ພິກຂຸບໍ່ສະລະທິດຖິບາບ ຈົບວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຈົບຍັດຕິ ຕ້ອງອາບັດທຸກກົດ ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດທຸກກົດ ໒ ໂຕ

໒. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດປາຈິດຕິ

ຍ້ອນທິດຖິວິບັດເປັນປັດໄຈ ຕ້ອງອາບັດ ໒ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທໍ່ໃດ? ຯລຯ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທໍ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໑ ຄື ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໒ ກອງ ຄື

(໑) ກອງອາບັດ ປາຈິດຕິ

(໒) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ

(໒) ປະຕິນຍາຕະກະຣະນະ

(໓) ສຳມຸຂາວິໄນແລະຕິນະວັດຖາຣະກະ

[໒໘໗] ຖາມ : ຍ້ອນອາຊີວະວິບັດເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນອາຊີວະວິບັດເປັນປັດໄຈ ຕ້ອງອາບັດ ໖ ສະມຸດຖານ ຄື

໑. ຍ້ອນເຫດແຫ່ງອາຊີວະ ຍ້ອນການແຫ່ງອາຊີວະ ພິກຂຸຜູ້ມີຄວາມປາຖະໜາຊົ່ວຊ້າ ຖືກຄວາມຢາກຄອບງຳ ກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຢູ່ ບໍ່ເປັນຈິງ ຕ້ອງອາບັດປາຣາຊິກ

໒. ຍ້ອນເຫດແຫ່ງອາຊີວະ ຍ້ອນການແຫ່ງອາຊີວະ ພິກຂຸເຮັດໜ້າຊັກສື່ ຕ້ອງອາບັດສັງຄາທິເສດ

໓. ຍ້ອນເຫດແຫ່ງອາຊີວະ ຍ້ອນການແຫ່ງອາຊີວະ ພິກຂຸກ່າວວ່າ “ພິກຂຸ ອົງໃດຢູ່ໃນວິຫານຂອງທ່ານ ພິກຂຸອົງນັ້ນເປັນພຣະອະຣະຫັນ” ເມື່ອຜູ້ຟັງເຂົ້າໃຈ ຕ້ອງອາບັດຖຸນລັດໄຈ

໔. ຍ້ອນເຫດແຫ່ງອາຊີວະ ຍ້ອນການແຫ່ງອາຊີວະ ພິກຂຸອອກປາກຂໍ ໂພຊະນະອັນປະນີດມາເພື່ອປະໂຫຍດຂອງຕົນແລ້ວສັນ ຕ້ອງອາບັດປາຈິດຕິ

໕. ຍ້ອນເຫດແຫ່ງອາຊີວະ ຍ້ອນການແຫ່ງອາຊີວະ ພິກຂຸນີອອກປາກຂໍໂພຊະນະອັນປະນີດມາເພື່ອປະໂຫຍດຂອງຕົນແລ້ວສັນ ຕ້ອງອາບັດປະຕິເທສະນີຍະ

๖. ຍ້ອນເຫດແຫ່ງອາຊີວະ ຍ້ອນການແຫ່ງອາຊີວະ ພິກຂຸບໍ່ເປັນໄຂ້ອອກປາກຂໍແກງ ຫຼືເຂົ້າສຸກມາເພື່ອປະໂຫຍດຕົນແລ້ວສັນ ຕ້ອງອາບັດທຸກກົດ

ຍ້ອນອາຊີວະວິບັດເປັນປັດໄຈ ຕ້ອງອາບັດ ๖ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ๔ ຢ່າງ ຈັດເປັນວິບັດທີ່ໃດ? ຯລຯ

ບັນດາສະມະຖະ ๗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ๔ ຢ່າງ ຈັດເປັນວິບັດ ๒ ຢ່າງ ຄື

(๑) ສີລະວິບັດ

(๒) ອາຈາຣະວິບັດ

ບັນດາກອງອາບັດ ๗ ກອງ ຈັດເຂົ້າກອງອາບັດ ๖ ກອງ ຄື (๑) ກອງອາບັດປາຣາຊິກ (๒) ກອງອາບັດສັງຄາທິເສດ (๓) ກອງອາບັດຖຸນລັດໄຈ (๔) ກອງອາບັດປາຈິດຕີ (๕) ກອງອາບັດປະຕິເທສະນີຍະ (๖) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ๖ ສະມຸດຖານ ເກີດດ້ວຍສະມຸດຖານ ๖ ສະມຸດຖານ ຄື (๑) ເກີດທາງກາຍ ບໍ່ແມ່ນທາງວາຈາ ບໍ່ແມ່ນເກີດທາງຈິດ (๒) ເກີດທາງວາຈາ ບໍ່ແມ່ນເກີດທາງກາຍ ບໍ່ແມ່ນເກີດທາງຈິດ (๓) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (๔) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (๕) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (๖) ເກີດທາງກາຍ ວາຈາກັບຈິດ

ບັນດາອະທິກອນ ๔ ຢ່າງ ຈັດເປັນອາບັດຕາທິກອນ

ບັນດາສະມະຖະ ๗ ຢ່າງ ລະງັບດ້ວຍສະມະຖະ ๓ ຢ່າງ ຄື (๑) ສຳມຸຂາວິໄນ (๒) ປະຕິນຍາຕະກະຣະນະ (๓) ສຳມຸຂາວິໄນແລະຕິນະວັດຖາຣະກະ

**ວິປັດຕິປັດຈະຍະວາຣະທີ ๔ ຈົບ**

## ๕. ອະທິກະຣະນະປັດຈະຍະວາຣະ

## ວາຣະວ່າດ້ວຍອະທິກອນເປັນປັດໄຈ

[๒๙๙] ຖາມ : ຍ້ອນວິວາທາທິກອນເປັນປັດໄຈ ຕ້ອງອາບັດທີ່ໃດ?

ຕອບ : ຍ້ອນວິວາທາທິກອນເປັນປັດໄຈ ຕ້ອງອາບັດ ๒ ຢ່າງ ຄື

๑. ພິກຂຸກ່າວສຽດສີອຸປະສຳບັນ ຕ້ອງອາບັດປາຈິດຕີ

๒. ພິກຂຸກ່າວສຽດສີອະນຸປະສຳບັນ ຕ້ອງອາບັດທຸກກົດ

ຍ້ອນວິວາທາທິກອນເປັນປັດໄຈ ຕ້ອງອາບັດ ๒ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ๔ ຢ່າງ ຈັດເປັນວິບັດທີ່ໃດ? ຯລຯ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໑ ຢ່າງ ຄື ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໒ ກອງ ຄື (໑) ກອງອາບັດປາຈິດຕີ (໒) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ

ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສໍາມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສໍາມຸຂາວິໄນແລະຕິນະວັດຖາຣະກະ

[໒໗໙] ຖາມ : ຍ້ອນອະນຸວາທາທິກອນເປັນປັດໄຈ ຕ້ອງອາບັດທີ່ໃດ?

ຕອບ : ຍ້ອນອະນຸວາທາທິກອນເປັນປັດໄຈ ຕ້ອງອາບັດ ໓ ຢ່າງ ຄື

໑. ພິກຂຸໃສ່ຄວາມພິກຂຸດ້ວຍອາບັດຊັ້ນປາຣາຊິກທີ່ບໍ່ມີມູນ ຕ້ອງອາບັດສັງຄາທິເສດ

໒. ພິກຂຸໃສ່ຄວາມພິກຂຸດ້ວຍອາບັດສັງຄາທິເສດທີ່ບໍ່ມີມູນ ຕ້ອງອາບັດປາຈິດຕີ

໓. ພິກຂຸໃສ່ຄວາມພິກຂຸດ້ວຍອາຈາຣະວິບັດທີ່ບໍ່ມີມູນ ຕ້ອງອາບັດທຸກກົດ

ຍ້ອນອະນຸວາທາທິກອນເປັນປັດໄຈ ຕ້ອງອາບັດ ໓ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ฯລฯ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື

(໑) ສີລະວິບັດ

(໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໓ ກອງ ຄື (໑) ກອງອາບັດສັງຄາທິເສດ (໒) ກອງອາບັດປາຈິດຕີ (໓) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ

ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສໍາມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສໍາມຸຂາວິໄນແລະຕິນະວັດຖາຣະກະ

[໔໙໐] ຖາມ : ຍ້ອນອາປັດຕາທິກອນເປັນປັດໄຈ ຕ້ອງອາບັດທີ່ໃດ?

ຕອບ : ຍ້ອນອາປັດຕາທິກອນເປັນປັດໄຈ ຕ້ອງອາບັດ ໔ ຢ່າງ ຄື

໑. ພິກຂຸນີຮູ້ຢູ່ປົກປິດທຳຄືປາຣາຊິກ ຕ້ອງອາບັດປາຣາຊິກ

໒. ພິກຂຸນີສົງໄສປົກປິດ ຕ້ອງອາບັດຖຸນລັດໄຈ

໓. ພິກຂຸປົກປິດອາບັດສັງຄາທິເສດ ຕ້ອງອາບັດປາຈິດຕີ

໔. ພິກຂຸປົກປິດອາຈາຣະວິບັດ ຕ້ອງອາບັດທຸກກົດ

ຍ້ອນອາປັດຕາທິກອນເປັນປັດໄຈ ຕ້ອງອາບັດ ໔ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ຯລຯ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື (໑) ສີລະວິບັດ (໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໔ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດຖຸນລັດໄຈ (໓) ກອງອາບັດປາຈິດຕີ (໔) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ

(໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນແລະຕິນະວັດຖາຣະກະ

[໔໙໑] ຖາມ : ຍ້ອນກິດຈາທິກອນເປັນປັດໄຈ ຕ້ອງອາບັດທີ່ໃດ?

ຕອບ : ຍ້ອນກິດຈາທິກອນເປັນປັດໄຈ ຕ້ອງອາບັດ ໕ ຢ່າງ ຄື

໑. ພິກຂຸນີຜູ້ປະພຶດຕາມພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຈົບຍັດຕິ ຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ໒ ຄັ້ງ ຕ້ອງອາບັດຖຸນລັດໄຈ

໓. ຈົບກຳວາຈາຄັ້ງສຸດທ້າຍ ຕ້ອງອາບັດປາຣາຊິກ

໔. ພິກຂຸຜູ້ປະພຶດຕາມພິກຂຸຜູ້ທຳລາຍສົງ ບໍ່ຍອມສະລະກຳຍ້ອນສົງ ສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດສັງຄາທິເສດ

໕. ພິກຂຸບໍ່ສະລະທິດຖິບາບ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດປາຈິດຕີ

ຍ້ອນກິດຈາທິກອນເປັນປັດໄຈ ຕ້ອງອາບັດ ໕ ຢ່າງເຫຼົ່ານີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ຯລຯ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ

ຄື (໑) ສີລະວິບັດ (໒) ອາຈາຣະວິບັດ

ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໕ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດສັງຄາທິເສດ (໓) ກອງອາບັດຖຸນລັດໄຈ (໔) ກອງອາບັດປາຈິດຕີ (໕) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ

ຄື ເກີດທາງກາຍວາຈາກັບຈິດ

ບັນດາອະທິກອນ ໔ ຢ່າງ ຈັດເປັນອາປັດຕາທິກອນ

ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ

(໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນແລະຕິນະວັດຖາຣະກະ

ຖາມ : ເວັ້ນອາບັດ ໗ ເວັ້ນກອງອາບັດ ໗ ແລ້ວ ອາບັດນອກນັ້ນ ບັນດາວິບັດ ໔ ຈັດເປັນວິບັດທີ່ໃດ? ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດໃດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທີ່ໃດ? ບັນດາອະທິກອນ ໔ ຈັດເປັນອະທິກອນໃດ ບັນດາສະມະຖະ ໗ ຢ່າງ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ເວັ້ນອາບັດ ໗ ເວັ້ນກອງອາບັດ ໗ ແລ້ວ ອາບັດນອກນັ້ນ ບັນດາວິບັດ ໔ ບໍ່ຈັດເປັນວິບັດໃດ ບັນດາກອງອາບັດ ໗ ກອງ ບໍ່ຈັດເຂົ້າກອງອາບັດໃດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ບໍ່ເກີດດ້ວຍສະມຸດຖານໃດ ບັນດາອະທິກອນ ໔ ບໍ່ຈັດເປັນອະທິກອນໃດ ບັນດາສະມະຖະ ໗ ຢ່າງ ບໍ່ລະງັບດ້ວຍສະມະຖະໃດ ຂໍ້ນັ້ນເປັນຍ້ອນເຫດໃດ ຍ້ອນເວັ້ນອາບັດ ໗ ເວັ້ນກອງອາບັດ ໗ ແລ້ວ ກໍບໍ່ມີອາບັດແນວອື່ນ

**ອະທິກະຣະນະປັດຈະຍະວາຣະທີ ៥ ຈົບ**

**ອັນຕະຣະເປີຍຍາລະ ຈົບ**

## ຫົວຂໍ້ບອກວາຣະ

ກະຕິປຸດສາວາຣະ ສະມຸດຖານະວາຣະ ກະຕາປັດຕິວາຣະ

ອາປັດຕິສະມຸດຖານະວາຣະ ວິປັດຕິວາຣະ ແລະອະທິກະຣະນະວາຣະ

# ສະມະຖະເພທະ

## ວ່າດ້ວຍປະເພດແຫ່ງສະມະຖະ

### ๗. ອະທິກະຣະນະປະຣິຍາຍະວາຣະ

### ວາຣະວ່າດ້ວຍການອະທິບາຍອະທິກອນ

[໔໙໔] ວິວາທາທິກອນ ມີອັນໃດ?ເປັນຫົວໜ້າ ມີຖານທີ່ໃດ? ມີວັດຖຸທີ່ໃດ? ມີພູມທີ່ໃດ? ມີເຫດທີ່ໃດ? ມີມູນທີ່ໃດ? ພິກຂຸຜິດຖຽງກັນດ້ວຍອາການທີ່ໃດ? ວິວາທາທິກອນລະງັບດ້ວຍສະມະຖະທີ່ໃດ?

ອະນຸວາທາທິກອນ ມີອັນໃດ?ເປັນຫົວໜ້າ ມີຖານທີ່ໃດ? ມີວັດຖຸທີ່ໃດ? ມີພູມທີ່ໃດ? ມີເຫດທີ່ໃດ ມີມູນທີ່ໃດ? ພິກຂຸໂຈດດ້ວຍອາການທີ່ໃດ? ອະນຸວາທາທິກອນລະງັບດ້ວຍສະມະຖະທີ່ໃດ?

ອາປັດຕາທິກອນ ມີອັນໃດ?ເປັນຫົວໜ້າ ມີຖານທີ່ໃດ? ມີວັດຖຸທີ່ໃດ? ມີພູມທີ່ໃດ? ມີເຫດທີ່ໃດ ມີມູນທີ່ໃດ? ພິກຂຸຕ້ອງອາບັດດ້ວຍອາການທີ່ໃດ? ອາປັດຕາທິກອນລະງັບດ້ວຍສະມະຖະທີ່ໃດ

ກິດຈາທິກອນ ມີອັນໃດ?ເປັນຫົວໜ້າ ມີຖານທີ່ໃດ? ມີວັດຖຸທີ່ໃດ? ມີພູມທີ່ໃດ? ມີເຫດທີ່ໃດ ມີມູນທີ່ໃດ? ກິດເກີດດ້ວຍອາການທີ່ໃດ? ກິດຈາທິກອນລະງັບດ້ວຍສະມະຖະທີ່ໃດ?

[໔໙໕] ຖາມ : ວິວາທາທິກອນ ມີອັນໃດ?ເປັນຫົວໜ້າ

ຕອບ : ມີຄວາມໂລບເປັນຫົວໜ້າ ມີຄວາມໂກດເປັນຫົວໜ້າ ມີຄວາມຫຼົງເປັນຫົວໜ້າມີຄວາມບໍ່ໂລບເປັນຫົວໜ້າ ມີຄວາມບໍ່ໂກດເປັນຫົວໜ້າມີຄວາມບໍ່ຫຼົງເປັນຫົວໜ້າ

ຖາມ : ມີຖານທີ່ໃດ?

ຕອບ : ມີຖານ ຄື ເລື້ອງທຳຄວາມແຕກຮ້າວ ໑໘ ປະການ

ຖາມ : ມີວັດຖຸທີ່ໃດ?

ຕອບ : ມີວັດຖຸ ຄື ເລື້ອງທຳຄວາມແຕກຮ້າວ ໑໘ ປະການ

ຖາມ : ມີພູມທີ່ໃດ?

ຕອບ : ມີພູມ ຄື ເລື້ອງທຳຄວາມແຕກຮ້າວ ໑໘ ປະການ

ຖາມ : ມີເຫດທີ່ໃດ?

ຕອບ : ມີເຫດ ໙ ຄື ກຸສົນເຫດ ໓ ອະກຸສົນເຫດ ໓ ອັບພະຍາກະຕະເຫດ ໓

ຖາມ : ມີມູນທີ່ໃດ?

ຕອບ : ມີມູນ ໑໔

ຖາມ : ພິກຂຸຜິດຖຽງກັນດ້ວຍອາການທີ່ໃດ?

ຕອບ : ພິກຂຸຜິດຖຽງກັນດ້ວຍອາການ ໒ ຄື (໑) ເຫັນວ່າເປັນທຳ (໒) ເຫັນວ່າ ເປັນ ອະທຳ

ຖາມ : ວິວາທາທິກອນ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ວິວາທາທິກອນ ລະງັບດ້ວຍສະມະຖະ ໒ ຄື (໑) ສຳມຸຂາວິໄນ (໒) ເຍພຸຍຍະ ສິກາ

[໒໗໔] ຖາມ : ອະນຸວາທາທິກອນ ມີອັນໃດ?ເປັນຫົວໜ້າ

ຕອບ : ມີຄວາມໂລບເປັນຫົວໜ້າ ມີຄວາມໂກດເປັນຫົວໜ້າ ມີຄວາມຫຼົງເປັນຫົວໜ້າ ມີຄວາມບໍ່ໂລບເປັນຫົວໜ້າ ມີຄວາມບໍ່ໂກດເປັນຫົວໜ້າມີຄວາມບໍ່ຫຼົງເປັນຫົວໜ້າ

ຖາມ : ມີຖານທີ່ໃດ?

ຕອບ : ມີຖານ ຄື ວິບັດ ໔

ຖາມ : ມີວັດຖຸທີ່ໃດ?

ຕອບ : ມີວັດຖຸ ຄື ວິບັດ ໔

ຖາມ : ມີພູມທີ່ໃດ?

ຕອບ : ມີພູມ ຄື ວິບັດ ໔

ຖາມ : ມີເຫດທີ່ໃດ?

ຕອບ : ມີເຫດ ໙ ຄື ກຸສົນເຫດ ๓ ອະກຸສົນເຫດ ๓ ອັບພະຍາກະຕະເຫດ ๓

ຖາມ : ມີມູນທີ່ໃດ?

ຕອບ : ມີມູນ ໑໔

ຖາມ : ພິກຂຸໂຈດກັນດ້ວຍອາການທີ່ໃດ?

ຕອບ : ພິກຂຸໂຈດດ້ວຍອາການ ໒ ຄື (໑) ວັດຖຸ (໒) ອາບັດ

ຖາມ : ອະນຸວາທາທິກອນ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອະນຸວາທາທິກອນ ລະງັບດ້ວຍສະມະຖະ ໔ ຄື (໑) ສຳມຸຂາວິໄນ (໒) ສະຕິວິໄນ (๓) ອະມູລະຫະວິໄນ (໔) ຕັດສະປາປິຍະສິກາ

[໒໗໕] ຖາມ : ອາປັດຕາທິກອນ ມີອັນໃດ?ເປັນຫົວໜ້າ

ຕອບ : ມີຄວາມໂລບເປັນຫົວໜ້າ ມີຄວາມໂກດເປັນຫົວໜ້າ ມີຄວາມຫຼົງເປັນຫົວໜ້າ ມີຄວາມບໍ່ໂລບເປັນຫົວໜ້າ ມີຄວາມບໍ່ໂກດເປັນຫົວໜ້າມີຄວາມບໍ່ຫຼົງເປັນຫົວໜ້າ

ຖາມ : ມີຖານທີ່ໃດ?

ຕອບ : ມີຖານ ຄື ກອງອາບັດ ໗ ກອງ

ຖາມ : ມີວັດຖຸທີ່ໃດ?

ຕອບ : ມີວັດຖຸ ຄື ກອງອາບັດ ໗ ກອງ

ຖາມ : ມີພູມທີ່ໃດ?

ຕອບ : ມີພູມ ຄື ກອງອາບັດ ໗ ກອງ

ຖາມ : ມີເຫດທີ່ໃດ?

ຕອບ : ມີເຫດ ๙ ຄື ກຸສົນເຫດ ๓ ອະກຸສົນເຫດ ๓ ອັບພະຍາກະຕະເຫດ ๓

ຖາມ : ມີມູນທີ່ໃດ?

ຕອບ : ມີມູນ ຄື ສະມຸດຖານແຫ່ງອາບັດ ๖ ສະມຸດຖານ

ຖາມ : ພິກຂຸຕ້ອງອາບັດດ້ວຍອາການທີ່ໃດ?

ຕອບ : ພິກຂຸຕ້ອງອາບັດດ້ວຍອາການ ๖ ຄື (໑) ບໍ່ລະອາຍ (໒) ບໍ່ຮູ້ (๓) ສົງໄສ ແລ້ວຂືນເຮັດ (໔) ສຳຄັນໃນຂອງບໍ່ສົມຄວນວ່າສົມຄວນ (໕) ສຳຄັນໃນຂອງສົມຄວນວ່າບໍ່ສົມຄວນ (๖) ລືມສະຕິ

ຖາມ : ອາປັດຕາທິກອນ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ອາປັດຕາທິກອນ ລະງັບດ້ວຍສະມະຖະ ๓ ຄື (໑) ສຳມຸຂາວິໄນ

(໒) ປະຕິນຍາຕະກະຣະນະ (๓) ຕິນະວັດຖາຣະກະ

[໒๙๖] ຖາມ : ກິດຈາທິກອນ ມີອັນໃດ?ເປັນຫົວໜ້າ

ຕອບ : ມີຄວາມໂລບເປັນຫົວໜ້າ ມີຄວາມໂກດເປັນຫົວໜ້າ ມີຄວາມຫຼົງເປັນຫົວໜ້າ ມີຄວາມບໍ່ໂລບເປັນຫົວໜ້າ ມີຄວາມບໍ່ໂກດເປັນຫົວໜ້າມີຄວາມບໍ່ຫຼົງເປັນຫົວໜ້າ

ຖາມ : ມີຖານທີ່ໃດ?

ຕອບ : ມີຖານ ຄື ກຳ ໔

ຖາມ : ມີວັດຖຸທີ່ໃດ?

ຕອບ : ມີວັດຖຸ ຄື ກຳ ໔

ຖາມ : ມີພູມທີ່ໃດ?

ຕອບ : ມີພູມ ຄື ກຳ ໔

ຖາມ : ມີເຫດທີ່ໃດ?

ຕອບ : ມີເຫດ ๙ ຄື ກຸສົນເຫດ ๓ ອະກຸສົນເຫດ ๓ ອັບພະຍາກະຕະເຫດ ๓

ຖາມ : ມີມູນທີ່ໃດ?

ຕອບ : ມີມູນ ໑ ຄື ສົງ

ຖາມ : ກິດເກີດດ້ວຍອາການທີ່ໃດ?

ຕອບ : ກິດເກີດດ້ວຍອາການ ໒ ຄື (໑) ຍັດຕິ (໒) ອະປະໂລກະນະ

ຖາມ : ກິດຈາທິກອນ ລະງັບດ້ວຍສະມະຖະທີ່ໃດ?

ຕອບ : ກິດຈາທິກອນ ລະງັບດ້ວຍສະມະຖະ ໑ ຄື ສຳມຸຂາວິໄນ

ຖາມ : ສະມະຖະ ມີທີ່ໃດ?

ຕອບ : ສະມະຖະມີ ໗ ຄື

໑. ສຳມຸຂາວິໄນ ໒. ສະຕິວິໄນ

໓. ອະມູລະຫະວິໄນ ໔. ປະຕິນຍາຕະກະຣະນະ

໕. ເຍພຸຍຍະສິກາ ໖. ຕັດສະປາປິຍະສິກາ

໗. ຕິນະວັດຖາຣະກະ

ສະມະຖະມີ ໗ ເຫຼົ່ານີ້

ສະມະຖະ ໗ ເຫຼົ່ານີ້ ເປັນສະມະຖະ ໑໐ ກໍມີ ສະມະຖະ ໑໐ ເປັນສະມະຖະ ໗ ກໍມີ ມີໂດຍ ອ້ອມດ້ວຍອຳນາດວັດຖຸ

ຖາມ : ເພິ່ງເປັນໄດ້ແນວໃດ

ຕອບ : ວິວາທາທິກອນມີສະມະຖະ ໒ ອະນຸວາທາທິກອນມີສະມະຖະ ໔ ອາປັດຕາທິກອນ ມີສະມະຖະ ໓ ກິດຈາທິກອນມີສະມະຖະ ໑ ຢ່າງນີ້ ສະມະຖະ ໗ ເຫຼົ່ານີ້ ເປັນສະມະຖະ ໑໐

ສະມະຖະ ໑໐ ຈຶ່ງເປັນສະມະຖະ ໗ ໂດຍອ້ອມດ້ວຍອຳນາດວັດຖຸ

**ອະທິກະຣະນະປະຣິຍາຍະວາຣະທີ ໖ ຈົບ**

## ໗. ສາທາລະນະວາຣະ

## ວາຣະວ່າດ້ວຍສະມະຖະທົ່ວໄປ

[໔໙໗] ຖາມ : ສະມະຖະທີ່ໃດ? ທົ່ວໄປແກ່ວິວາທາທິກອນ ສະມະຖະທີ່ໃດ? ບໍ່ທົ່ວໄປແກ່ ວິວາທາທິກອນ ສະມະຖະທີ່ໃດ? ທົ່ວໄປແກ່ອະນຸວາທາທິກອນ ສະມະຖະທີ່ໃດ? ບໍ່ທົ່ວໄປແກ່ອະນຸວາທາທິ-ກອນ ສະມະຖະທີ່ໃດ? ທົ່ວໄປແກ່ອາປັດຕາທິກອນ ສະມະຖະທີ່ໃດ? ບໍ່ທົ່ວໄປແກ່ອາປັດຕາທິກອນ ສະມະຖະທີ່ໃດ? ທົ່ວໄປແກ່ກິດຈາທິກອນ ສະມະຖະທີ່ໃດ? ບໍ່ທົ່ວໄປແກ່ກິດຈາທິກອນ

ຕອບ : ສະມະຖະ ໒ ຢ່າງ ຄື (໑) ສຳມຸຂາວິໄນ (໒) ເຍພຸຍຍະສິກາ ທົ່ວໄປແກ່ວິວາທາທິກອນ ສະມະຖະ ໕ ຢ່າງ ຄື (໑) ສະຕິວິໄນ (໒) ອະມູລະຫະວິໄນ (໓) ປະຕິຍານຕະກະຣະນະ (໔) ຕັດສະປາປິຍະສິກາ (໕) ຕິນະວັດຖາຣະກະ ບໍ່ທົ່ວໄປແກ່ວິວາທາທິກອນ

ຕອບ : ສະມະຖະ ໔ ຢ່າງ ຄື (໑) ສຳມຸຂາວິໄນ (໒) ສະຕິວິໄນ (໓) ອະມູລະຫະວິໄນ (໔) ຕັດສະປາປິຍະສິກາ ທົ່ວໄປແກ່ອະນຸວາທາທິກອນ ສະມະຖະ ໓ ຢ່າງ ຄື (໑) ເຍພຸຍຍະສິກາ (໒) ປະຕິນຍາຕະກະຣະນະ (໓) ຕິນະວັດຖາຣະກະ ບໍ່ທົ່ວໄປແກ່ອະນຸວາທາທິກອນ

ສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ຕິນະວັດຖາຣະກະ ທົ່ວໄປແກ່ອາປັດຕາທິກອນ ສະມະຖະ ໔ ຢ່າງ ຄື (໑) ເຍພຸຍຍະສິກາ (໒) ສະຕິວິໄນ (໓) ອະມູລະຫະວິໄນ (໔) ຕັດສະປາປິຍະສິກາ ບໍ່ທົ່ວໄປແກ່ອາປັດຕາທິກອນ

ສະມະຖະ ໑ ຢ່າງ ຄື ສຳມຸຂາວິໄນ ທົ່ວໄປແກ່ກິດຈາທິກອນ ສະມະຖະ ໖ ຢ່າງ ຄື (໑) ເຍພຸຍຍະສິກາ (໒) ສະຕິວິໄນ (໓) ອະມູລະຫະວິໄນ (໔) ປະຕິນຍາຕະກະຣະນະ (໕) ຕັດສະປາປິຍະສິກາ (໖) ຕິນະວັດຖາຣະກະ ບໍ່ທົ່ວໄປແກ່ກິດຈາທິກອນ

**ສາທາລະນະວາຣະທີ ໗ ຈົບ**

## ໘. ຕັບພາຄິຍະວາຣະ

## ວາຣະວ່າດ້ວຍເປັນສ່ວນນັ້ນ

[໔໙໘] ຖາມ : ສະມະຖະທີ່ໃດ? ເປັນສ່ວນນັ້ນແຫ່ງວິວາທາທິກອນ ສະມະຖະທີ່ໃດ? ເປັນສ່ວນອື່ນແຫ່ງວິວາທາທິກອນ ສະມະຖະທີ່ໃດ? ເປັນສ່ວນນັ້ນແຫ່ງອະນຸວາທາທິກອນ ສະມະຖະທີ່ໃດ? ເປັນສ່ວນອື່ນແຫ່ງອະນຸວາທາທິກອນ ສະມະຖະທີ່ໃດ? ເປັນສ່ວນນັ້ນແຫ່ງອາປັດຕາທິກອນ ສະມະຖະທີ່ໃດ ເປັນສ່ວນອື່ນແຫ່ງອາປັດຕາທິກອນ ສະມະຖະທີ່ໃດ? ເປັນສ່ວນນັ້ນແຫ່ງກິດຈາທິກອນ ສະມະຖະທີ່ໃດ? ເປັນສ່ວນອື່ນແຫ່ງກິດຈາທິກອນ

ຕອບ : ສະມະຖະ ໒ ຢ່າງ ຄື (໑) ສຳມຸຂາວິໄນ (໒) ເຍພຸຍຍະສິກາ ເປັນສ່ວນນັ້ນແຫ່ງວິວາທາທິກອນ

ສະມະຖະ ໕ ຢ່າງ ຄື (໑) ສະຕິວິໄນ (໒) ອະມູລະຫະວິໄນ (໓) ປະຕິນຍາຕະກະຣະນະ (໔) ຕັດສະປາປິຍະສິກາ (໕) ຕິນະວັດຖາຣະກະ ເປັນສ່ວນອື່ນແຫ່ງວິວາທາທິກອນ

ສະມະຖະ ໔ ຢ່າງ ຄື (໑) ສຳມຸຂາວິໄນ (໒) ສະຕິວິໄນ (໓) ອະມູລະຫະວິໄນ (໔) ຕັດສະປາປິຍະສິກາ ເປັນສ່ວນນັ້ນແຫ່ງອະນຸວາທາທິກອນ

ສະມະຖະ ໓ ຢ່າງ ຄື (໑) ເຍພຸຍຍະສິກາ (໒) ປະຕິນຍາຕະກະຣະນະ (໓) ຕິນະວັດຖາຣະກະ ເປັນສ່ວນອື່ນແຫ່ງອະນຸວາທາທິກອນ

ສະມະຖະ ໓ ຢ່າງ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ຕິນະວັດຖາຣະກະ ເປັນສ່ວນນັ້ນແຫ່ງອາປັດຕາທິກອນ

ສະມະຖະ ໔ ຢ່າງ ຄື (໑) ເຍພຸຍຍະສິກາ (໒) ສະຕິວິໄນ (໓) ອະມູລະຫະວິໄນ (໔) ຕັດສະປາປີຍະສິກາ ເປັນສ່ວນອື່ນແຫ່ງອາປັດຕາທິກອນ

ສະມະຖະ ໑ ຢ່າງ ຄື (໑) ສຳມຸຂາວິໄນ ເປັນສ່ວນນັ້ນແຫ່ງກິດຈາທິກອນ

ສະມະຖະ ໖ ສະມຸດຖານ ຄື (໑) ເຍພຸຍຍະສິກາ (໒) ສະຕິວິໄນ (໓) ອະມູລະຫະວິໄນ (໔) ປະຕິນຍາຕະກະຣະນະ (໕) ຕັດສະປາປີຍະສິກາ (໖) ຕິນະວັດຖາຣະກະ ເປັນສ່ວນອື່ນແຫ່ງກິດຈາທິກອນ

**ຕັບພາຄິຍະວາຣະທີ ໘ ຈົບ**

## ໗. ສະມະຖາສະມະຖັດສະສາທາລະນະວາຣະ

## ວາຣະວ່າດ້ວຍສະມະຖະທົ່ວໄປແລະບໍ່ທົ່ວໄປແກ່ສະມະຖະ

[໔໙໗] ສະມະຖະທົ່ວໄປແກ່ສະມະຖະ ສະມະຖະບໍ່ທົ່ວໄປແກ່ສະມະຖະ ສະມະຖະທີ່ທົ່ວໄປແກ່ສະມະຖະກໍມີ ສະມະຖະທີ່ບໍ່ທົ່ວໄປແກ່ສະມະຖະກໍມີ

ຖາມ : ສະມະຖະທົ່ວໄປແກ່ສະມະຖະແນວໃດ ສະມະຖະບໍ່ທົ່ວໄປແກ່ສະມະຖະແນວໃດ

ຕອບ : ເຍພຸຍຍະສິກາທົ່ວໄປແກ່ສຳມຸຂາວິໄນ ບໍ່ທົ່ວໄປແກ່ສະຕິວິໄນ ອະມູລະຫະວິໄນ ປະຕິຍານຕະກະຣະນະ ຕັດສະປາປີຍະສິກາ ຕິນະວັດຖາຣະກະ

ສະຕິວິໄນທົ່ວໄປແກ່ສຳມຸຂາວິໄນ ບໍ່ທົ່ວໄປແກ່ອະມູລະຫະວິໄນ ປະຕິນຍາຕະກະຣະນະ ຕັດສະປາປີຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ

ອະມູລະຫະວິໄນທົ່ວໄປແກ່ສຳມຸຂາວິໄນ ບໍ່ທົ່ວໄປແກ່ປະຕິນຍາຕະກະຣະນະ ຕັດສະປາປີຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ

ປະຕິນຍາຕະກະຣະນະທົ່ວໄປແກ່ສຳມຸຂາວິໄນ ບໍ່ທົ່ວໄປແກ່ຕັດສະປາປີຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ ອະມູລະຫະວິໄນ

ຕັດສະປາປີຍະສິກາທົ່ວໄປແກ່ສຳມຸຂາວິໄນ ບໍ່ທົ່ວໄປແກ່ຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ ອະມູລະຫະວິໄນ ປະຕິນຍາຕະກະຣະນະ

ຕິນະວັດຖາຣະກະທົ່ວໄປແກ່ສຳມຸຂາວິໄນ ບໍ່ທົ່ວໄປແກ່ເຍພຸຍຍະສິກາ ສະຕິວິໄນ ອະມູລະຫະວິໄນ ປະຕິນຍາຕະກະຣະນະ ຕັດສະປາປີຍະສິກາ

ສະມະຖະທົ່ວໄປແກ່ສະມະຖະແນວນີ້ ສະມະຖະບໍ່ທົ່ວໄປແກ່ສະມະຖະແນວນີ້

**ສະມະຖາສະມະຖັດສະສາທາລະນະວາຣະທີ ໗ ຈົບ**

## ໑໐. ສະມະຖາສະມະຖັດສະຕັບພາຄິຍະວາຣະ

## ວາຣະວ່າດ້ວຍສະມະຖະເປັນສ່ວນນັ້ນແຫ່ງສະມະຖະ

[໓໐໐] ສະມະຖະເປັນສ່ວນນັ້ນແຫ່ງສະມະຖະ ສະມະຖະເປັນສ່ວນອື່ນແຫ່ງສະມະຖະ ສະມະຖະທີ່ເປັນສ່ວນນັ້ນແຫ່ງສະມະຖະກໍມີ ສະມະຖະທີ່ເປັນສ່ວນອື່ນແຫ່ງສະມະຖະກໍມີ

ຖາມ : ສະມະຖະເປັນສ່ວນນັ້ນແຫ່ງສະມະຖະແນວໃດ ສະມະຖະເປັນສ່ວນອື່ນແຫ່ງສະມະຖະແນວໃດ

ຕອບ : ເຍພຸຍຍະສິກາເປັນສ່ວນນັ້ນແຫ່ງສຳມຸຂາວິໄນ ເປັນສ່ວນອື່ນແຫ່ງສະຕິວິໄນ ອະມູລະຫະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ

ສະຕິວິໄນເປັນສ່ວນນັ້ນແຫ່ງສຳມຸຂາວິໄນ ເປັນສ່ວນອື່ນແຫ່ງອະມູລະຫະວິໄນ ປະຕິຍານຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ

ອະມູລະຫະວິໄນເປັນສ່ວນນັ້ນແຫ່ງສຳມຸຂາວິໄນ ເປັນສ່ວນອື່ນແຫ່ງປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ

ປະຕິນຍາຕະກະຣະນະເປັນສ່ວນນັ້ນແຫ່ງສຳມຸຂາວິໄນ ເປັນສ່ວນອື່ນແຫ່ງຕັດສະປາປິຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ ອະມູລະຫະວິໄນ

ຕັດສະປາປິຍະສິກາເປັນສ່ວນນັ້ນແຫ່ງສຳມຸຂາວິໄນ ເປັນສ່ວນອື່ນແຫ່ງຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ ອະມູລະຫະວິໄນ ປະຕິນຍາຕະກະຣະນະ

ຕິນະວັດຖາຣະກະເປັນສ່ວນນັ້ນແຫ່ງສຳມຸຂາວິໄນ ເປັນສ່ວນອື່ນແຫ່ງເຍພຸຍຍະສິກາ ສະຕິວິໄນ ອະມູລະຫະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ

ສະມະຖະເປັນສ່ວນນັ້ນແຫ່ງສະມະຖະແນວນີ້ ສະມະຖະເປັນສ່ວນອື່ນແຫ່ງສະມະຖະແນວນີ້

**ສະມະຖາສະມະຖັດສະຕັບພາຄິຍະວາຣະທີ ໑໐ ຈົບ**

## ໑໑. ສະມະຖະສຳມຸຂາວິນະຍະວາຣະ

## ວາຣະວ່າດ້ວຍສະມະຖະຄືສຳມຸຂາວິໄນ

[໓໐໑] ສະມະຖະຄືສຳມຸຂາວິໄນ ສຳມຸຂາວິໄນຄືສະມະຖະ ສະມະຖະຄືເຍພຸຍຍະສິກາ ເຍພຸຍຍະສິກາຄືສະມະຖະ ສະມະຖະຄືສະຕິວິໄນ ສະຕິວິໄນຄືສະມະຖະ ສະມະຖະຄືອະມູລະ

ທະວິໄນ ອະມູລະທະວິໄນຄືສະມະຖະ ສະມະຖະຄືປະຕິນຍາຕະກະຣະນະ ປະຕິນຍາຕະກະຣະນະຄືສະມະຖະ ສະມະຖະຄືຕັດສະປາປິຍະສິກາ ຕັດສະປາປິຍະສິກາຄືສະມະຖະ ສະມະຖະຄືຕິນະວັດຖາຣະກະ ຕິນະວັດຖາຣະກະຄືສະມະຖະ

ສະມະຖະເຫຼົ່ານີ້ ຄື ເຍພຸຍຍະສິກາ ສະຕິວິໄນ ອະມູລະທະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ເປັນສະມະຖະ ບໍ່ແມ່ນເປັນສຳມຸຂາວິໄນ ສຳມຸຂາວິໄນເປັນທັງສະມະຖະ ເປັນທັງສຳມຸຂາວິໄນ

ສະມະຖະເຫຼົ່ານີ້ ຄື ສະຕິວິໄນ ອະມູລະທະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ສຳມຸຂາວິໄນ ເປັນສະມະຖະ ບໍ່ແມ່ນເປັນເຍພຸຍຍະສິກາ ເຍພຸຍຍະສິກາເປັນທັງສະມະຖະ ເປັນທັງເຍພຸຍຍະສິກາ

ສະມະຖະເຫຼົ່ານີ້ ຄື ອະມູລະທະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ສຳມຸຂາວິໄນ ເຍພຸຍຍະສິກາ ເປັນສະມະຖະ ບໍ່ແມ່ນເປັນສະຕິວິໄນ ສະຕິວິໄນເປັນທັງສະມະຖະ ເປັນທັງ ສະຕິວິໄນ

ສະມະຖະເຫຼົ່ານີ້ ຄື ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ສຳມຸຂາວິໄນ ເຍພຸຍຍະສິກາ ສະຕິວິໄນ ເປັນສະມະຖະ ບໍ່ແມ່ນເປັນອະມູລະທະວິໄນ ອະມູລະທະວິໄນເປັນທັງສະມະຖະ ເປັນ ທັງອະມູລະທະວິໄນ

ສະມະຖະເຫຼົ່ານີ້ ຄື ຕັດສະປາປິຍະສິກາ ຕິນະວັດຖາຣະກະ ສຳມຸຂາວິໄນ ເຍພຸຍຍະສິກາ ສະຕິວິໄນ ອະມູລະທະວິໄນ ເປັນສະມະຖະ ບໍ່ແມ່ນເປັນປະຕິນຍາຕະກະຣະນະ ປະຕິນຍາຕະກະຣະນະເປັນທັງ ສະມະຖະ ເປັນທັງປະຕິນຍາຕະກະຣະນະ

ສະມະຖະເຫຼົ່ານີ້ ຄື ຕິນະວັດຖາຣະກະ ສຳມຸຂາວິໄນ ເຍພຸຍຍະສິກາ ສະຕິວິໄນ ອະມູລະທະວິໄນ ປະຕິນຍາຕະກະຣະນະ ເປັນສະມະຖະ ບໍ່ແມ່ນເປັນຕັດສະປາປິຍະສິກາ ຕັດສະປາປິຍະສິກາເປັນທັງສະມະຖະ ເປັນທັງຕັດສະປາປິຍະສິກາ

ສະມະຖະເຫຼົ່ານີ້ ຄື ສຳມຸຂາວິໄນ ເຍພຸຍຍະສິກາ ສະຕິວິໄນ ອະມູລະທະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ເປັນສະມະຖະ ບໍ່ແມ່ນເປັນຕິນະວັດຖາຣະກະ ຕິນະວັດຖາຣະກະເປັນທັງສະມະຖະ ເປັນທັງ ຕິນະວັດຖາຣະກະ

**ສະມະຖະສຳມຸຂາວິນະຍະວາຣະທີ ໑໑ ຈົບ**

## ໑໘. ວິນະຍະວາຣະ

## ວາຣະວ່າດ້ວຍວິໄນ

[໓໐໘] ວິໄນຄືສຳມຸຂາວິໄນ ສຳມຸຂາວິໄນຄືວິໄນ ວິໄນຄືເຍພຸຍຍະສິກາ ເຍພຸຍຍະສິກາຄືວິໄນ ວິໄນຄືສະຕິວິໄນ ສະຕິວິໄນຄືວິໄນ ວິໄນຄືອະມູລະຫະວິໄນ ອະມູລະຫະວິໄນຄືວິໄນ ວິໄນຄືປະຕິນຍາຕະກະຣະນະ ປະຕິນຍາຕະກະຣະນະຄືວິໄນ ວິໄນຄືຕັດສະປາປິຍະສິກາ ຕັດສະປາປິຍະສິກາຄືວິໄນ ວິໄນຄືຕິນະວັດຖາຣະກະ ຕິນະວັດຖາຣະກະຄືວິໄນ

ວິໄນເປັນສຳມຸຂາວິໄນກໍມີ ບໍ່ເປັນສຳມຸຂາວິໄນກໍມີ ແຕ່ສຳມຸຂາວິໄນເປັນທັງວິໄນ ເປັນທັງສຳມຸຂາວິໄນ

ວິໄນເປັນເຍພຸຍຍະສິກາກໍມີ ບໍ່ເປັນເຍພຸຍຍະສິກາກໍມີ ແຕ່ເຍພຸຍຍະສິກາເປັນທັງວິໄນ ເປັນທັງເຍພຸຍຍະສິກາ

ວິໄນເປັນສະຕິວິໄນກໍມີ ບໍ່ເປັນສະຕິວິໄນກໍມີ ແຕ່ສະຕິວິໄນເປັນທັງວິໄນ ເປັນທັງສະຕິວິໄນ

ວິໄນເປັນອະມູລະຫະວິໄນກໍມີ ບໍ່ເປັນອະມູລະຫະວິໄນກໍມີ ແຕ່ອະມູລະຫະວິໄນເປັນທັງວິໄນ ເປັນທັງອະມູລະຫະວິໄນ

ວິໄນເປັນປະຕິນຍາຕະກະຣະນະກໍມີ ບໍ່ເປັນປະຕິນຍາຕະກະຣະນະກໍມີ ແຕ່ປະຕິນຍາຕະກະຣະນະເປັນທັງວິໄນ ເປັນທັງປະຕິນຍາຕະກະຣະນະ

ວິໄນເປັນຕັດສະປາປິຍະສິກາກໍມີ ບໍ່ເປັນຕັດສະປາປິຍະສິກາກໍມີ ແຕ່ຕັດສະປາປິຍະສິກາ ເປັນທັງວິໄນ ເປັນທັງຕັດສະປາປິຍະສິກາ

ວິໄນເປັນຕິນະວັດຖາຣະກະກໍມີ ບໍ່ເປັນຕິນະວັດຖາຣະກະກໍມີ ແຕ່ຕິນະວັດຖາຣະກະເປັນທັງວິໄນ ເປັນທັງຕິນະວັດຖາຣະກະ

**ວິນະຍະວາຣະທີ ໑໘ ຈົບ**

## ໑໙. ກຸສະລະວາຣະ

## ວາຣະວ່າດ້ວຍເປັນກຸສົນ

[໓໐໙] ສຳມຸຂາວິໄນເປັນກຸສົນ ອະກຸສົນ ອັບພະຍາກະຕະ ເຍພຸຍຍະສິກາເປັນກຸສົນ ອະກຸສົນ ອັບພະຍາກະຕະ ສະຕິວິໄນເປັນກຸສົນ ອະກຸສົນ ອັບພະຍາກະຕະ ອະມູລະຫະວິໄນເປັນກຸສົນ ອະກຸ ສົນ ອັບພະຍາກະຕະ ປະຕິນຍາຕະກະຣະນະເປັນກຸສົນ ອະກຸສົນ ອັບພະຍາກະ

ຕະ ຕັດສະປາປິຍະສິກາເປັນກຸສົນ ອະກຸສົນ ອັບພະຍາກະຕະ ຕິນະວັດຖາຣະກະເປັນກຸສົນ ອະກຸສົນ ອັບພະຍາກະຕະ

ສຳມຸຂາວິໄນ ເປັນກຸສົນກໍມີ ເປັນອັບພະຍາກະຕະກໍມີ ສຳມຸຂາວິໄນເປັນອະກຸສົນບໍ່ມີ
ເຍພຸຍຍະສິກາ ເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ
ສະຕິວິໄນ ເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ
ອະມູລະຫະວິໄນ ເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ
ປະຕິນຍາຕະກະຣະນະ ເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ
ຕັດສະປາປິຍະສິກາ ເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ
ຕິນະວັດຖາຣະກະ ເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ
ວິວາທາທິກອນ ເປັນກຸສົນ ອະກຸສົນ ອັບພະຍາກະຕະ
ອະນຸວາທາທິກອນ ເປັນກຸສົນ ອະກຸສົນ ອັບພະຍາກະຕະ
ອາປັດຕາທິກອນ ເປັນກຸສົນ ອະກຸສົນ ອັບພະຍາກະຕະ
ກິດຈາທິກອນ ເປັນກຸສົນ ອະກຸສົນ ອັບພະຍາກະຕະ
ວິວາທາທິກອນ ເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ
ອະນຸວາທາທິກອນ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ
ອາປັດຕາທິກອນ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ
ອາປັດຕາທິກອນ ທີ່ເປັນກຸສົນບໍ່ມີ
ກິດຈາທິກອນ ເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ

**ກຸສະລະວາຣະທີ ໑໓ ຈົບ**

## ໑໔. ຍັດຖະວາຣະປຸດສາວາຣະ

## ວາຣະວ່າດ້ວຍ ຢູ່ບ່ອນໃດແລະວາຣະວ່າດ້ວຍການຖາມ

[໓໐໔] ໄດ້ເຍພຸຍຍະສິກາ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ເຍພຸຍຍະສິກາ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ສະຕິວິໄນ ອະມູລະຫະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ໃນບ່ອນນັ້ນ

ໄດ້ສະຕິວິໄນ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ສະຕິວິໄນ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ອະມູລະຫະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ ໃນບ່ອນນັ້ນ

ໄດ້ອະມູລະທະວິໄນ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ອະມູລະທະວິໄນ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ ໃນບ່ອນນັ້ນ

ໄດ້ປະຕິນຍາຕະກະຣະນະ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ປະຕິນຍາຕະກະຣະນະ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ຕັດສະປາປິຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ ອະມູລະທະວິໄນ ໃນບ່ອນນັ້ນ

ໄດ້ຕັດສະປາປິຍະສິກາ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ຕັດສະປາປິຍະສິກາ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ ອະມູລະທະວິໄນ ປະຕິນຍາຕະກະຣະນະ ໃນບ່ອນນັ້ນ

ໄດ້ຕິນະວັດຖາຣະກະ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ຕິນະວັດຖາຣະກະ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ເຍພຸຍຍະສິກາ ສະຕິວິໄນ ອະມູລະທະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ໃນບ່ອນນັ້ນ

ໄດ້ເຍພຸຍຍະສິກາ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ເຍພຸຍຍະສິກາ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ສະຕິວິໄນ ອະມູລະທະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ໃນບ່ອນນັ້ນ

ໄດ້ສະຕິວິໄນ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ສະຕິວິໄນ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ອະມູລະທະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ ໃນບ່ອນນັ້ນ ຈັດສຳມຸຂາວິໄນເປັນມູນ ໗໑໗

ໄດ້ຕິນະວັດຖາຣະກະ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ຕິນະວັດຖາຣະກະ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ເຍພຸຍຍະສິກາ ສະຕິວິໄນ ອະມູລະທະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ໃນບ່ອນນັ້ນ

**ຈັກກະເປີຍຍາລະ ຈົບ**

**ຍັດຖະວາຣະທີ ໑໔ ຈົບ**

## ໑໕. ສະມະຖະວາຣະວິສັດຊະນາວາຣະ
## ວາຣະວ່າດ້ວຍເລື້ອງສະມະຖະແລະວາຣະວ່າດ້ວຍການຕອບ

[໓໐໕] ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະເຍພຸຍຍະສິກາ ໄດ້ເຍພຸຍຍະສິກາ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ເຍພຸຍຍະສິກາ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ສະຕິວິໄນ ອະມູລະຫະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ໃນບ່ອນນັ້ນ

ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະສະຕິວິໄນ ໄດ້ສະຕິວິໄນ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ສະຕິວິໄນ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ອະມູລະຫະວິໄນ ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ ໃນບ່ອນນັ້ນ

ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະອະມູລະຫະວິໄນ ໄດ້ອະມູລະຫະວິໄນ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ອະມູລະຫະວິໄນ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ປະຕິນຍາຕະກະຣະນະ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ ໃນບ່ອນນັ້ນ

ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະປະຕິນຍາຕະກະຣະນະ ໄດ້ປະຕິນຍາຕະກະຣະນະ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ປະຕິນຍາຕະກະຣະນະ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ຕັດສະປາປິຍະສິກາ ຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ ອະມູລະຫະວິໄນ ໃນບ່ອນນັ້ນ

ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະຕັດສະປາປິຍະສິກາ ໄດ້ຕັດສະປາປິຍະສິກາ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ຕັດສະປາປິຍະສິກາ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ຕິນະວັດຖາຣະກະ ເຍພຸຍຍະສິກາ ສະຕິວິໄນ ອະມູລະຫະວິໄນ ປະຕິນຍາຕະກະຣະນະ ໃນບ່ອນນັ້ນ

ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະຕິນະວັດຖາຣະກະ ໄດ້ຕິນະວັດຖາຣະກະ ໃນບ່ອນໃດ ກໍຈະໄດ້ສຳມຸຂາວິໄນ ໃນບ່ອນນັ້ນ ໄດ້ສຳມຸຂາວິໄນ ໃນບ່ອນໃດ ກໍຈະໄດ້ຕິນະວັດຖາຣະກະ ໃນບ່ອນນັ້ນ ແຕ່ຈະບໍ່ໄດ້ເຍພຸຍຍະສິກາ ສະຕິວິໄນ ອະມູລະຫະວິໄນ ປະຕິນຍາຕະກະຣະນະຕັດສະປາປິຍະສິກາ ໃນບ່ອນນັ້ນ

**ສະມະຖະວາຣະທີ ໑໕ ຈົບ**

## ໑໖. ສັງສັດຖະວາຣະ

## ວາຣະວ່າດ້ວຍອະທິກອນກັບສະມະຖະລວມກັນ

[໓໐໖] ຖາມ : ທຳເຫຼົ່ານີ້ ຄື ອະທິກອນກໍດີ ສະມະຖະກໍດີ ລວມກັນຫຼືແຍກກັນ ເພິ່ງໄດ້ເພື່ອທີ່ຈະບັນຍັດແບ່ງແຍກທຳເຫຼົ່ານີ້ໃຫ້ເປັນຕ່າງ ໆ ກັນໄປໄດ້ບໍ

ຕອບ : ທຳເຫຼົ່ານີ້ ຄື ອະທິກອນກໍດີ ສະມະຖະກໍດີ ແຍກກັນບໍ່ລວມກັນ ກໍແລເພິ່ງໄດ້ເພື່ອທີ່ຈະບັນຍັດແບ່ງແຍກທຳເຫຼົ່ານີ້ໃຫ້ເປັນຕ່າງ ໆ ຜູ້ວິສັດຊະນານັ້ນເພິ່ງຖືກທ້ວງວ່າ "ຢ່າກ່າວແນວນັ້ນ" ທຳເຫຼົ່ານີ້ ຄື ອະທິກອນກໍດີ ສະມະຖະກໍດີ ລວມກັນບໍ່ແຍກກັນແລະບໍ່ເພິ່ງໄດ້ເພື່ອທີ່ຈະບັນຍັດແບ່ງແຍກທຳເຫຼົ່ານີ້ໃຫ້ເປັນຕ່າງ ໆ ຂໍ້ນັ້ນ ຍ້ອນເຫດອັນໃດ? ຍ້ອນພຣະຜູ້ມີພຣະພາກເຈົ້າຕັດໄວ້ບໍ່ແມ່ນບໍວ່າ ພິກຂຸທັງຫຼາຍ ອະທິກອນເຫຼົ່ານີ້ມີ ໔ ສະມະຖະມີ ໗ ອະທິກອນລະງັບດ້ວຍສະມະຖະ ສະມະຖະລະງັບດ້ວຍອະທິກອນແນວນີ້ ທຳເຫຼົ່ານີ້ ຈຶ່ງລວມກັນ ບໍ່ແຍກກັນແລະບໍ່ເພິ່ງໄດ້ເພື່ອທີ່ຈະບັນຍັດແບ່ງແຍກທຳເຫຼົ່ານີ້ໃຫ້ເປັນຕ່າງ ໆ

**ສັງສັດຖະວາຣະທີ ໑໖ ຈົບ**

## ໑໗. ສຳມະຕິວາຣະ

## ວາຣະວ່າດ້ວຍອະທິກອນລະງັບ

[໓໐໗] ຖາມ : ວິວາທາທິກອນລະງັບດ້ວຍສະມະຖະທໍ່ໃດ? ອະນຸວາທາທິກອນລະງັບດ້ວຍ ສະມະຖະທໍ່ໃດ? ອາປັດຕາທິກອນລະງັບດ້ວຍສະມະຖະທໍ່ໃດ? ກິດຈາທິກອນລະງັບດ້ວຍສະມະຖະທໍ່ໃດ?

ຕອບ : ວິວາທາທິກອນລະງັບດ້ວຍສະມະຖະ ໒ ຄື

໑. ສຳມຸຂາວິໄນ ໒. ເຍພຸຍຍະສິກາ

ອະນຸວາທາທິກອນລະງັບດ້ວຍສະມະຖະ ໔ ຄື

໑. ສຳມຸຂາວິໄນ ໒. ສະຕິວິໄນ

໓. ອະມູລະຫະວິໄນ ໔. ຕັດສະປາປິຍະສິກາ

ອາປັດຕາທິກອນລະງັບດ້ວຍສະມະຖະ ໓ ຄື

໑. ສຳມຸຂາວິໄນ ໒. ປະຕິນຍາຕະກະຣະນະ

໓. ຕິນະວັດຖາຣະກະ

໑. ອອກທາງກາຍ ໒. ອອກທາງວາຈາ

໓. ອອກທາງກາຍກັບວາຈາ ໔. ອອກດ້ວຍກຳວາຈາ

ພິກຂຸອອກຈາກອາບັດແມ່ນດ້ວຍອາການອື່ນອີກ ໔ ຢ່າງ ຄື

໑. ໃນທ່າມກາງສົງ ໒. ໃນທ່າມກາງຄະນະ

໓. ໃນສຳນັກບຸກຄົນ ໔. ຍ້ອນເພດປ່ຽນແປງ

ພິກຂຸລະບຸຣຸດເພດເດີມ ດຳລົງຢູ່ໃນສະຕີເພດອັນເກີດໃນພາຍຫຼັງ ພ້ອມກັບການໄດ້ເພດໃໝ່ ວິນຍັຕິຍ່ອມລະງັບໄປ ບັນຍັດຍ່ອມດັບໄປ

ພິກຂຸນີລະສະຕີເພດທີ່ເກີດໃນພາຍຫຼັງ ກັບດຳລົງຢູ່ໃນບຸຣຸດເພດອັນເດີມ ພ້ອມກັບການໄດ້ເພດໃໝ່ ບັນຍັດຍ່ອມລະງັບໄປ ບັນຍັດຍ່ອມດັບໄປ

ການໂຈດມີ ໔ ຢ່າງ ຄື

໑. ໂຈດດ້ວຍສີລະວິບັດ ໒. ໂຈດດ້ວຍອາຈາຣະວິບັດ

໓. ໂຈດດ້ວຍທິດຖິວິບັດ ໔. ໂຈດດ້ວຍອາຊີວະວິບັດ

ປະຣິວາດມີ ໔ ຢ່າງ ຄື

໑. ປະຕິດສັນນະປະຣິວາດ ໒. ອັບປະຕິດສັນນະປະຣິວາດ

໓. ສຸດທັນຕະປະຣິວາດ ໔. ສະໂມທານະປະຣິວາດ

ມານັດມີ ໔ ຢ່າງ ຄື

໑. ປະຕິດສັນນະມານັດ ໒. ອັບປະຕິດສັນນະມານັດ

໓. ປັກຂະມານັດ ໔. ສະໂມທານະມານັດ

ຣັດຕິເສດຂອງພິກຂຸຜູ້ປະພຶດມານັດມີ ໔ ຢ່າງ ຄື

໑. ສະຫະວາສະ (ການຢູ່ຮ່ວມກັນ)

໒. ວິບປະວາສະ (ການຢູ່ປາສະຈາກ)

໓. ອະນາໂຣຈະນາ (ການບໍ່ບອກ)

໔. ອູເນກະເນຈະຣະນະ (ການປະພຶດໃນຄະນະສົງອັນຂາດ)

ພຣະບັນຍັດທີ່ຊົງຍົກຂຶ້ນສະແດງເອງມີ ໔ ຢ່າງ

ກາລິກທີ່ຮັບປະເຄນໄວ້ສັນມີ ໔ ຢ່າງ ຄື

໑. ຍາວະກາລິກ(ເຊົ້າເຖິງທ່ຽງ)

໒. ຍາມະກາລິກ (ມື້ໜຶ່ງກັບຄືນໜຶ່ງ)

໓. ສັດຕາຫະກາລິກ(໗ ມື້)
໔. ຍາວະຊີວິກ(ບໍ່ຈຳກັດເວລາມື້ຕະຫຼອດຊີວິດ)

ຢາມະຫາວິກັດ^ມີ ໔ ຢ່າງ ຄື

| | |
|---|---|
| ໑. ຄູດ | ໒. ມູດ |
| ໓. ຂີ້ເຖົ່າ | ໔. ດິນ |

ກຳມີ ໔ ຢ່າງ ຄື

| | |
|---|---|
| ໑. ອະປະໂລກະນະກຳ | ໒. ຍັດຕິກຳ |
| ໓. ຍັດຕິທຸຕິຍະກຳ | ໔. ຍັດຕິຈະຕຸດຖະກຳ |

ກຳແມ່ນອື່ນອີກມີ ໔ ຢ່າງ ຄື

| | |
|---|---|
| ໑. ກຳເປັນວັກໂດຍບໍ່ຊອບທຳ | ໒. ກຳພ້ອມພຽງໂດຍບໍ່ຊອບທຳ |
| ໓. ກຳເປັນວັກໂດຍຊອບທຳ | ໔. ກຳພ້ອມພຽງໂດຍຊອບທຳ |

ວິບັດມີ ໔ ຢ່າງ ຄື

| | |
|---|---|
| ໑. ສີລະວິບັດ | ໒. ອາຈາຣະວິບັດ |
| ໓. ທິດຖິວິບັດ | ໔. ອາຊີວະວິບັດ |

ອະທິກອນມີ ໔ ຢ່າງ ຄື

| | |
|---|---|
| ໑. ວິວາທາທິກອນ | ໒. ອະນຸວາທາທິກອນ |
| ໓. ອາປັດຕາທິກອນ | ໔. ກິດຈາທິກອນ |

ການປະທຸດສະຮ້າຍບໍລິສັດມີ ໔ ຢ່າງ ຄື

໑. ພິກຂຸຜູ້ທຸສີນ ມີທຳຊາມ ຈັດເປັນຜູ້ປະທຸດສະຮ້າຍບໍລິສັດ
໒. ພິກຂຸນີຜູ້ທຸສີນ ມີທຳຊາມ ຈັດເປັນຜູ້ປະທຸດສະຮ້າຍບໍລິສັດ
໓. ອຸປາສົກຜູ້ທຸສີນ ມີທຳຊາມ ຈັດເປັນຜູ້ປະທຸດສະຮ້າຍບໍລິສັດ
໔. ອຸປາສິກາຜູ້ທຸສີນ ມີທຳຊາມ ຈັດເປັນຜູ້ປະທຸດສະຮ້າຍບໍລິສັດ

ຄວາມງາມໃນບໍລິສັດມີ ໔ ຢ່າງ ຄື

໑. ພິກຂຸຜູ້ມີສີນ ມີທຳງາມ ຈັດເປັນຜູ້ງາມໃນບໍລິສັດ
໒. ພິກຂຸນີຜູ້ມີສີນ ມີທຳງາມ ຈັດເປັນຜູ້ງາມໃນບໍລິສັດ
໓. ອຸປາສົກຜູ້ມີສີນ ມີທຳງາມ ຈັດເປັນຜູ້ງາມໃນບໍລິສັດ
໔. ອຸປາສິກາຜູ້ມີສີນ ມີທຳງາມ ຈັດເປັນຜູ້ງາມໃນບໍລິສັດ

## ວ່າດ້ວຍພຣະອາຄັນຕຸກະ ເປັນຕົ້ນ

ອາບັດທີ່ພິກຂຸອາຄັນຕຸກະຕ້ອງ ພິກຂຸຜູ້ຢູ່ໃນອາວາດບໍ່ຕ້ອງ ມີຢູ່
ອາບັດທີ່ພິກຂຸຜູ້ຢູ່ໃນອາວາດຕ້ອງ ພິກຂຸອາຄັນຕຸກະບໍ່ຕ້ອງ ມີຢູ່
ອາບັດທີ່ພິກຂຸອາຄັນຕຸກະ ແລະພິກຂຸຜູ້ຢູ່ໃນອາວາດຕ້ອງ ມີຢູ່
ອາບັດທີ່ພິກຂຸອາຄັນຕຸກະ ແລະພິກຂຸຜູ້ຢູ່ໃນອາວາດບໍ່ຕ້ອງ ມີຢູ່
ອາບັດທີ່ພິກຂຸຜູ້ກຽມໄປຕ້ອງ ພິກຂຸຜູ້ຢູ່ໃນອາວາດບໍ່ຕ້ອງ ມີຢູ່
ອາບັດທີ່ພິກຂຸເຈົ້າຖິ່ນຕ້ອງ ພິກຂຸຜູ້ກຽມໄປບໍ່ຕ້ອງ ມີຢູ່
ອາບັດທີ່ພິກຂຸຜູ້ກຽມໄປ ແລະພິກຂຸຜູ້ຢູ່ໃນອາວາດຕ້ອງ ມີຢູ່
ອາບັດທີ່ພິກຂຸຜູ້ກຽມໄປ ແລະພິກຂຸຜູ້ຢູ່ໃນອາວາດບໍ່ຕ້ອງ ມີຢູ່

## ວ່າດ້ວຍສິກຂາບົດມີວັດຖຸຕ່າງກັນ ເປັນຕົ້ນ

ຄວາມທີ່ສິກຂາບົດມີວັດຖຸຕ່າງກັນ ມີຢູ່ ຄວາມທີ່ສິກຂາບົດມີອາບັດຕ່າງກັນ ບໍ່ມີຢູ່
ຄວາມທີ່ສິກຂາບົດມີອາບັດຕ່າງກັນ ມີຢູ່ ຄວາມທີ່ສິກຂາບົດມີວັດຖຸຕ່າງກັນ ບໍ່ມີຢູ່
ຄວາມທີ່ສິກຂາບົດມີວັດຖຸຕ່າງກັນ ແລະມີອາບັດຕ່າງກັນ ມີຢູ່
ຄວາມທີ່ສິກຂາບົດທັງມີວັດຖຸຕ່າງກັນ ທັງມີອາບັດຕ່າງກັນ ບໍ່ມີຢູ່
ຄວາມທີ່ສິກຂາບົດມີວັດຖຸສະເໝີກັນ ມີຢູ່ ຄວາມທີ່ສິກຂາບົດມີອາບັດສະເໝີກັນ ບໍ່ມີຢູ່
ຄວາມທີ່ສິກຂາບົດມີອາບັດສະເໝີກັນ ມີຢູ່ ຄວາມທີ່ສິກຂາບົດມີວັດຖຸສະເໝີກັນ ບໍ່ມີຢູ່
ຄວາມທີ່ສິກຂາບົດມີວັດຖຸສະເໝີກັນ ແລະມີອາບັດສະເໝີກັນ ມີຢູ່
ຄວາມທີ່ສິກຂາບົດທັງມີວັດຖຸສະເໝີກັນ ທັງມີອາບັດສະເໝີກັນ ບໍ່ມີຢູ່

## ວ່າດ້ວຍພຣະອຸປັດຊາຕ້ອງອາບັດ ເປັນຕົ້ນ

ອາບັດທີ່ພຣະອຸປັດຊາຕ້ອງ ແຕ່ສັດທິວິຫາຣິກບໍ່ຕ້ອງ ມີຢູ່
ອາບັດທີ່ສັດທິວິຫາຣິກຕ້ອງ ແຕ່ພຣະອຸປັດຊາບໍ່ຕ້ອງ ມີຢູ່
ອາບັດທີ່ພຣະອຸປັດຊາ ແລະສັດທິວິຫາຣິກຕ້ອງ ມີຢູ່
ອາບັດທີ່ທັງພຣະອຸປັດຊາ ທັງສັດທິວິຫາຣິກບໍ່ຕ້ອງ ມີຢູ່
ອາບັດທີ່ພຣະອາຈານຕ້ອງ ແຕ່ອັນເຕວາສິກບໍ່ຕ້ອງ ມີຢູ່
ອາບັດທີ່ອັນເຕວາສິກຕ້ອງ ແຕ່ພຣະອາຈານບໍ່ຕ້ອງ ມີຢູ່
ອາບັດທີ່ພຣະອາຈານ ແລະອັນເຕວາສິກຕ້ອງ ມີຢູ່
ອາບັດທີ່ທັງພຣະອາຈານ ທັງອັນເຕວາສິກບໍ່ຕ້ອງ ມີຢູ່

## ວ່າດ້ວຍປັດໄຈແຫ່ງການຂາດພັນສາ ເປັນຕົ້ນ

ການຂາດພັນສາທີ່ບໍ່ຕ້ອງອາບັດມີປັດໄຈ ໔ ຢ່າງ ຄື

໑. ສົງແຕກກັນ
໒. ມີອັນຕະລາຍແກ່ຊີວິດ
໓. ມີພວກພິກຂຸປະສົງຈະທຳລາຍສົງ
໔. ມີອັນຕະລາຍແກ່ພົມມະຈັນ

ວະຈີທຸດຈະຣິດມີ ໔ ຢ່າງ ຄື

໑. ເວົ້າຕົວະ
໒. ເວົ້າຄຳຫຍາບ
໓. ເວົ້າສັບສໍ່
໔. ເວົ້າບໍ່ມີສາຣະ

ວະຈີສຸດຈະຣິດມີ ໔ ຢ່າງ ຄື

໑. ເວົ້າຈິງ
໒. ເວົ້າຄຳສຸພາບ
໓. ເວົ້າບໍ່ສັບສໍ່
໔. ເວົ້າພໍປະມານ

## ວ່າດ້ວຍຖືເອົາຊັບ ເປັນຕົ້ນ

ພິກຂຸຖືເອົາເອງຕ້ອງອາບັດໜັກ ໃຊ້ຜູ້ອື່ນຕ້ອງອາບັດເບົາ ມີຢູ່
ພິກຂຸຖືເອົາເອງຕ້ອງອາບັດເບົາ ໃຊ້ຜູ້ອື່ນຕ້ອງອາບັດໜັກ ມີຢູ່
ພິກຂຸຖືເອົາເອງກໍດີ ໃຊ້ຜູ້ອື່ນກໍດີ ຕ້ອງອາບັດໜັກ ມີຢູ່
ພິກຂຸຖືເອົາເອງກໍດີ ໃຊ້ຜູ້ອື່ນກໍດີ ຕ້ອງອາບັດເບົາ ມີຢູ່

## ວ່າດ້ວຍບຸກຄົນຄວນອະພິວາດ ເປັນຕົ້ນ

ບຸກຄົນຄວນອະພິວາດ ແຕ່ບໍ່ຄວນລຸກຮັບ ມີຢູ່
ບຸກຄົນຄວນລຸກຮັບ ແຕ່ບໍ່ຄວນອະພິວາດ ມີຢູ່
ບຸກຄົນຄວນອະພິວາດ ແລະຄວນລຸກຮັບ ມີຢູ່
ບຸກຄົນທັງບໍ່ຄວນອະພິວາດ ທັງບໍ່ຄວນລຸກຮັບ ມີຢູ່
ບຸກຄົນຄວນແກ່ອາສະນະ ແຕ່ບໍ່ຄວນອະພິວາດ ມີຢູ່
ບຸກຄົນຄວນອະພິວາດ ແຕ່ບໍ່ຄວນແກ່ອາສະນະ ມີຢູ່
ບຸກຄົນຄວນແກ່ອາສະນະ ແລະຄວນອະພິວາດ ມີຢູ່
ບຸກຄົນທັງບໍ່ຄວນແກ່ອາສະນະ ທັງບໍ່ຄວນອະພິວາດ ມີຢູ່

# ວ່າດ້ວຍຕ້ອງອາບັດໃນກາລ ເປັນຕົ້ນ

ອາບັດທີ່ພິກຂຸຕ້ອງໃນກາລ ແຕ່ບໍ່ຕ້ອງໃນເວລາວິກາລ ມີຢູ່
ອາບັດທີ່ພິກຂຸຕ້ອງໃນເວລາວິກາລ ແຕ່ບໍ່ຕ້ອງໃນກາລ ມີຢູ່
ອາບັດທີ່ພິກຂຸຕ້ອງໃນກາລ ແລະໃນເວລາວິກາລ ມີຢູ່
ອາບັດທີ່ພິກຂຸບໍ່ຕ້ອງທັງໃນກາລ ທັງໃນເວລາວິກາລ ມີຢູ່
ກາລິກທີ່ຮັບປະເຄນແລ້ວ ຍ່ອມຄວນໃນກາລ ແຕ່ບໍ່ຄວນໃນເວລາວິກາລ ມີຢູ່
ກາລິກທີ່ຮັບປະເຄນແລ້ວ ຍ່ອມຄວນໃນເວລາວິກາລ ແຕ່ບໍ່ຄວນໃນກາລ ມີຢູ່
ກາລິກທີ່ຮັບປະເຄນແລ້ວ ຍ່ອມຄວນໃນກາລ ແລະໃນເວລາວິກາລ ມີຢູ່
ກາລິກທີ່ຮັບປະເຄນແລ້ວ ຍ່ອມບໍ່ຄວນທັງໃນກາລ ທັງໃນເວລາວິກາລ ມີຢູ່
ອາບັດທີ່ພິກຂຸຕ້ອງໃນປັດຈັນຕະຊົນນະບົດ ແຕ່ບໍ່ຕ້ອງໃນມັດຊິມະຊົນນະບົດ ມີຢູ່
ອາບັດທີ່ພິກຂຸຕ້ອງໃນມັດຊິມະຊົນນະບົດ ແຕ່ບໍ່ຕ້ອງໃນປັດຈັນຕະຊົນນະບົດ ມີຢູ່
ອາບັດທີ່ພິກຂຸຕ້ອງທັງໃນປັດຈັນຕະຊົນນະບົດ ແລະໃນມັດຊິມະຊົນນະບົດ ມີຢູ່
ອາບັດທີ່ພິກຂຸບໍ່ຕ້ອງທັງໃນປັດຈັນຕະຊົນນະບົດ ທັງໃນມັດຊິມະຊົນນະບົດ ມີຢູ່
ວັດຖຸຍ່ອມຄວນໃນປັດຈັນຕະຊົນນະບົດ ແຕ່ບໍ່ຄວນໃນມັດຊິມະຊົນນະບົດ ມີຢູ່
ວັດຖຸຍ່ອມຄວນໃນມັດຊິມະຊົນນະບົດ ແຕ່ບໍ່ຄວນໃນປັດຈັນຕະຊົນນະບົດ ມີຢູ່
ວັດຖຸຍ່ອມຄວນທັງໃນປັດຈັນຕະຊົນນະບົດ ແລະໃນມັດຊິມະຊົນນະບົດ ມີຢູ່
ວັດຖຸຍ່ອມບໍ່ຄວນທັງໃນປັດຈັນຕະຊົນນະບົດ ທັງໃນມັດຊິມະຊົນນະບົດ ມີຢູ່
ອາບັດທີ່ພິກຂຸຕ້ອງໃນພາຍໃນ ແຕ່ບໍ່ຕ້ອງໃນພາຍນອກ ມີຢູ່
ອາບັດທີ່ພິກຂຸຕ້ອງໃນພາຍນອກ ແຕ່ບໍ່ຕ້ອງໃນພາຍໃນ ມີຢູ່
ອາບັດທີ່ພິກຂຸຕ້ອງທັງໃນພາຍໃນ ແລະໃນພາຍນອກ ມີຢູ່
ອາບັດທີ່ພິກຂຸບໍ່ຕ້ອງທັງໃນພາຍໃນ ທັງໃນພາຍນອກ ມີຢູ່
ອາບັດທີ່ພິກຂຸຕ້ອງໃນພາຍໃນສີມາ ແຕ່ບໍ່ຕ້ອງໃນພາຍນອກສີມາ ມີຢູ່
ອາບັດທີ່ພິກຂຸຕ້ອງໃນພາຍນອກສີມາ ແຕ່ບໍ່ຕ້ອງໃນພາຍໃນສີມາ ມີຢູ່
ອາບັດທີ່ພິກຂຸຕ້ອງທັງໃນພາຍໃນສີມາ ແລະໃນພາຍນອກສີມາ ມີຢູ່
ອາບັດທີ່ພິກຂຸບໍ່ຕ້ອງທັງໃນພາຍໃນສີມາ ທັງໃນພາຍນອກສີມາ ມີຢູ່
ອາບັດທີ່ພິກຂຸຕ້ອງໃນໝູ່ບ້ານ ແຕ່ບໍ່ຕ້ອງໃນປ່າ ມີຢູ່
ອາບັດທີ່ພິກຂຸຕ້ອງໃນປ່າ ແຕ່ບໍ່ຕ້ອງໃນໝູ່ບ້ານ ມີຢູ່
ອາບັດທີ່ພິກຂຸຕ້ອງທັງໃນໝູ່ບ້ານ ແລະໃນປ່າ ມີຢູ່
ອາບັດທີ່ພິກຂຸບໍ່ຕ້ອງທັງໃນໝູ່ບ້ານ ທັງໃນປ່າ ມີຢູ່

# ວ່າດ້ວຍການໂຈດ ເປັນຕົ້ນ

ການໂຈດມີ ໔ ຢ່າງ ຄື

ໍ໑. ໂຈດຊີ້ວັດຖຸ ໒. ໂຈດຊີ້ອາບັດ

໓. ໂຈດຫ້າມສັງວາດ ໔. ໂຈດຫ້າມສາມີຈິກຳ

ບຸບພະກິດມີ ໕ ຢ່າງ

ຄວາມພ້ອມພຽງມີ ໔ ຢ່າງ

ອາບັດປາຈິດຕີບໍ່ມີອັນໃດ?ອື່ນມີ ໔ ສິກຂາບົດ

ພິກຂຸສົມມຸດມີ ໔ ສິກຂາບົດ

ການເຖິງອະຄະຕິ (ຄວາມລຳອຽງ) ມີ ໔ ຢ່າງ ຄື

໑. ລຳອຽງຍ້ອນຮັກ ໒. ລຳອຽງຍ້ອນຊັງ

໓. ລຳອຽງຍ້ອນຫຼົງ ໔. ລຳອຽງຍ້ອນຢ້ານ

ການບໍ່ເຖິງອະຄະຕິ(ຄວາມບໍ່ລຳອຽງ)ມີ ໔ ຄື

໑. ບໍ່ລຳອຽງຍ້ອນຮັກ ໒. ບໍ່ລຳອຽງຍ້ອນຊັງ

໓. ບໍ່ລຳອຽງຍ້ອນຫຼົງ ໔. ບໍ່ລຳອຽງຍ້ອນຢ້ານ

ພິກຂຸອະລັດຊີປະກອບດ້ວຍອົງ ໔ ຍ່ອມທຳລາຍສົງ ຄື

໑. ລຳອຽງຍ້ອນຮັກ ໒. ລຳອຽງຍ້ອນຊັງ

໓. ລຳອຽງຍ້ອນຫຼົງ ໔. ລຳອຽງຍ້ອນຢ້ານ

ພິກຂຸຜູ້ມີສິນດີງາມປະກອບດ້ວຍອົງ ໔ ຍ່ອມສະມານສົງທີ່ແຕກກັນແລ້ວໃຫ້ສາມັກຄີກັນ ຄື

໑. ບໍ່ລຳອຽງຍ້ອນຮັກ ໒. ບໍ່ລຳອຽງຍ້ອນຊັງ

໓. ບໍ່ລຳອຽງຍ້ອນຫຼົງ ໔. ບໍ່ລຳອຽງຍ້ອນຢ້ານ

ພິກຂຸຜູ້ປະກອບດ້ວຍອົງ ໔ ອັນພິກຂຸບໍ່ຄວນຖາມວິໄນ ຄື

໑. ລຳອຽງຍ້ອນຮັກ ໒. ລຳອຽງຍ້ອນຊັງ

໓. ລຳອຽງຍ້ອນຫຼົງ ໔. ລຳອຽງຍ້ອນຢ້ານ

ວິໄນອັນພິກຂຸຜູ້ປະກອບດ້ວຍອົງ ໔ ບໍ່ຄວນຖາມ ຄື

໑. ລຳອຽງຍ້ອນຮັກ ໒. ລຳອຽງຍ້ອນຊັງ

໓. ລຳອຽງຍ້ອນຫຼົງ ໔. ລຳອຽງຍ້ອນຢ້ານ

ພິກຂຸຜູ້ປະກອບດ້ວຍອົງ ໔ ອັນພິກຂຸບໍ່ຄວນຕອບວິໄນ ຄື

໑. ລຳອຽງຍ້ອນຮັກ ໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ ໔. ລຳອຽງຍ້ອນຢ້ານ

ວິໄນອັນພິກຂຸຜູ້ປະກອບດ້ວຍອົງ ໔ ບໍ່ຄວນຕອບ ຄື

໑. ລຳອຽງຍ້ອນຮັກ ໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ ໔. ລຳອຽງຍ້ອນຢ້ານ

ພິກຂຸຜູ້ປະກອບດ້ວຍອົງ ໔ ອັນພິກຂຸບໍ່ເພິ່ງໃຫ້ຄຳຊັກຖາມ ຄື

໑. ລຳອຽງຍ້ອນຮັກ ໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ ໔. ລຳອຽງຍ້ອນຢ້ານ

ພິກຂຸບໍ່ຄວນສົນທະນາວິໄນຮ່ວມກັບພິກຂຸຜູ້ປະກອບດ້ວຍອົງ ໔ ຄື

໑. ລຳອຽງຍ້ອນຮັກ ໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ ໔. ລຳອຽງຍ້ອນຢ້ານ

## ວ່າດ້ວຍພິກຂຸເປັນໄຂ້ຕ້ອງອາບັດ ເປັນຕົ້ນ

ອາບັດທີ່ພິກຂຸເປັນໄຂ້ຕ້ອງ ແຕ່ບໍ່ເປັນໄຂ້ບໍ່ຕ້ອງ ມີຢູ່
ອາບັດທີ່ພິກຂຸບໍ່ເປັນໄຂ້ຕ້ອງ ແຕ່ເປັນໄຂ້ບໍ່ຕ້ອງ ມີຢູ່
ອາບັດທີ່ພິກຂຸເປັນໄຂ້ ແລະບໍ່ເປັນໄຂ້ຕ້ອງ ມີຢູ່
ອາບັດທີ່ພິກຂຸທັງເປັນໄຂ້ ທັງບໍ່ເປັນໄຂ້ຕ້ອງ ມີຢູ່

## ວ່າດ້ວຍງົດປາຕິໂມກ

ການງົດປາຕິໂມກທີ່ບໍ່ຖືກຕ້ອງຕາມທຳມີ ໔ ຢ່າງ
ການງົດປາຕິໂມກທີ່ຊອບທຳມີ ໔ ຢ່າງ

**ຈະຕຸກກະວາຣະ ຈົບ**

## ຫົວຂໍ້ປະຈໍາວາຣະ

ອາບັດທີ່ຕ້ອງດ້ວຍວາຈາຂອງຕົນ ອາບັດທີ່ຕ້ອງດ້ວຍກາຍ
ອາບັດທີ່ຫຼັບແລ້ວຕ້ອງ ອາບັດທີ່ບໍ່ຕັ້ງໃຈຕ້ອງ
ອາບັດທີ່ຕ້ອງດ້ວຍກໍາ ໂວຫານ ໔ ຢ່າງ ປາຣາຊິກຂອງພິກຂຸ
ປາຣາຊິກຂອງພິກຂຸນີ ບໍຣິຂານ ອາບັດທີ່ຕ້ອງຕໍ່ໜ້າ
ອາບັດທີ່ບໍ່ຮູ້ຈຶ່ງຕ້ອງ ອາບັດທີ່ຕ້ອງທາງກາຍ ອາບັດທີ່ຕ້ອງໃນທ່າມກາງ

ການອອກຈາກອາບັດ ໔ ໝວດ ໄດ້ເພດໃໝ່ ການໂຈດ ປະຣິວາດ ມານັດ
ຣັດຕິເສດຂອງພິກຂຸຜູ້ປະພຶດມານັດ ພຣະບັນຍັດທີ່ຊົງຍົກຂຶ້ນສະແດງເອງ
ກາລິກທີ່ຮັບປະເຄນ ຢາມະຫາວິກັດ ກໍາ ໔ ໝວດ ວິບັດ ອະທິກອນ
ພິກຂຸຜູ້ທຸສິນ ພິກຂຸຜູ້ມີສິນດີງາມ

ອາບັດທີ່ພິກຂຸອາຄັນຕຸກະຕ້ອງ ອາບັດທີ່ພິກຂຸຜູ້ກຽມໄປຕ້ອງ
ຄວາມທີ່ສິກຂາບົດມີວັດຖຸຕ່າງກັນ ຄວາມທີ່ສິກຂາບົດມີວັດຖຸສະເໝີກັນ
ອາບັດທີ່ອຸປັດຊາແລະອາຈານຕ້ອງ
ປັດໄຈແຫ່ງການຂາດພັນສາ ອະຈິທຸດຈະຣິດ ອະຈິສຸດຈະຣິດ

ການຖືເອົາຊັບ ບຸກຄົນຄວນອະພິວາດ ບຸກຄົນຄວນແກ່ອາສະນະ
ອາບັດທີ່ຕ້ອງໃນການ ຂອງທີ່ຄວນ ອາບັດທີ່ຕ້ອງໃນປັດຈັນຕະຊົນນະບົດ
ຂອງທີ່ຄວນໃນປັດຈັນຕະຊົນນະບົດ ອາບັດທີ່ຕ້ອງໃນພາຍໃນ
ອາບັດທີ່ຕ້ອງໃນພາຍໃນສີມາ ອາບັດທີ່ຕ້ອງໃນໝູ່ບ້ານ ການໂຈດ ບຸບພະກິດ

ຄວາມພ້ອມພຽງທີ່ເຖິງແລ້ວ ອາບັດປາຈິດຕິບໍ່ມີອັນໃດ?ອື່ນ
ການສົມມຸດ ການເຖິງອະຄະຕິ ການບໍ່ເຖິງອະຄະຕິ ພິກຂຸອະລັດຊີ ພິກຂຸມີສິນດີງາມ
ພິກຂຸຜູ້ບໍ່ຄວນຖາມ ໔ ໝວດ ພິກຂຸທີ່ບໍ່ຄວນໄດ້ຮັບຄໍາຕອບ ໔ ໝວດ
ພິກຂຸທີ່ຄວນໄດ້ຮັບຄໍາຊັກຖາມ ພິກຂຸທີ່ບໍ່ຄວນສົນທະນາດ້ວຍ
ອາບັດທີ່ພິກຂຸເປັນໄຂ້ຕ້ອງ ການງົດປາຕິໂມກ

## ໕. ປັນຈະກະວາຣະ

## ວ່າດ້ວຍໝວດ ໕

[໓໔໕] ອາບັດມີ ໕ ກອງອາບັດມີ ໕ ວິນິຕະວັດຖຸມີ ໕ ອະນັນຕະຣິຍະກໍາມີ ໕ ບຸກຄົນທີ່ແນ່ນອນມີ ໕ ອາບັດມີການຕັດເປັນວິໄນກໍາມີ ໕ ຕ້ອງອາບັດດ້ວຍອາການ ໕ ອາບັດ ຍ້ອນມຸສາວາທະເປັນປັດໄຈມີ ໕

ພິກຂຸບໍ່ເຂົ້າກຳດ້ວຍອາການ ໕ ຢ່າງ ຄື

໑. ຕົນເອງບໍ່ເຮັດກຳ
໒. ບໍ່ໃຫ້ສັນທະຫຼືປາຣິສຸດທິ
໓. ບໍ່ເຊີນພິກຂຸອື່ນ
໔. ເມື່ອສົງເຮັດກຳຍ່ອມຄັດຄ້ານ
໕. ເມື່ອສົງເຮັດກຳສຳເລັດແລ້ວກັບເຫັນວ່າບໍ່ເປັນທຳ

ພິກຂຸເຂົ້າກຳດ້ວຍອາການ ໕ ຢ່າງ ຄື

໑. ຕົນເອງເຮັດກຳ
໒. ໃຫ້ສັນທະຫຼືປາຣິສຸດທິ
໓. ເຊີນພິກຂຸອື່ນ
໔. ເມື່ອສົງເຮັດກຳບໍ່ຄັດຄ້ານ
໕. ເມື່ອສົງເຮັດກຳສຳເລັດແລ້ວ ກໍເຫັນວ່າເປັນທຳ

ກິດ ໕ ຢ່າງ ສົມຄວນແກ່ພິກຂຸຜູ້ຖືທ່ຽວບິນທະບາດ ຄື

໑. ທ່ຽວໄປບໍ່ຕ້ອງບອກລາ
໒. ສັນປະຣຳປະຣະໂພຊະນະໄດ້
໓. ສັນຄະນະໂພຊະນະໄດ້
໔. ການບໍ່ຕ້ອງອະທິຖານ
໕. ການບໍ່ຕ້ອງວິກັບ

ພິກຂຸຜູ້ປະກອບດ້ວຍອົງ ໕ ຈະເປັນພິກຂຸຊົ່ວຊາມກໍດີ ຈະເປັນພິກຂຸມີທຳອັນບໍ່ກຳເຣິບກໍດີ ຍ່ອມຖືກຣະແວງ ຖືກລັງກຽດ ຄື

໑. ມີຍິງແພດສະຫຍາເປັນໂຄຈອນ
໒. ມີສາວເທື້ອເປັນໂຄຈອນ
໓. ມີແມ່ໝ້າຍເປັນໂຄຈອນ
໔. ມີບັນເດາະເປັນໂຄຈອນ
໕. ມີພິກຂຸນີເປັນໂຄຈອນ

ນ້ຳມັນມີ ໕ ຊະນິດ ຄື

໑. ນ້ຳມັນງາ
໒. ນ້ຳມັນໝາກຊາງ
໓. ນ້ຳມັນໄນຜັກກາດ
໔. ນ້ຳມັນທຸ່ງສາ
໕. ນ້ຳມັນນ້ຳສັດ

ມັນແຫຼວສັດມີ ໕ ຊະນິດ ຄື

໑. ມັນແຫຼວໝີ
໒. ມັນແຫຼວປາສະຫຼາມ
໓. ມັນແຫຼວປາ
໔. ມັນແຫຼວໝູ
໕. ມັນແຫຼວລາ

ຄວາມເສື່ອມມີ ໕ ຢ່າງ ຄື

໑. ຄວາມເສື່ອມຍາດ
໒. ຄວາມເສື່ອມຄືພະຍາດ
໓. ຄວາມເສື່ອມໂພຄະສົມບັດ
໔. ຄວາມເສື່ອມສິນ

໕. ຄວາມເສື່ອມທິດຖິ

ຄວາມເຖິງພ້ອມມີ ໕ ຢ່າງ ຄື
໑. ຍາຕິສຳປະທາ(ຄວາມເຖິງພ້ອມແຫ່ງຍາດ)
໒. ໂພຄະສຳປະທາ(ຄວາມເຖິງພ້ອມແຫ່ງໂພຄະສົມບັດ)
໓. ອາໂຣຄະຍະສຳປະທາ(ຄວາມເຖິງພ້ອມແຫ່ງຄວາມບໍ່ມີພະຍາດ)
໔. ສີລະສຳປະທາ(ຄວາມເຖິງພ້ອມແຫ່ງສີນ)
໕. ທິດຖິສຳປະທາ(ຄວາມເຖິງພ້ອມແຫ່ງທິດຖິ)

ນິໄສລະງັບຈາກພຣະອຸປັດຊາມີ ໕ ຄື
໑. ພຣະອຸປັດຊາຫຼີກໄປ
໒. ພຣະອຸປັດຊາສິກ
໓. ພຣະອຸປັດຊາມໍຣະນະພາບ
໔. ພຣະອຸປັດຊາໄປເຂົ້າຮີດເດຍຣະຖີ
໕. ພຣະອຸປັດຊາສັ່ງບັງຄັບ

ບຸກຄົນ ໕ ຈຳພວກ ບໍ່ຄວນໃຫ້ອຸປະສົມບົດ ຄື
໑. ມີການບົກຜ່ອງ
໒. ມີອະໄວຍະວະບົກຜ່ອງ
໓. ມີວັດຖຸວິບັດ
໔. ມີການກະທຳອັນເສຍຫາຍ
໕. ບໍ່ບໍລິບູນ

ຜ້າບັງສຸກຸນມີ ໕ ຢ່າງ ຄື
໑. ຜ້າຕົກທີ່ປ່າຊ້າ
໒. ຜ້າຕົກທີ່ຕະຫຼາດ
໓. ຜ້າໜູກັດ
໔. ຜ້າປວກກັດ
໕. ຜ້າຖືກໄຟໄໝ້

ຜ້າບັງສຸກຸນແມ່ນອື່ນອີກ ໕ ຢ່າງ ຄື
໑. ຜ້າທີ່ງົວກັດ
໒. ຜ້າທີ່ແບ້ກັດ
໓. ຜ້າທີ່ຫົ່ມສະຖູບ
໔. ຜ້າທີ່ເຂົາຖິ້ມໃນສະຖານທີ່ອະພິເສກ
໕. ຜ້າທີ່ເຂົານຳໄປສູ່ປ່າຊ້າແລ້ວນຳກັບມາ

ອະວະຫານມີ ໕ ຢ່າງ ຄື
໑. ເຖີຍຍາວະຫານ
໒. ປະໄສຫາວະຫານ
໓. ປະຣິກັບປາວະຫານ
໔. ປະຕິດສັນນາວະຫານ
໕. ກຸສາວະຫານ

ມະຫາໂຈນທີ່ມີຜາກົດຢູ່ໃນໂລກມີ ໕ ຈຳພວກ

ສິ່ງຂອງທີ່ບໍ່ຄວນຈ່າຍມີ ໕ ຢ່າງ

ສິ່ງຂອງທີ່ບໍ່ຄວນແບ່ງມີ ໕ ຢ່າງ

ອາບັດທີ່ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດມີ ໕ ຢ່າງ

ອາບັດທີ່ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດມີ ໕ ຢ່າງ

ອາບັດທີ່ເປັນເທສະນາຄາມິນີມີ ໕ ຢ່າງ

ສົງມີ ໕ ຈຳພວກ ປາຕິໂມກຂຸດເທດມີ ໕ ຢ່າງ

ໃນປັດຈັນຕະຊົນນະບົດທຸກແຫ່ງ ຄະນະມີພຣະວິໄນທອນຄົບ ໕ ເພິ່ງໃຫ້ກຸນລະບຸດອຸປະສົມບົດໄດ້

ໃນການ ການກະຖິນມີອານິສົງ ໕ ຢ່າງ ກໍາມີ ໕ ຢ່າງ

ອາບັດມີ ໕ ຢ່າງ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ

ພິກຂຸຖືເອົາຊັບທີ່ຜູ້ອື່ນບໍ່ໃຫ້ດ້ວຍອາການ ໕ ຢ່າງ ຕ້ອງອາບັດປາຣາຊິກ

ພິກຂຸຖືເອົາຊັບທີ່ຜູ້ອື່ນບໍ່ໃຫ້ດ້ວຍອາການ ໕ ຢ່າງ ຕ້ອງອາບັດຖຸນລັດໄຈ

ພິກຂຸຖືເອົາຊັບທີ່ຜູ້ອື່ນບໍ່ໃຫ້ດ້ວຍອາການ ໕ ຕ້ອງອາບັດທຸກກົດ

ພິກຂຸບໍ່ຄວນບໍຣິໂພກອະກັບປີຍະວັດຖຸ ໕ ຢ່າງ ຄື

໑. ຂອງທີ່ເຂົາບໍ່ໃຫ້
໒. ເປັນອະກັບປີຍະ
໓. ບໍ່ຮູ້
໔. ຍັງບໍ່ໄດ້ຮັບປະເຄນ
໕. ບໍ່ໄດ້ເຮັດໃຫ້ເປັນເງື່ອນ

ພິກຂຸຄວນບໍຣິໂພກກັບປີຍະວັດຖຸ ໕ ຢ່າງ ຄື

໑. ຂອງທີ່ເຂົາໃຫ້
໒. ເປັນກັບປີຍະ
໓. ຮູ້ແລ້ວ
໔. ຮັບປະເຄນແລ້ວ
໕. ເຮັດໃຫ້ເປັນເງື່ອນແລ້ວ

ການໃຫ້ທີ່ບໍ່ຈັດເປັນບຸນ ແຕ່ຊາວໂລກສົມມຸດວ່າເປັນບຸນ ມີ ໕ ຢ່າງ ຄື

໑. ໃຫ້ນ້ຳເມົາ
໒. ໃຫ້ສະຕີ
໓. ໃຫ້ມະໂຫລະສົບ
໔. ໃຫ້ງົວເຖິກ
໕. ໃຫ້ຮູບພາບ

ສິ່ງທີ່ເກີດຂຶ້ນແລ້ວບັນເທົາໄດ້ຍາກມີ ໕ ຢ່າງ ຄື

໑. ຣາຄະເກີດຂຶ້ນແລ້ວບັນເທົາໄດ້ຍາກ
໒. ໂທສະເກີດຂຶ້ນແລ້ວບັນເທົາໄດ້ຍາກ

໓. ໂມຫະເກີດຂຶ້ນແລ້ວບັນເທົາໄດ້ຍາກ
໔. ປະຕິພານເກີດຂຶ້ນແລ້ວບັນເທົາໄດ້ຍາກ
໕. ຈິດທີ່ຄິດຈະໄປເກີດຂຶ້ນແລ້ວບັນເທົາໄດ້ຍາກ

ການກວາດມີອານິສົງ ໕ ຢ່າງ ຄື
໑. ຈິດຂອງຕົນເຫຼື້ອມໃສ
໒. ຈິດຂອງຜູ້ອື່ນເຫຼື້ອມໃສ
໓. ເທວະດາຊົມຊື່ນ
໔. ສັ່ງສົມກຳທີ່ເປັນໄປເພື່ອໃຫ້ເກີດຄວາມເຫຼື້ອມໃສ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປບັງເກີດໃນສຸກຄະຕິໂລກສະຫວັນ

ການກວາດແມ່ນອື່ນອີກກໍມີອານິສົງ ໕ ຢ່າງ ຄື
໑. ຈິດຂອງຕົນເຫຼື້ອມໃສ
໒. ຈິດຂອງຜູ້ອື່ນເຫຼື້ອມໃສ
໓. ເທວະດາຊົມຊື່ນ
໔. ເປັນອັນເຮັດຕາມຄຳສັ່ງສອນຂອງພຣະສາດສະໜາ
໕. ຊົນລຸ້ນຫຼັງຍຶດຖືເປັນແບບຢ່າງ

## ວ່າດ້ວຍອົງຄຸນຂອງພຣະວິໄນທອນ

ພຣະວິໄນທອນປະກອບດ້ວຍອົງ ໕ ນັບວ່າເປັນຜູ້ໂງ່ຈ້າ ຄື
໑. ບໍ່ກຳນົດບ່ອນສຸດຄຳເວົ້າຂອງຕົນ
໒. ບໍ່ກຳນົດບ່ອນສຸດຄຳເວົ້າຂອງຜູ້ອື່ນ
໓. ບໍ່ກຳນົດບ່ອນສຸດຄຳເວົ້າຂອງຕົນທັງບໍ່ກຳນົດບ່ອນສຸດຄຳເວົ້າຂອງຜູ້ອື່ນ ແລ້ວ ປັບອາບັດ
໔. ປັບອາບັດໂດຍບໍ່ຊອບທຳ
໕. ປັບອາບັດບໍ່ຕາມປະຕິຍານ

ພຣະວິໄນທອນປະກອບດ້ວຍອົງ ໕ ນັບວ່າເປັນຜູ້ສະຫຼາດ ຄື
໑. ກຳນົດບ່ອນສຸດຄຳເວົ້າຂອງຕົນ
໒. ກຳນົດບ່ອນສຸດຄຳເວົ້າຂອງຜູ້ອື່ນ
໓. ກຳນົດບ່ອນສຸດຄຳເວົ້າຂອງຕົນທັງກຳນົດບ່ອນສຸດຄຳເວົ້າຂອງຜູ້ອື່ນແລ້ວປັບ ອາບັດ

໔. ປັບອາບັດຕາມທຳ

໕. ປັບອາບັດຕາມປະຕິຍານ

ພຣະວິໄນທອນປະກອບແມ່ນດ້ວຍອົງອື່ນອີກ ໕ ນັບວ່າເປັນຜູ້ໂງ່ຈ້າ ຄື

໑. ບໍ່ຮູ້ອາບັດ

໒. ບໍ່ຮູ້ເຫດເກີດອາບັດ

໓. ບໍ່ຮູ້ມູນຂອງອາບັດ

໔. ບໍ່ຮູ້ການລະງັບອາບັດ

໕. ບໍ່ຮູ້ຂໍ້ປະຕິບັດອັນໃຫ້ເຖິງການລະງັບອາບັດ

ພຣະວິໄນທອນປະກອບດ້ວຍອົງ ໕ ນັບວ່າເປັນຜູ້ສະຫຼາດ ຄື

໑. ຮູ້ອາບັດ

໒. ຮູ້ເຫດເກີດອາບັດ

໓. ຮູ້ມູນຂອງອາບັດ

໔. ຮູ້ການລະງັບອາບັດ

໕. ຮູ້ຂໍ້ປະຕິບັດ ອັນໃຫ້ເຖິງການລະງັບອາບັດ

ພຣະວິໄນທອນປະກອບແມ່ນດ້ວຍອົງອື່ນອີກ ໕ ນັບວ່າເປັນຜູ້ໂງ່ຈ້າ ຄື

໑. ບໍ່ຮູ້ອະທິກອນ

໒. ບໍ່ຮູ້ເຫດເກີດອະທິກອນ

໓. ບໍ່ຮູ້ມູນຂອງອະທິກອນ

໔. ບໍ່ຮູ້ການລະງັບອະທິກອນ

໕. ບໍ່ຮູ້ຂໍ້ປະຕິບັດອັນໃຫ້ເຖິງການລະງັບອະທິກອນ

ພຣະວິໄນທອນປະກອບດ້ວຍອົງ ໕ ນັບວ່າເປັນຜູ້ສະຫຼາດ ຄື

໑. ຮູ້ອະທິກອນ

໒. ຮູ້ເຫດເກີດອະທິກອນ

໓. ຮູ້ມູນຂອງອະທິກອນ

໔. ຮູ້ການລະງັບອະທິກອນ

໕. ຮູ້ຂໍ້ປະຕິບັດອັນໃຫ້ເຖິງການລະງັບອະທິກອນ

ພຣະວິໄນທອນປະກອບແມ່ນດ້ວຍອົງອື່ນອີກ ໕ ນັບວ່າເປັນຜູ້ໂງ່ຈ້າ ຄື

໑. ບໍ່ຮູ້ວັດຖຸ

໒. ບໍ່ຮູ້ບັນຍັດ

໓. ບໍ່ຮູ້ເຫດເຄົ້າມູນ

໔. ບໍ່ຮູ້ອະນຸບັນຍັດ

໕. ບໍ່ຮູ້ຄຳເວົ້າແຫ່ງອະນຸສົນທິ

ພຣະວິໄນທອນປະກອບດ້ວຍອົງ ໕ ນັບວ່າເປັນຜູ້ສະຫຼາດ ຄື

໑. ຮູ້ວັດຖຸ

໒. ຮູ້ບັນຍັດ

໓. ຮູ້ເຫດເຄົ້າມູນ

໔. ຮູ້ອະນຸບັນຍັດ

໕. ຮູ້ຄຳເວົ້າແຫ່ງອະນຸສົນທິ

ພຣະວິໄນທອນປະກອບແມ່ນດ້ວຍອົງອື່ນອີກ ໕ ນັບວ່າເປັນຜູ້ໂງ່ຈ້າ ຄື

໑. ບໍ່ຮູ້ຍັດຕິ
໒. ບໍ່ຮູ້ຕັ້ງຍັດຕິ
໓. ບໍ່ສະຫຼາດໃນເບື້ອງຕົ້ນ
໔. ບໍ່ສະຫຼາດໃນເບື້ອງປາຍ
໕. ບໍ່ຮູ້ການ

ພຣະວິໄນທອນປະກອບດ້ວຍອົງ ໕ ນັບວ່າເປັນຜູ້ສະຫຼາດ ຄື

໑. ຮູ້ຍັດຕິ
໒. ຮູ້ຕັ້ງຍັດຕິ
໓. ສະຫຼາດໃນເບື້ອງຕົ້ນ
໔. ສະຫຼາດໃນເບື້ອງປາຍ
໕. ຮູ້ການ

ພຣະວິໄນທອນປະກອບແມ່ນດ້ວຍອົງອື່ນອີກ ໕ ນັບວ່າເປັນຜູ້ໂງ່ຈ້າ ຄື

໑. ບໍ່ຮູ້ອາບັດແລະອະນາບັດ
໒. ບໍ່ຮູ້ອາບັດເບົາແລະອາບັດໜັກ
໓. ບໍ່ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ບໍ່ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ບໍ່ຍຶດຖື ບໍ່ໃສ່ໃຈ ບໍ່ພິຈາຣະນາຄຳເວົ້າທີ່ສືບຕໍ່ຈາກອາຈານໃຫ້ດີ

ພຣະວິໄນທອນປະກອບດ້ວຍອົງ ໕ ນັບວ່າເປັນຜູ້ສະຫຼາດ ຄື

໑. ຮູ້ອາບັດແລະອະນາບັດ
໒. ຮູ້ອາບັດເບົາແລະອາບັດໜັກ
໓. ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ຍຶດຖື ໃສ່ໃຈ ພິຈາຣະນາຄຳເວົ້າທີ່ສືບຕໍ່ຈາກອາຈານດ້ວຍດີ

ພຣະວິໄນທອນປະກອບແມ່ນດ້ວຍອົງອື່ນອີກ ໕ ນັບວ່າເປັນຜູ້ໂງ່ຈ້າ ຄື

໑. ບໍ່ຮູ້ອາບັດແລະອະນາບັດ
໒. ບໍ່ຮູ້ອາບັດເບົາແລະອາບັດໜັກ
໓. ບໍ່ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ບໍ່ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ຈຳປາຕິໂມກທັງ ໒ ໂດຍພິດສະດານບໍ່ດີ ຈຳແນກບໍ່ດີ ບໍ່ວ້ອງໄວ ວິນິດໄສ ໂດຍສຸດຕະ ໂດຍອະນຸພະຍັນຊະນະບໍ່ດີ

ພຣະວິໄນທອນປະກອບດ້ວຍອົງ ໕ ນັບວ່າເປັນຜູ້ສະຫຼາດ ຄື

໑. ຮູ້ອາບັດແລະອະນາບັດ
໒. ຮູ້ອາບັດເບົາແລະອາບັດໜັກ

໓. ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ຈຳປາຕິໂມກທັງ ໒ ໂດຍພິດສະດານໄດ້ດີ ຈຳແນກໄດ້ດີ ວ້ອງໄວດີ ວິນິດໄສໂດຍສຸດຕະ ໂດຍອະນຸພະຍັນຊະນະໄດ້ດີ

ພຣະວິໄນທອນປະກອບແມ່ນດ້ວຍອົງອື່ນອີກ ໕ ນັບວ່າເປັນຜູ້ໂງ່ຈ້າ ຄື
໑. ບໍ່ຮູ້ອາບັດແລະອະນາບັດ
໒. ບໍ່ຮູ້ອາບັດເບົາແລະອາບັດໜັກ
໓. ບໍ່ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ບໍ່ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ບໍ່ສະຫຼາດໃນການວິນິດໄສອະທິກອນ

ພຣະວິໄນທອນປະກອບດ້ວຍອົງ ໕ ນັບວ່າເປັນຜູ້ສະຫຼາດ ຄື
໑. ຮູ້ອາບັດແລະອະນາບັດ
໒. ຮູ້ອາບັດເບົາແລະອາບັດໜັກ
໓. ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ສະຫຼາດໃນການວິນິດໄສອະທິກອນ

## ວ່າດ້ວຍພິກຂຸຢູ່ປ່າ ເປັນຕົ້ນ

ພິກຂຸຜູ້ຖືຢູ່ປ່າມີ ໕ ຈຳພວກ ຄື
໑. ຍ້ອນເປັນຜູ້ໂງ່ຈ້າ ງົມງວາຍ ຈຶ່ງຢູ່ປ່າ
໒. ເປັນຜູ້ປາຖະໜາຊົ່ວຊາມ ຖືກຄວາມຢາກຄອບງຳ ຈຶ່ງຢູ່ປ່າ
໓. ຍ້ອນມົວເມົາ ຈິດຟຸ້ງຊ່ານ ຈຶ່ງຢູ່ປ່າ
໔. ຍ້ອນເຂົ້າໃຈວ່າ ພຣະພຸດທະເຈົ້າ ພຣະສາວົກຂອງພຣະພຸດທະເຈົ້າສັນເສີນຈຶ່ງຢູ່ປ່າ
໕. ຍ້ອນອາໄສຄວາມມັກໜ້ອຍສັນໂດດ ຂັດເກົາ ຄວາມງຽບສະຫງັດ ແລະຍ້ອນອາໄສວ່າການຢູ່ປ່າມີປະໂຫຍດດ້ວຍການປະຕິບັດອັນງາມນີ້ ຈຶ່ງຢູ່ປ່າ

ພິກຂຸຜູ້ຖືທ່ຽວບິນທະບາດມີ ໕ ຈຳພວກ ຯລຯ ພິກຂຸຜູ້ຖືຜ້າບັງສຸກຸນມີ ໕ ຈຳພວກ ຯລຯ ພິກຂຸຜູ້ຖືຢູ່ເຫງົ້າໄມ້ມີ ໕ ຈຳພວກ ຯລຯ ພິກຂຸຜູ້ຖືຢູ່ປ່າຊ້າມີ ໕ ຈຳພວກ ຯລຯ ພິກຂຸຜູ້ຖືຢູ່ກາງແຈ້ງມີ ໕ ຈຳພວກ ຯລຯ ພິກຂຸຜູ້ຖືຜ້າ ໓ ຜືນມີ ໕ ຈຳພວກ ຯລຯ ພິກຂຸຜູ້ຖືທ່ຽວບິນທະ

ບາດຕາມລຳດັບມີ ໕ ຈຳພວກ ຯລຯ ພິກຂຸຜູ້ຖືການນັ່ງມີ ໕ ຈຳພວກ ຯລຯ ພິກຂຸຜູ້ຖືຢູ່ໃນເສນາສະນະຕາມທີ່ຈັດໄວ້ມີ ໕ ຈຳພວກ ຯລຯ ພິກຂຸຜູ້ຖືນັ່ງສັນ ອາສະນະແຫ່ງດຽວມີ ໕ ຈຳພວກ ຯລຯ ພິກຂຸຜູ້ຖືການຫ້າມພັດທີ່ເຂົານຳມາຖວາຍເມື່ອພາຍຫຼັງມີ ໕ ຈຳພວກ ຯລຯ

ພິກຂຸຜູ້ຖືສັນສະເພາະໃນບາດມີ ໕ ຈຳພວກ ຄື

໑. ຍ້ອນເປັນຜູ້ໂງ່ຈ້າ ງົມງວາຍ ຈຶ່ງຖືການສັນສະເພາະໃນບາດ
໒. ເປັນຜູ້ປາຖະໜາຊົ່ວຊາມ ຖືກຄວາມຢາກຄອບງຳ ຈຶ່ງຖືການສັນ ສະເພາະໃນບາດ
໓. ຍ້ອນມົວເມົາ ຈິດຟຸ້ງຊ່ານ ຈຶ່ງຖືການສັນສະເພາະໃນບາດ
໔. ຍ້ອນເຂົ້າໃຈວ່າ ພຣະພຸດທະເຈົ້າ ພຣະສາວົກຂອງພຣະພຸດທະເຈົ້າສັນເສີນ ຈຶ່ງຖືການສັນສະເພາະໃນບາດ
໕. ຍ້ອນອາໄສຄວາມມັກໜ້ອຍສັນໂດດ ຂັດເກົາ ຄວາມງຽບ ສະຫງັດ ແລະ ຍ້ອນອາໄສວ່າການສັນສະເພາະໃນບາດມີປະໂຫຍດດ້ວຍການປະຕິບັດອັນງາມນີ້ ຈຶ່ງຖືການສັນສະເພາະໃນບາດ

## ວ່າດ້ວຍອົງຂອງພິກຂຸຜູ້ຕ້ອງຖືນິໄສ

ພິກຂຸຜູ້ປະກອບດ້ວຍອົງ ໕ ຈະເພິ່ງຢູ່ໂດຍບໍ່ຖືນິໄສບໍ່ໄດ້ ຄື

໑. ບໍ່ຮູ້ອຸໂປສົດ
໒. ບໍ່ຮູ້ອຸໂປສົດກຳ
໓. ບໍ່ຮູ້ປາຕິໂມກ
໔. ບໍ່ຮູ້ປາຕິໂມກຂຸດເທດ
໕. ມີພັນສາຢ່ອນ ໕

ພິກຂຸຜູ້ປະກອບດ້ວຍອົງ ໕ ບໍ່ຖືນິໄສແລ້ວ ຄວນຢູ່ໄດ້ ຄື

໑. ຮູ້ອຸໂປສົດ
໒. ຮູ້ອຸໂປສົດກຳ
໓. ຮູ້ປາຕິໂມກ
໔. ຮູ້ປາຕິໂມກຂຸດເທດ
໕. ມີພັນສາຄົບ ໕ ຫຼືມີພັນສາເກີນ ໕

ພິກຂຸຜູ້ປະກອບແມ່ນດ້ວຍອົງອື່ນອີກ ໕ ບໍ່ຖືນິໄສແລ້ວ ບໍ່ຄວນຢູ່ ຄື

໑. ບໍ່ຮູ້ປະວາຣະນາ
໒. ບໍ່ຮູ້ປະວາຣະນາກຳ
໓. ບໍ່ຮູ້ປາຕິໂມກ
໔. ບໍ່ຮູ້ປາຕິໂມກຂຸດເທດ
໕. ມີພັນສາຢ່ອນ ໕

ພິກຂຸຜູ້ປະກອບດ້ວຍອົງ ໕ ບໍ່ຖືນິໄສແລ້ວ ຄວນຢູ່ໄດ້ ຄື

໑. ຮູ້ປະວາຣະນາ ໒. ຮູ້ປະວາຣະນາກຳ
໓. ຮູ້ປາຕິໂມກ ໔. ຮູ້ປາຕິໂມກຂຸດເທດ
໕. ມີພັນສາຄົບ ໕ ຫຼືມີພັນສາເກີນ ໕

ພິກຂຸຜູ້ປະກອບແມ່ນດ້ວຍອົງອື່ນອີກ ໕ ບໍ່ຖືນິໄສແລ້ວ ບໍ່ຄວນຢູ່ ຄື
໑. ບໍ່ຮູ້ອາບັດແລະອະນາບັດ
໒. ບໍ່ຮູ້ອາບັດເບົາແລະອາບັດໜັກ
໓. ບໍ່ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ບໍ່ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ມີພັນສາຢ່ອນ ໕

ພິກຂຸຜູ້ປະກອບດ້ວຍອົງ ໕ ບໍ່ຖືນິໄສແລ້ວ ຄວນຢູ່ໄດ້ ຄື
໑. ຮູ້ອາບັດແລະອະນາບັດ
໒. ຮູ້ອາບັດເບົາແລະອາບັດໜັກ
໓. ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ມີພັນສາຄົບ ໕ ຫຼືມີພັນສາເກີນ ໕

ພິກຂຸນີປະກອບດ້ວຍອົງ ໕ ບໍ່ຖືນິໄສແລ້ວ ບໍ່ຄວນຢູ່ ຄື
໑. ບໍ່ຮູ້ອຸໂປສົດ ໒. ບໍ່ຮູ້ອຸໂປສົດກຳ
໓. ບໍ່ຮູ້ປາຕິໂມກ ໔. ບໍ່ຮູ້ປາຕິໂມກຂຸດເທດ
໕. ມີພັນສາຢ່ອນ ໕

ພິກຂຸນີປະກອບດ້ວຍອົງ ໕ ບໍ່ຖືນິໄສແລ້ວ ຄວນຢູ່ໄດ້ ຄື
໑. ຮູ້ອຸໂປສົດ ໒. ຮູ້ອຸໂປສົດກຳ
໓. ຮູ້ປາຕິໂມກ ໔. ຮູ້ປາຕິໂມກຂຸດເທດ
໕. ມີພັນສາຄົບ ໕ ຫຼືມີພັນສາເກີນ ໕

ພິກຂຸນີປະກອບແມ່ນດ້ວຍອົງອື່ນອີກ ໕ ບໍ່ຖືນິໄສແລ້ວ ບໍ່ຄວນຢູ່ ຄື
໑. ບໍ່ຮູ້ປະວາຣະນາ ໒. ບໍ່ຮູ້ປະວາຣະນາກຳ
໓. ບໍ່ຮູ້ປາຕິໂມກ ໔. ບໍ່ຮູ້ປາຕິໂມກຂຸດເທດ
໕. ມີພັນສາຢ່ອນ ໕

ພິກຂຸນີປະກອບດ້ວຍອົງ ໕ ບໍ່ຖືນິໄສແລ້ວ ຄວນຢູ່ໄດ້ ຄື

໑. ຮູ້ປະວາຣະນາ
໒. ຮູ້ປະວາຣະນາກຳ
໓. ຮູ້ປາຕິໂມກ
໔. ຮູ້ປາຕິໂມກຂຸດເທດ
໕. ມີພັນສາຄົບ ໕ ຫຼືມີພັນສາເກີນ ໕

ພິກຂຸນີປະກອບແມ່ນດ້ວຍອົງອື່ນອີກ ໕ ບໍ່ຖືນິໄສແລ້ວ ບໍ່ຄວນຢູ່ ຄື
໑. ບໍ່ຮູ້ອາບັດແລະອະນາບັດ
໒. ບໍ່ຮູ້ອາບັດເບົາແລະອາບັດໜັກ
໓. ບໍ່ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ບໍ່ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ມີພັນສາຍ່ອນ ໕

ພິກຂຸນີປະກອບດ້ວຍອົງ ໕ ບໍ່ຖືນິໄສແລ້ວ ຄວນຢູ່ໄດ້ ຄື
໑. ຮູ້ອາບັດແລະອະນາບັດ
໒. ຮູ້ອາບັດເບົາແລະອາບັດໜັກ
໓. ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ມີພັນສາຄົບ ໕ ຫຼືມີພັນສາເກີນ ໕

## ວ່າດ້ວຍໂທດໃນກຳບໍ່ໜ້າເຫຼື້ອມໃສ ເປັນຕົ້ນ

ກຳທີ່ບໍ່ໜ້າເຫຼື້ອມໃສມີໂທດ ໕ ຢ່າງ ຄື
໑. ຕົນເອງກໍຕິຕຽນຕົນ
໒. ຜູ້ຮູ້ທັງຫຼາຍພິຈາຣະນາແລ້ວກໍຕິຕຽນ
໓. ກິດຕິສັບອັນຊົ່ວຍ່ອມຂຈາລືໄປ
໔. ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ກຳທີ່ໜ້າເຫຼື້ອມໃສມີອານິສົງ ໕ ຢ່າງ ຄື
໑. ຕົນເອງກໍບໍ່ຕິຕຽນຕົນ
໒. ຜູ້ຮູ້ທັງຫຼາຍພິຈາຣະນາແລ້ວກໍສັນເສີນ
໓. ກິດຕິສັບອັນດີຍ່ອມຂຈາລືໄປ
໔. ບໍ່ຫຼົງລືມສະຕິຕາຍ
໕. ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນສຸກຄະຕິໂລກສະຫວັນ

ກຳທີ່ບໍ່ໜ້າເຫຼື້ອມໃສມີໂທດແມ່ນອື່ນອີກ ໕ ຢ່າງ ຄື

໑. ຜູ້ທີ່ຍັງບໍ່ເຫຼື້ອມໃສຍ່ອມບໍ່ເຫຼື້ອມໃສ

໒. ລາງພວກທີ່ເຫຼື້ອມໃສແລ້ວກັບປ່ຽນເປັນອື່ນໄປ

໓. ບໍ່ເປັນອັນເຮັດຕາມຄຳສອນພຣະສາດສະດາ

໔. ຊົນລຸ້ນຫຼັງຍ່ອມບໍ່ຍຶດຖືເປັນແບບຢ່າງ

໕. ຈິດຂອງເຂົາບໍ່ເຫຼື້ອມໃສ

ກຳທີ່ໜ້າເຫຼື້ອມໃສມີອານິສົງ ໕ ຢ່າງ ຄື

໑. ຜູ້ທີ່ຍັງບໍ່ເຫຼື້ອມໃສຍ່ອມເຫຼື້ອມໃສ

໒. ຜູ້ທີ່ເຫຼື້ອມໃສແລ້ວຍ່ອມເຫຼື້ອມໃສຍິ່ງຂຶ້ນໄປ

໓. ເປັນອັນເຮັດຕາມຄຳສອນພຣະສາດສະດາ

໔. ຊົນຮຸ່ງຫຼັງ ຍ່ອມຍຶດຖືເປັນແບບຢ່າງ

໕. ຈິດຂອງເຂົາຍ່ອມເຫຼື້ອມໃສ

ພິກຂຸຜູ້ເຂົ້າໄປສູ່ຕະກູນມີໂທດ ໕ ຢ່າງ ຄື

໑. ຕ້ອງອາບັດຍ້ອນທ່ຽວໄປບໍ່ບອກລາ

໒. ຕ້ອງອາບັດຍ້ອນນັ່ງໃນບ່ອນລັບ

໓. ຕ້ອງອາບັດຍ້ອນອາສະນະກຳບັງ

໔. ສະແດງທຳແກ່ມາຕຸຄາມເກີນ ໕-໖ ຄຳຕ້ອງອາບັດ

໕. ເປັນຜູ້ຫຼາຍດ້ວຍຄວາມດຳຣິໃນກາມຢູ່

ພິກຂຸຜູ້ເຂົ້າໄປສູ່ຕະກູນ ຄຸກຄີຢູ່ໃນຕະກູນເກີນເວລາ ມີໂທດ ໕ ຢ່າງ ຄື

໑. ພົບມາຕຸຄາມເປັນປະຈຳ

໒. ເມື່ອມີການພົບກໍມີການກ່ຽວຂ້ອງ

໓. ເມື່ອມີການກ່ຽວຂ້ອງກໍມີຄວາມສະໜິດສະໜົມ

໔. ເມື່ອມີຄວາມສະໜິດສະໜົມກໍມີຈິດກຳໜັດ

໕. ເມື່ອມີຈິດກຳໜັດກໍເປັນອັນຫວັງຂໍ້ນີ້ໄດ້ ຄື ທ່ານຈັກບໍ່ຍິນດີປະພຶດພົມມະຈັນ ຈັກຕ້ອງອາບັດທີ່ເສົ້າໝອງແນວໃດແນວໜຶ່ງ ຫຼືຈັກບອກລາສິກຂາເພື່ອເປັນຄະລິຫັດ

## ວ່າດ້ວຍພືດແລະໝາກໄມ້

ພືດພັນມີ ໕ ຊະນິດ ຄື

໑. ພືດພັນເກີດຈາກເຫງົ້າ
໒. ພືດພັນເກີດຈາກລຳຕົ້ນ
໓. ພືດພັນເກີດຈາກຕາ
໔. ພືດພັນເກີດຈາກຍອດ
໕. ພືດພັນເກີດຈາກເມັດ

ໝາກໄມ້ທີ່ຄວນບໍຣິໂພກດ້ວຍວິທີອັນຄວນແກ່ສະມະນະ ມີ ໕ ຄື

໑. ໝາກໄມ້ທີ່ລົນໄຟ
໒. ໝາກໄມ້ທີ່ຂີດດ້ວຍສັດຕາ
໓. ໝາກໄມ້ທີ່ຈີກດ້ວຍເລັບ
໔. ໝາກໄມ້ທີ່ບໍ່ມີເມັດ
໕. ໝາກໄມ້ທີ່ປລ້ອນເອົາເມັດອອກແລ້ວ

## ວ່າດ້ວຍວິສຸດທິ ໕

## ວິສຸດທິມີ ໕ ຢ່າງ ຄື

໑. ຍົກນິທານຂຶ້ນສະແດງຈົບແລ້ວ ເພິ່ງສູດອຸດເທດທີເຫຼືອດ້ວຍສຸຕະບົດ ນີ້ເປັນວິສຸດທິແບບທີ ໑
໒. ຍົກນິທານຂຶ້ນສະແດງ ຍົກປາຣາຊິກ ໔ ຂຶ້ນສະແດງຈົບແລ້ວເພິ່ງສູດອຸດເທດທີ່ເຫຼືອດ້ວຍສຸຕະບົດ ນີ້ເປັນວິສຸດທິແບບທີ ໒
໓. ຍົກນິທານຂຶ້ນສະແດງ ຍົກປາຣາຊິກ ໔ ຂຶ້ນສະແດງ ຍົກສັງຄາທິເສດ ໑໓ ຂຶ້ນ ສະແດງຈົບແລ້ວເພິ່ງສູດອຸດເທດທີເຫຼືອດ້ວຍສຸຕະບົດ ນີ້ເປັນວິສຸດທິແບບທີ ໓
໔. ຍົກນິທານຂຶ້ນສະແດງ ຍົກປາຣາຊິກ ໔ ຂຶ້ນສະແດງ ຍົກສັງຄາທິເສດ ໑໓ ຂຶ້ນສະແດງ ຍົກອະນິຍະຕະ ໒ ຂຶ້ນສະແດງຈົບແລ້ວ ເພິ່ງສູດອຸດເທດທີເຫຼືອດ້ວຍສຸຕະບົດ ນີ້ເປັນວິສຸດທິແບບທີ ໔
໕. ຍົກຂຶ້ນສະແດງໂດຍພິດສະດານທັງໝົດ ເປັນວິສຸດທິແບບທີ ໕

ວິສຸດທິແມ່ນອື່ນອີກມີ ໕ ແບບ ຄື

໑. ສຸຕະຕຸດເທສະອຸໂປສົດ
໒. ປາຣິສຸດທິອຸໂປສົດ
໓. ອະທິຖານອຸໂປສົດ
໔. ສາມັກຄີອຸໂປສົດ
໕. ປະວາຣະນາ

## ວ່າດ້ວຍອານິສົງການຊົງວິໄນ ເປັນຕົ້ນ

ການຊົງວິໄນມີອານິສົງ ໕ ຢ່າງ ຄື

໑. ເປັນອັນຄຸ້ມຄອງຮັກສາກອງສິນຂອງຕົນໄວ້ດີແລ້ວ

໔. ຜູ້ທີ່ຖືກຄວາມລັງກຽດຄອບງຳຍ່ອມທວນຣະນຶກໄດ້

໓. ກ້າເວົ້າໃນທ່າມກາງສົງ

໔. ຂົ່ມດ້ວຍດີເຊິ່ງຂ້າເສິກໂດຍສະຫະທຳ

໕. ເປັນຜູ້ປະຕິບັດເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ

ການງົດປາຕິໂມກບໍ່ຊອບທຳມີ ໕ ຢ່າງ

ການງົດປາຕິໂມກຊອບທຳມີ ໕ ຢ່າງ

**ປັນຈະກະວາຣະ ຈົບ**

## ຫົວຂໍ້ປະຈຳວາຣະ

ອາບັດ ກອງອາບັດ ວິນິຕະວັດຖຸ ອະນັນຕະຣິຍະກຳ ບຸກຄົນທີ່ແນ່ນອນ
ອາບັດມີການຕັດເປັນວິໄນກຳ ຕ້ອງອາບັດດ້ວຍອາການ ໕
ຕ້ອງອາບັດຍ້ອນມຸສາວາທະເປັນປັດໄຈ ພິກຂຸບໍ່ເຂົ້າກຳ
ພິກຂຸເຂົ້າກຳ ກິດທີ່ຄວນ ພິກຂຸຖືກຣະແວງ ນ້ຳມັນ ມັນແຫຼວ
ຄວາມເສື່ອມ ຄວາມເຖິງພ້ອມ ນິໄສລະງັບ ບຸກຄົນບໍ່ຄວນໃຫ້ອຸປະສົມບົດ
ຜ້າຕົກທີ່ປ່າຊ້າ ຜ້າທີ່ງົວກັດ ການລັກ ໂຈນ

ສິ່ງຂອງບໍ່ຄວນຈ່າຍ ສິ່ງຂອງບໍ່ຄວນແບ່ງ ອາບັດທີ່ເກີດທາງກາຍ
ເກີດທາງກາຍກັບວາຈາ ອາບັດເປັນເທສະນາຄາມີນີ ສົງ
ປາຕິໂມກຂຸດເທດ ປັດຈັນຕະຊົນນະບົດ ອານິສົງກະຖິນ
ກຳ ອາບັດຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ
ປາຣາຊິກ ຖຸນລັດໄຈ ທຸກກົດ ອະກັບປິຍະວັດຖຸ ກັບປິຍະວັດຖຸ
ສິ່ງທີ່ໃຫ້ແລ້ວບໍ່ເປັນບຸນ ສິ່ງທີ່ບັນເທົາໄດ້ຍາກ ການກວາດ
ການກວາດແນວອື່ນອີກ ຄຳເວົ້າ ອາບັດ ອະທິກອນ ວັດຖຸ ຍັດຕິ
ອາບັດແລະອະນາບັດ ປາຕິໂມກທັງ ໔ ອາບັດເບົາ
ຈົ່ງຮູ້ຝ່າຍດຳແລະຝ່າຍຂາວດັ່ງຂ້າງຕົ້ນນີ້

ພິກຂຸຖືຢູ່ປ່າ ຖືທ່ຽວບິນທະບາດ ຖືຜ້າບັງສຸກຸນ
ຖືຢູ່ເຫງົ້າໄມ້ ຖືຢູ່ປ່າຊ້າ ຖືຢູ່ກາງແຈ້ງ ຖືຜ້າ ໓ ຜືນ
ຖືທ່ຽວບິນທະບາດຕາມລຳດັບ ຖືການນັ່ງ
ຖືຢູ່ໃນເສນາສະນະຕາມທີ່ຈັດໄວ້ ຖືນັ່ງສັນອາສະນະແຫ່ງດຽວ
ຖືການຫ້າມພັດທີ່ຖວາຍພາຍຫຼັງ ຖືສັນເຂົ້າສະເພາະໃນບາດ
ອຸໂປສົດ ປະວາຣະນາ ອາບັດແລະອະນາບັດ

ບົດຝ່າຍດຳແລະຝ່າຍຂາວດັ່ງຂ້າງຕົ້ນນີ້ສຳລັບພິກຂຸນີກໍຄືກັນ

ກຳທີ່ບໍ່ໜ້າເຫຼື້ອມໃສ ກຳທີ່ໜ້າເຫຼື້ອມໃສ

ກຳທີ່ບໍ່ໜ້າເຫຼື້ອມໃສແລະໜ້າເຫຼື້ອມໃສອື່ນອີກ ໔ ຢ່າງ

ພິກຂຸເຂົ້າໄປສູ່ສະກຸນຄຸກຄືຢູ່ເກີນເວລາ ພືດພັນ

ໝາກໄມ້ຄວນແກ່ສະມະນະ ວິສຸດທິ ວິສຸດທິແມ່ນອື່ນອີກ

ອານິສົງການຊົງພຣະວິໄນ ການງົດປາຕິໂມກບໍ່ຊອບທຳ

ການງົດປາຕິໂມກຊອບທຳ

**໕ ໝວດລ້ອນທີ່ກ່າວແລ້ວ ຈົບ**

## ໖. ສັກກະວາຣະ
## ວ່າດ້ວຍໝວດ ໖

[໓໔໖] ອະຄາຣະວະມີ ໖ ຄາຣະວະມີ ໖ ວິນິຕະວັດຖຸມີ ໖ ສາມີຈິກຳມີ ໖ ສະມຸດຖານແຫ່ງອາບັດມີ ໖ ອາບັດມີການຕັດເປັນວິໄນກຳມີ ໖ ພິກຂຸຕ້ອງອາບັດດ້ວຍອາການ ໖ ການ ຊົງວິໄນມີອານິສົງ ໖ ສິກຂາບົດທີ່ວ່າດ້ວຍຢ່າງຍິ່ງມີ ໖ ພິກຂຸຢູ່ປາສະຈາກໄຕຣຈີວອນ ໖ ຣາຕີ ຈີວອນມີ ໖ ຊະນິດ ນ້ຳຍ້ອມມີ ໖ ຊະນິດ ອາບັດເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາມີ ໖ ອາບັດເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍມີ ໖ ອາບັດເກີດທາງກາຍວາຈາກັບຈິດມີ ໖ ກຳມີ ໖ ມູນເຫດແຫ່ງຜິດຖຽງມີ ໖ ມູນເຫດແຫ່ງອະນຸວາທະມີ ໖ ສາຣານີຍະທຳມີ ໖ ຜ້າອາບນ້ຳຝົນຍາວ ໖ ຄືບພຣະສຸຄົດ ຈີວອນກວ້າງ ໖ ຄືບພຣະສຸຄົດ ນິໄສລະງັບຈາກພຣະອາຈານມີ ໖ ອະນຸບັນຍັດໃນການອາບນ້ຳມີ ໖ ພິກຂຸຖືເອົາຈີວອນທີ່ເຮັດຄ້າງໄວ້ຫຼືກໄປ ເກັບເອົາຈີວອນທີ່ເຮັດຄ້າງໄວ້ຫຼືກໄປ

## ອົງ ໖ ແຫ່ງພຣະອຸປັດຊາ

ພິກຂຸປະກອບດ້ວຍອົງ ໖ ເພິ່ງໃຫ້ກຸນລະບຸດອຸປະສົມບົດ ເພິ່ງໃຫ້ນິໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ປະກອບດ້ວຍສີນຂັນອັນເປັນອະເສຂະ
໒. ປະກອບດ້ວຍສະມາທິຂັນອັນເປັນອະເສຂະ
໓. ປະກອບດ້ວຍປັນຍາຂັນອັນເປັນອະເສຂະ
໔. ປະກອບດ້ວຍວິມຸດຕິຂັນອັນເປັນອະເສຂະ
໕. ປະກອບດ້ວຍວິມຸດຕິຍານທັດສະນະຂັນ[໑]ອັນເປັນອະເສຂະ[໒]
໖. ມີພັນສາຄົບ ໑໐ ຫຼືມີພັນສາເກີນ ໑໐

ພິກຂຸປະກອບດ້ວຍອົງ ໖ ແມ່ນອີກຢ່າງ ກໍເພິ່ງໃຫ້ກຸນລະບຸດອຸປະສົມບົດ ເພິ່ງໃຫ້ນິໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ຕົນເອງປະກອບດ້ວຍສີນຂັນອັນເປັນອະເສຂະ ແລະຊັກຊວນຜູ້ອື່ນໃນສີນຂັນອັນເປັນອະເສຂະ
໒. ຕົນເອງປະກອບດ້ວຍສະມາທິຂັນອັນເປັນອະເສຂະ ແລະຊັກຊວນຜູ້ອື່ນໃນສະມາທິຂັນອັນເປັນອະເສຂະ
໓. ຕົນເອງປະກອບດ້ວຍປັນຍາຂັນອັນເປັນອະເສຂະ ແລະຊັກຊວນຜູ້ອື່ນໃນປັນຍາຂັນອັນເປັນອະເສຂະ

໔. ຕົນເອງປະກອບດ້ວຍວິມຸດຕິຂັນອັນເປັນອະເສຂະ ແລະຊັກຊວນຜູ້ອື່ນໃນວິມຸດຕິຂັນອັນເປັນອະເສຂະ
໕. ຕົນເອງປະກອບດ້ວຍວິມຸດຕິຍານທັດສະນະຂັນອັນເປັນອະເສຂະ ແລະຊັກຊວນ ຜູ້ອື່ນໃນວິມຸດຕິຍານທັດສະນະຂັນອັນເປັນອະເສຂະ
໖. ເປັນຜູ້ມີພັນສາຄົບ ໑໐ ຫຼືມີພັນສາເກີນ ໑໐

ພິກຂຸປະກອບດ້ວຍອົງ ໖ ແມ່ນອີກຢ່າງ ກໍເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

| | |
|---|---|
| ໑. ເປັນຜູ້ມີສັດທາ | ໒. ເປັນຜູ້ມີຫິຣິ |
| ໓. ເປັນຜູ້ມີໂອດຕັບປະ | ໔. ເປັນຜູ້ຜາຣົບຄວາມພຽນ |
| ໕. ເປັນຜູ້ມີສະຕິຕັ້ງໝັ້ນ | ໖. ເປັນຜູ້ມີພັນສາຄົບ ໑໐ ຫຼືມີພັນສາເກີນ ໑໐ |

ພິກຂຸປະກອບດ້ວຍອົງ ໖ ແມ່ນອື່ນອີກ ກໍເພິ່ງໃຫ້ກຸນລະບຸດອຸປະສົມບົດ ເພິ່ງໃຫ້ນິໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ເປັນຜູ້ບໍ່ມີສີນວິບັດໃນອະທິສີນ
໒. ເປັນຜູ້ບໍ່ມີອາຈາຣະວິບັດໃນອັດຊາຈານ
໓. ເປັນຜູ້ບໍ່ມີທິດຖິວິບັດໃນອະຕິທິດຖິ
໔. ເປັນພະຫູສູດ
໕. ເປັນຜູ້ມີປັນຍາ
໖. ເປັນຜູ້ມີພັນສາຄົບ ໑໐ ຫຼືມີພັນສາເກີນ ໑໐

ພິກຂຸປະກອບດ້ວຍອົງ ໖ ແມ່ນອື່ນອີກ ກໍເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ສາມາດປິ່ນປົວເອງຫຼືໃຊ້ໃຫ້ຜູ້ອື່ນປິ່ນປົວອັນເຕວາສິກຫຼືສັດທິວິຫາຣິກຜູ້ເປັນໄຂ້
໒. ສາມາດລະງັບເອງຫຼືໃຊ້ໃຫ້ຜູ້ອື່ນຊ່ອຍລະງັບຄວາມກະສັນ
໓. ສາມາດບັນເທົາເອງຫຼືໃຊ້ໃຫ້ຜູ້ອື່ນຊ່ອຍບັນເທົາຄວາມເບື່ອໜ່າຍທີ່ເກີດຂຶ້ນໂດຍທຳ
໔. ຮູ້ຈັກອາບັດ
໕. ຮູ້ຈັກວິທີອອກຈາກອາບັດ
໖. ມີພັນສາຄົບ ໑໐ ຫຼືມີພັນສາເກີນ ໑໐

ພິກຂຸປະກອບດ້ວຍອົງ ໖ ແມ່ນອື່ນອີກ ກໍເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ສາມາດເຝິກຝົນອັນເຕວາສິກຫຼືສັດທິວິຫາຣິກໃນອະພິສະມາຈາຣິກາສິກຂາ
໒. ສາມາດແນະນຳໃນອາທິພົມມະຈາຣິກາສິກຂາ
໓. ສາມາດແນະນຳໃນອະພິທຳ
໔. ສາມາດແນະນຳໃນອະພິວິໄນ
໕. ສາມາດປົດຄວາມເຫັນຜິດອັນເກີດຂຶ້ນໂດຍທຳ
໖. ມີພັນສາຄົບ ໑໐ ຫຼືມີພັນສາເກີນ ໑໐

ພິກຂຸປະກອບດ້ວຍອົງ ໖ ແມ່ນອື່ນອີກ ກໍເພິ່ງໃຫ້ກຸນລະບຸດອຸປະສົມບົດ ເພິ່ງໃຫ້ນິໄສ ເພິ່ງໃຊ້ສາມະເນນອຸປັດຖາກ ຄື

໑. ຮູ້ອາບັດ
໒. ຮູ້ອະນາບັດ
໓. ຮູ້ອາບັດເບົາ
໔. ຮູ້ອາບັດໜັກ
໕. ຈຳປາຕິໂມກທັງ ໒ ໂດຍພິດສະດານໄດ້ດີ ຈຳແນກໄດ້ດີ ວ້ອງໄວດີ ວິນິດໄສໂດຍສຸດຕະ ໂດຍອະນຸພະຍັນຊະນະໄດ້ດີ
໖. ເປັນຜູ້ມີພັນສາຄົບ ໑໐ ຫຼື ມີພັນສາເກີນ ໑໐

## ວ່າດ້ວຍການງົດປາຕິໂມກ

ການງົດພຣະປາຕິໂມກບໍ່ຊອບທຳມີ ໖ ຢ່າງ ການງົດພຣະປາຕິໂມກຊອບທຳມີ ໖ ຢ່າງ

**ສັກກະວາຣະ ຈົບ**

## ຫົວຂໍ້ປະຈຳວາຣະ

ອະຄາຣະວະ ຄາຣະວະ ວິນິຕະວັດຖຸ ສາມີຈິກຳ ສະມຸດຖານແຫ່ງອາບັດ
ອາບັດມີການຕັດເປັນວິໄນກຳ ອາການທີ່ຕ້ອງອາບັດ
ອານິສົງການຊົງວິໄນ ສິກຂາບົດທີ່ວ່າດ້ວຍຢ່າງຍິ່ງ
ພິກຂຸຢູ່ປາສະຈາກໄຕຣຈີວອນ ໖ ຣາຕີ ຈີວອນ ນ້ຳຍ້ອມ
ອາບັດເກີດທາງກາຍກັບຈິດ ທາງວາຈາກັບຈິດ ທາງກາຍວາຈາກັບຈິດ
ກຳ ມູນເຫດແຫ່ງຜິດຖຽງ ມູນເຫດແຫ່ງການໂຈດ ຜ້າອາບນ້ຳຝົນຍາວ ຈີວອນກວ້າງ

ນິໄສລະງັບ ອະນຸບັນຍັດໃນການອາບນ້ຳ ຖືເອົາຈີວອນທີ່ເຮັດຄ້າງຫຼີກໄປ
ເກັບເອົາຈີວອນທີ່ເຮັດຄ້າງຫຼີກໄປ ປະກອບດ້ວຍສີນຂັນເປັນອະເສຂະ
ຊັກຊວນຜູ້ອື່ນໃຫ້ສະມາທານໃນສີນຂັນເປັນອະເສຂະ ມີສັດທາ
ຜູ້ມີສີນວິບັດໃນອະທິສີນ ພິກຂຸຜູ້ສາມາດປິ່ນປົວ ເຝິກຝົນໃນອະພິສະມາຈານ
ຮູ້ອາບັດ ການງົດປາຕິໂມກບໍ່ຊອບທຳ ການງົດປາຕິໂມກຊອບທຳ

## ໗. ສັດຕະກະວາຣະ

## ວ່າດ້ວຍໝວດ ໗

[໓໔໗] ອາບັດມີ ໗ ກອງອາບັດມີ ໗ ວິນີຕະວັດຖຸມີ ໗ ສາມີຈິກຳມີ ໗ ເຮັດຕາມປະຕິຍານບໍ່ຊອບທຳມີ ໗ ເຮັດຕາມປະຕິຍານຊອບທຳມີ ໗ ບຸກຄົນ ໗ ຈຳພວກ ພິກຂຸໄປດ້ວຍສັດຕາທະກະຣະນີຍະບໍ່ຕ້ອງອາບັດ ຊົງວິໄນມີອານີສົງ ໗ ສິກຂາບົດທີ່ວ່າດ້ວຍຢ່າງຍິ່ງມີ ໗ ຍ້ອນອາຣຸນຂຶ້ນໄປສິ່ງຂອງເປັນນິດສັກຄີມີ ໗ ສະມະຖະມີ ໗ ກຳມີ ໗ ເຂົ້າເບືອກດິບມີ ໗ ສ້າງກຸດຕິດ້ານກວ້າງພາຍໃນ ໗ ຄືບ ຄະນະໂພຊະນະມີອະນຸບັນຍັດ ໗ ພິກຂຸຮັບປະເຄນເພສັດແລ້ວເກັບໄວ້ສັນໄດ້ ໗ ມື້ເປັນຢ່າງຍິ່ງ ພິກຂຸຖືເອົາຈີວອນທີ່ເຮັດສຳເລັດແລ້ວຫຼີບໜີໄປ ມ້ຽນຈີວອນທີ່ເຮັດສຳເລັດແລ້ວຫຼີບໜີໄປ ພິກຂຸບໍ່ເຫັນອາບັດ ພິກຂຸເຫັນອາບັດ ພິກຂຸເຮັດຄືນອາບັດ ການງົດປາຕິໂມກບໍ່ຊອບທຳມີ ໗ ການງົດປາຕິໂມກຊອບທຳມີ ໗

## ວ່າດ້ວຍອົງຂອງພຣະວິໄນທອນ

## ພິກຂຸປະກອບດ້ວຍອົງ ໗ ເປັນພຣະວິໄນທອນໄດ້ ຄື

໑. ຮູ້ອາບັດ
໒. ຮູ້ອະນາບັດ
໓. ຮູ້ອາບັດເບົາ
໔. ຮູ້ອາບັດໜັກ
໕. ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນ ສິກຂາບົດທັງຫຼາຍ
໖. ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໗. ເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະ ສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸປະກອບດ້ວຍອົງ ໗ ແມ່ນອື່ນອີກ ເປັນພຣະວິໄນທອນໄດ້ ຄື

໑. ຮູ້ອາບັດ

໒. ຮູ້ອະນາບັດ

໓. ຮູ້ອາບັດເບົາ

໔. ຮູ້ອາບັດໜັກ

໕. ເປັນພະຫູສູດ ຊົງສຸຕະ ມີການສັ່ງສົມສຸຕະ ທ່ານໄດ້ສະດັບຫຼາຍ ຊົງຈຳໄດ້ແມ່ນຍຳ ຄ່ອງປາກ ຂຶ້ນໃຈ ຮູ້ແຈ້ງດ້ວຍປັນຍາເຊິ່ງທຳງາມໃນເບື້ອງຕົ້ນ ງາມໃນທ່າມກາງ ງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະພ້ອມທັງພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ

໖. ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໗. ເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸປະກອບດ້ວຍອົງ ໗ ແມ່ນອື່ນອີກ ເປັນພຣະວິໄນທອນໄດ້ ຄື

໑. ຮູ້ອາບັດ

໒. ຮູ້ອະນາບັດ

໓. ຮູ້ອາບັດເບົາ

໔. ຮູ້ອາບັດໜັກ

໕. ຈຳປາຕິໂມກທັງ ໒ ໂດຍພິດສະດານໄດ້ດີ ຈຳແນກໄດ້ດີ ວ້ອງໄວດີ ວິນິດໄສໂດຍສຸດຕະ ໂດຍອະນຸພະຍັນຊະນະໄດ້ດີ

໖. ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໗. ເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸປະກອບດ້ວຍອົງ ໗ ແມ່ນອື່ນອີກ ເປັນພຣະວິໄນທອນໄດ້ ຄື

໑. ຮູ້ອາບັດ

໒. ຮູ້ອະນາບັດ

໓. ຮູ້ອາບັດເບົາ

໔. ຮູ້ອາບັດໜັກ

໕. ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບແດ່ ຕະຫຼອດວິວັດຕະກັບແດ່ ຕະຫຼອດສັງວັດຕະກັບວິວັດຕະກັບແດ່ ຫຼາຍກັບແດ່ ວ່າໃນພົບນັ້ນເຮົາມີຊື່ແນວນັ້ນ ມີຕະກູນແນວນີ້ ມີວັນນະແນວນັ້ນ ໆ ມີອາຫານ ສະເຫວີຍສຸກທຸກ ມີກຳນົດອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນໄປເກີດໃນພົບນັ້ນ ມີຊື່ ມີໂຄດ ມີຜິວ ມີອາຫານ ສະເຫວີຍສຸກທຸກ ມີກຳນົດອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນມາເກີດໃນພົບນີ້ ຍ່ອມຣະນຶກເຖິງຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະແລະຊີວະປະຫວັດດ້ວຍປະການດັ່ງນີ້

໖. ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງອຸບັດ ທັງຊັ້ນຕ່ຳທັງຊັ້ນສູງ ງາມແລະບໍ່ງາມ ເກີດດີແລະບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຍ່ອມຮູ້ແຈ້ງເຊິ່ງໝູ່ສັດຜູ້ເປັນໄປຕາມກຳວ່າ ສັດທີ່ປະກອບດ້ວຍກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ສັດເຫຼົ່ານັ້ນຫຼັງຈາກຕາຍແລ້ວໄປ ບັງເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບດ້ວຍ ກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຊອບ ຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ສັດເຫຼົ່ານັ້ນຫຼັງຈາກຕາຍແລ້ວໄປບັງເກີດໃນສຸກຄະຕິໂລກສະຫວັນ ຍ່ອມເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງອຸບັດ ທັງຊັ້ນຕ່ຳທັງຊັ້ນສູງ ງາມແລະບໍ່ງາມ ເກີດດີແລະບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຍ່ອມຮູ້ແຈ້ງເຊິ່ງໝູ່ສັດຜູ້ເປັນໄປຕາມກຳດ້ວຍປະການດັ່ງນີ້

໗. ເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະ ສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພຣະວິໄນທອນປະກອບດ້ວຍອົງ ໗ ຍ່ອມງາມ ຄື

໑. ຮູ້ອາບັດ

໒. ຮູ້ອະນາບັດ

໓. ຮູ້ອາບັດເບົາ

໔. ຮູ້ອາບັດໜັກ

໕. ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

໖. ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມ ຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ
໗. ເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະ ວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພຣະວິໄນທອນປະກອບດ້ວຍອົງ ໗ ແມ່ນອື່ນອີກ ຍ່ອມງາມ ຄື

໑. ຮູ້ອາບັດ
໒. ຮູ້ອະນາບັດ
໓. ຮູ້ອາບັດເບົາ
໔. ຮູ້ອາບັດໜັກ
໕. ເປັນພະຫູສູດ ຯລຯ ບໍລິສຸດບໍລິບູນຄົບຖ້ວນ
໖. ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມ ຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ
໗. ເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະ ວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພຣະວິໄນທອນປະກອບດ້ວຍອົງ ໗ ແມ່ນອື່ນອີກ ຍ່ອມງາມ ຄື

໑. ຮູ້ອາບັດ
໒. ຮູ້ອະນາບັດ
໓. ຮູ້ອາບັດເບົາ
໔. ຮູ້ອາບັດໜັກ
໕. ຈຳປາຕິໂມກທັງ ໒ ໂດຍພິດສະດານໄດ້ດີ ຈຳແນກໄດ້ດີ ວ້ອງໄວດີ ວິນິດ ໄສໂດຍສຸດຕະ ໂດຍອະນຸພະຍັນຊະນະໄດ້ດີ
໖. ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມ ຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ
໗. ເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະ ວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ພຣະວິໄນທອນປະກອບດ້ວຍອົງ ໗ ແມ່ນອື່ນອີກ ຍ່ອມງາມ ຄື

໑. ຮູ້ອາບັດ
໒. ຮູ້ອະນາບັດ
໓. ຮູ້ອາບັດເບົາ
໔. ຮູ້ອາບັດໜັກ

໕. ຣະນຶກຊາດກ່ອນໄດ້ຫຼາຍຊາດ ໆລໆ ຍ່ອມເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງອຸບັດທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະບໍ່ດີດ້ວຍຕາທິບ ອັນບໍລິສຸດເໜືອມະນຸດ ຍ່ອມຮູ້ແຈ້ງເຊິ່ງໝູ່ສັດຜູ້ເປັນໄປຕາມກຳ ໆລໆ

໗. ເຮັດໃຫ້ແຈ້ງເຊິ່ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະ ຍ້ອນອາສະວະ ສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

## ວ່າດ້ວຍອະສັດທຳແລະສັດທຳ

## ອະສັດທຳມີ ໗ ປະການ ຄື

໑. ບໍ່ມີສັດທາ

໒. ບໍ່ມີຫິຣິ(ຄວາມລະອາຍບາບ)

໓. ບໍ່ມີໂອດຕັບປະ

໔. ໄດ້ຍິນໄດ້ຟັງມາໜ້ອຍ

(ຄວາມເກງກົວບາບ)

໕. ຂີ້ຄ້ານ

໖. ຫຼົງລືມສະຕິ

໗. ມີປັນຍາຈ້ຳ

## ສັດທຳມີ ໗ ປະການ ຄື

໑. ມີສັດທາ

໒. ມີຫິຣິ

໓. ມີໂອດຕັບປະ

໔. ເປັນພະຫູສູດ(ໄດ້ຍິນໄດ້ຟັງມາຫຼາຍ)

໕. ຜາຣົບຄວາມພຽນ

໖. ມີສະຕິຕັ້ງໝັ້ນ

໗. ມີປັນຍາ

**ສັດຕະກະວາຣະ ຈົບ**

## ຫົວຂໍ້ປະຈຳວາຣະ

ອາບັດ ກອງອາບັດ ວິນີຕະວັດຖຸ ສາມີຈິກຳ
ເຮັດຕາມປະຕິຍານບໍ່ຊອບທຳ ເຮັດຕາມປະຕິຍານຊອບທຳ
ໄປດ້ວຍສັດຕາຫະກະຣະນີຍະບໍ່ຕ້ອງອາບັດ ອານິສົງການຊົງວິໄນ
ສິກຂາບົດທີ່ວ່າດ້ວຍຢ່າງຍິ່ງ ອາຣຸນຂຶ້ນ ສິ່ງຂອງເປັນນິດສັກຄີ
ສະມະຖະ ກຳ ເຂົ້າເປືອກດິບ ສ້າງກຸດຕິດ້ານກວ້າງ
ຄະນະໂພຊະນະ ເກັບເພສັດໄວ້ໄດ້ເຈັດມື້ເປັນຢ່າງຍິ່ງ
ພິກຂຸຖືເອົາຈີວອນໄປ ມ້ຽນຈີວອນແລ້ວຫຼີກໄປ
ພິກຂຸບໍ່ເຫັນອາບັດ ເຫັນອາບັດ ເຮັດຄືນອາບັດ ການງົດປາຕິໂມກ
ບໍ່ຊອບທຳ ການງົດປາຕິໂມກຊອບທຳ ອົງຂອງວິໄນທອນ ໕ ໝວດ
ພຣະວິໄນທອນງາມ ໕ ໝວດ ອະສັດທຳ ໗ ຢ່າງ
ສັດທຳ ໗ ຢ່າງ ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວແລ

## ໙. ອັດຖະກະວາຣະ
## ວ່າດ້ວຍໝວດ ໙

[໓໘໙] ພິກຂຸເມື່ອພິຈາລະນາເຫັນອານິສົງ ໙ ບໍ່ເພິ່ງລົງອຸກເຂປະນີຍະກຳພິກຂຸນັ້ນຍ້ອນບໍ່ເຫັນວ່າເປັນອາບັດ ພິກຂຸເມື່ອພິຈາລະນາເຫັນອານິສົງ ໙ ເພິ່ງສະແດງອາບັດນັ້ນຍ້ອນເຊື່ອຜູ້ອື່ນ ອາບັດສັງຄາທິເສດ ເປັນຍາວະຕະຕິຍະກະມີ ໙ ປະຈົບຕະກູນດ້ວຍອາການ ໙ ຈີວອນເກີດຂຶ້ນມີມາຕິກາ ໙ ກະຖິນເດາະມີມາຕິກາ ໙ ນ້ຳປານະມີ ໙ ຊະນິດ ພຣະເທວະທັດມີຈິດຖືກອະສັດທຳ ໙ ຢ່າງຄອບງຳຍ່ຳຍີ ຈຶ່ງໄປເກີດໃນອະບາຍ ຕົກນະຮົກຊົ່ວກັບ ແກ້ໄຂບໍ່ໄດ້ ໂລກກະທຳມີ ໙ ຄະຣຸທຳມີ ໙ ອາບັດປະຕິເທສະນີຍະມີ ໙ ມຸສາວາທະມີ ໙ ອົງອຸໂປສົດມີ ໙ ອົງແຫ່ງທູດມີ ໙ ຂໍ້ວັດປະຕິບັດແຫ່ງເດຍຣະຖີມີ ໙ ອັດສະຣິຍະອັບພູຕະທຳໃນມະຫາສະມຸດມີ ໙ ອັດສະຣິຍະອັບພູຕະທຳໃນພຣະທຳວິໄນນີ້ມີ ໙ ພັດຕາຫານທີ່ບໍ່ເປັນເງື່ອນມີ ໙ ພັດຕາຫານທີ່ເປັນເງື່ອນມີ ໙ ເພສັດເປັນນິດສັກຄີເມື່ອອາລຸນມີ ໙ ປາຣາຊິກມີ ໙ ພິກຂຸນິເຮັດວັດຖຸຄົບທັງ ໙ ສົງເພິ່ງໃຫ້ນາສະນະສາ ພິກຂຸນິເຮັດວັດຖຸຄົບທັງ ໙ ແມ່ນສະແດງອາບັດແລ້ວກໍບໍ່ເປັນອັນສະແດງອຸປະສົມບົດມີວາຈາ ໙ ເພິ່ງລຸກຮັບພິກຂຸນີ ໙ ຈຳພວກ ເພິ່ງໃຫ້ອາສະນະແກ່ພິກຂຸນີ ໙ ຈຳພວກອຸປາສິກາຂໍພອນ ໙ ພິກຂຸປະກອບດ້ວຍອົງ ໙ ສົງເພິ່ງສົມມຸດໃຫ້ເປັນຜູ້ສອນພິກຂຸນີ ການຊົງວິໄນມີອານິສົງ ໙ ສິກຂາບົດທີ່ວ່າດ້ວຍຢ່າງຍິ່ງມີ ໙ ພິກຂຸຜູ້ຖືກລົງຕັດສະປາປີຍະສິກາກຳ ເພິ່ງປະພຶດຖືກໃນທຳ ໙ ປະການ ການງົດປາຕິໂມກບໍ່ຊອບທຳມີ ໙ ການງົດປາຕິໂມກຊອບທຳມີ ໙

**ອັດຖະກະວາຣະ ຈົບ**

## ຫົວຂໍ້ປະຈຳວາຣະ

ເມື່ອເຫັນອານິສົງບໍ່ລົງອຸກເຂປະນີຍະກຳພິກຂຸນັ້ນ
ເພິ່ງສະແດງອາບັດຍ້ອນເຊື່ອຜູ້ອື່ນ ອາບັດສັງຄາທິເສດເປັນຍາວະຕະຕິຍະກະ
ການປະຈົບຕະກູນ ມາຕິກາ ກະຖິນເດາະ ນ້ຳປານະ ອະສັດທຳຄອບງຳ
ໂລກກະທຳ ຄະຣຸທຳ ອາບັດປະຕິເທສະນີຍະ ມຸສາວາທະ ອຸໂປສົດ ອົງແຫ່ງທູດ
ຂໍ້ວັດປະຕິບັດແຫ່ງເດຍຣະຖີ ມະຫາສະມຸດ ອັບພູຕະທຳໃນພຣະທຳວິໄນ
ພັດຕາຫານບໍ່ເປັນເງື່ອນ ພັດຕາຫານເປັນເງື່ອນ ເພສັດເປັນນິດສັກຄີ
ປາຣາຊິກ ພິກຂຸນີເຮັດວັດຖຸຄົບທັງ ໘ ສະແດງອາບັດແລ້ວບໍ່ເປັນອັນສະແດງ
ອຸປະສົມບົດ ລຸກຮັບ ໃຫ້ອາສະນະ ພອນ ສົມມຸດໃຫ້ເປັນຜູ້ສອນ
ອານິສົງການຊົງວິໄນ ສິກຂາບົດທີ່ວ່າດ້ວຍຢ່າງຍິ່ງ
ປະພຶດຖືກໃນທຳ ໘ ການງົດປາຕິໂມກບໍ່ຊອບທຳ
ການງົດປາຕິໂມກຊອບທຳ
ໝວດ ໘ ພຣະຜູ້ມີພຣະພາກເຈົ້າເຈົ້າຊົງປະກາດໄວ້ດີແລ້ວ

## ໙. ນະວະກະວາຣະ

## ວ່າດ້ວຍໝວດ ໙

[໓໔໙] ອາຄາຕະວັດຖຸມີ ໙ ອຸບາຍກຳຈັດອາຄາຕະວັດຖຸມີ ໙ ວິນີຕະວັດຖຸມີ ໙ ອາບັດສັງຄາທິເສດເປັນປະຖະມາປັດຕິກະມີ ໙ ສົງແຕກກັນຍ້ອນພິກຂຸ ໙ ອົງ ໂພຊະນະອັນປະນີດມີ ໙ ເປັນທຸກກົດຍ້ອນມັງສະ ໙ ຊະນິດ ປາຕິໂມກຂຸດເທດມີ ໙ ສິກຂາບົດວ່າດ້ວຍຢ່າງຍິ່ງມີ ໙ ທຳມີຕັນຫາເປັນມູນມີ ໙ ມານະມີ ໙ ຈີວອນທີ່ຄວນອະທິຖານມີ ໙ ຈີວອນທີ່ບໍ່ຄວນວິກັບມີ ໙ ຈີວອນຂະ ໜາດພຣະສຸຄົດຍາວ ໙ ຄືບ ການໃຫ້ບໍ່ຊອບທຳມີ ໙ ການຮັບບໍ່ຊອບທຳມີ ໙ ການບໍຣິໂພກບໍ່ຊອບທຳມີ ໙ ການໃຫ້ທີ່ຊອບທຳມີ ໙ ການຮັບທີ່ຊອບທຳມີ ໙ ການບໍຣິໂພກທີ່ຊອບທຳມີ ໙ ຂໍ້ຕົກລົງທີ່ບໍ່ຖືກຕ້ອງຕາມທຳມີ ໙ ຂໍ້ຕົກລົງທີ່ຊອບທຳ ມີ ໙ ຫຼັກທຳໝວດ ໙ ໃນກຳທີ່ບໍ່ຖືກຕ້ອງຕາມທຳມີ ໔ ໝວດ ຫຼັກທຳໝວດ ໙ ໃນກຳທີ່ຊອບທຳມີ ໔ ໝວດ ການງົດປາຕິໂມກບໍ່ຊອບທຳມີ ໙ ການງົດປາຕິໂມກຊອບທຳມີ ໙

**ນະວະກະວາຣະ ຈົບ**

## ຫົວຂໍ້ປະຈຳວາຣະ

ອາຄາຕະວັດຖຸ ອຸບາຍກຳຈັດ ວິນິຕະວັດຖຸ ອາບັດເປັນປະຖະມາປັດຕິກະ
ສິ່ງແຕກກັນ ໂພຊະນະອັນປະນີດ ມັງສະ ອຸດເທດ
ສິກຂາບົດທີ່ວ່າດ້ວຍຢ່າງຍິ່ງ ຕັນຫາ ມານະ ອະທິຖານ ວິກັບ

ຈີວອນຂະໜາດພຣະສຸຄົດ ການໃຫ້ບໍ່ຊອບທຳ ການຮັບບໍ່ຊອບທຳ
ການບໍຣິໂພກບໍ່ຊອບທຳ ການໃຫ້ຮັບແລະບໍຣິໂພກທີ່ຊອບທຳແນວລະ ໓

ຂໍ້ຕົກລົງທີ່ບໍ່ຖືກຕ້ອງຕາມທຳ ຂໍ້ຕົກລົງທີ່ຊອບທຳ ໓
ທຳ ໗ ໝວດ ກຳທີ່ບໍ່ຖືກຕ້ອງຕາມທຳ ໔ ໝວດ
ການງົດປາຕິໂມກບໍ່ຊອບທຳ ການງົດປາຕິໂມກຊອບທຳ

### ໑໐. ທະສະກະວາຣະ

## ວ່າດ້ວຍໝວດ ໑໐

[໓໓໐] ອາຄາຕະວັດຖຸມີ ໑໐ ອຸບາຍກຳຈັດອາຄາຕະວັດຖຸມີ ໑໐ ວິນິຕະວັດຖຸມີ ໑໐ ມິດສາທິດຖິມີວັດຖຸ ໑໐ ສຳມາທິດຖິມີວັດຖຸ ໑໐ ອັນຕະຄາຫິກະທິດຖິມີ ໑໐ ມິດສັດຕະມີ ໑໐ ສຳມັດຕະມີ ໑໐ ອະກຸສົນກຳມະບົດມີ ໑໐ ກຸສົນກຳມະບົດມີ ໑໐ ຈັບສະຫຼາກບໍ່ຊອບທຳມີ ໑໐ ຈັບສະຫຼາກຊອບທຳມີ ໑໐ ສິກຂາບົດສຳລັບສາມະເນນມີ ໑໐ ສາມະເນນປະກອບດ້ວງອົງ ໑໐ ເພິ່ງໃຫ້ນາສະນະ

## ວ່າດ້ວຍອົງຂອງພຣະວິໄນທອນ

ພຣະວິໄນທອນປະກອບດ້ວຍອົງ ໑໐ ນັບວ່າເປັນຜູ້ໂງ່ຈ້າ ຄື

໑. ບໍ່ກຳນົດບ່ອນສຸດຄຳເວົ້າຂອງຕົນ ໔. ບໍ່ກຳນົດບ່ອນສຸດຄຳເວົ້າຂອງຜູ້ອື່ນ
໓. ບໍ່ກຳນົດບ່ອນສຸດຄຳເວົ້າຂອງຕົນ ໔. ປັບອາບັດໂດຍບໍ່ຊອບທຳ

ທັງບໍ່ກຳນົດບ່ອນສຸດຄຳເວົ້າຂອງຜູ້ອື່ນແລ້ວປັບອາບັດ

໕. ປັບອາບັດບໍ່ຕາມປະຕິຍານ ໖. ບໍ່ຮູ້ອາບັດ
໗. ບໍ່ຮູ້ມູນຂອງອາບັດ ໘. ບໍ່ຮູ້ເຫດເກີດອາບັດ
໗. ບໍ່ຮູ້ການລະງັບອາບັດ
໑໐. ບໍ່ຮູ້ຂໍ້ປະຕິບັດອັນໃຫ້ເຖິງການລະງັບ ອາບັດ

ພຣະວິໄນທອນປະກອບດ້ວຍອົງ ໑໐ ນັບວ່າເປັນຜູ້ສະຫຼາດ ຄື

໑. ກໍານົດບ່ອນສຸດຄໍາເວົ້າຂອງຕົນ ໔. ກໍານົດບ່ອນສຸດຄໍາເວົ້າຂອງຜູ້ອື່ນ

໖. ກໍານົດບ່ອນສຸດຄໍາເວົ້າຂອງຕົນ ໔. ປັບອາບັດຕາມທໍາ

ທັງກໍານົດບ່ອນສຸດຄໍາເວົ້າຂອງຜູ້ອື່ນ ແລ້ວປັບອາບັດ

໕. ປັບອາບັດຕາມປະຕິຍານ ໖. ຮູ້ອາບັດ

໗. ຮູ້ມູນຂອງອາບັດ ໘. ຮູ້ເຫດເກີດອາບັດ

໙. ຮູ້ການລະງັບອາບັດ

໑໐. ຮູ້ຂໍ້ປະຕິບັດອັນໃຫ້ເຖິງການລະງັບອາບັດ

ພຣະວິໄນທອນປະກອບດ້ວຍອົງ ໑໐ ແມ່ນອີກຢ່າງ ກໍນັບວ່າເປັນຜູ້ໂງ່ຈ້າ ຄື

໑. ບໍ່ຮູ້ອະທິກອນ ໔. ບໍ່ຮູ້ມູນຂອງອະທິກອນ

໖. ບໍ່ຮູ້ເຫດເກີດອະທິກອນ ໔. ບໍ່ຮູ້ການລະງັບອະທິກອນ

໕. ບໍ່ຮູ້ຂໍ້ປະຕິບັດອັນໃຫ້ເຖິງ ໖. ບໍ່ຮູ້ວັດຖຸ ການລະງັບອະທິກອນ

໗. ບໍ່ຮູ້ເຫດເຄົ້າມູນ ໘. ບໍ່ຮູ້ບັນຍັດ

໙. ບໍ່ຮູ້ອະນຸບັນຍັດ ໑໐. ບໍ່ຮູ້ຄໍາເວົ້າແຫ່ງອະນຸສົນທິ

ພຣະວິໄນທອນປະກອບດ້ວຍອົງ ໑໐ ນັບວ່າເປັນຜູ້ສະຫຼາດ ຄື

໑. ຮູ້ອະທິກອນ ໔. ຮູ້ມູນຂອງອະທິກອນ

໖. ຮູ້ເຫດເກີດອະທິກອນ ໔. ຮູ້ການລະງັບອະທິກອນ

໕. ຮູ້ຂໍ້ປະຕິບັດອັນໃຫ້ເຖິງ ໖. ຮູ້ວັດຖຸ ການລະງັບອະທິກອນ

໗. ຮູ້ເຫດເຄົ້າມູນ ໘. ຮູ້ບັນຍັດ

໙. ຮູ້ອະນຸບັນຍັດ ໑໐. ຮູ້ຄໍາເວົ້າແຫ່ງອະນຸສົນທິ

ພຣະວິໄນທອນປະກອບດ້ວຍອົງ ໑໐ ກໍນັບວ່າເປັນຜູ້ໂງ່ຈ້າ ຄື

໑. ບໍ່ຮູ້ຍັດຕິ ໔. ບໍ່ຮູ້ການຕັ້ງຍັດຕິ

໖. ບໍ່ສະຫຼາດໃນເບື້ອງຕົ້ນ ໔. ບໍ່ສະຫຼາດໃນເບື້ອງປາຍ

໕. ບໍ່ຮູ້ການ

໖. ບໍ່ຮູ້ອາບັດແລະອະນາບັດ

໗. ບໍ່ຮູ້ອາບັດເບົາແລະອາບັດໜັກ

໘. ບໍ່ຮູ້ອາບັດມີສ່ວນເຫຼືອແລະອາບັດ ບໍ່ມີສ່ວນເຫຼືອ

໙. ບໍ່ຮູ້ອາບັດຊົ່ວຫຍາບແລະອາບັດ

໑໐. ບໍ່ຍຶດຖື ບໍ່ໃສ່ໃຈບໍ່ພິຈາຣະນາບໍ່ຊົ່ວຫຍາບຄໍາເວົ້າທີ່ສືບຕໍ່ຈາກອາຈານດ້ວຍດີ

ພຣະວິໄນທອນປະກອບດ້ວຍອົງ ໑໐ ນັບວ່າເປັນຜູ້ສະຫຼາດ ຄື

໑. ຮູ້ຍັດຕິ

໒. ຮູ້ການຕັ້ງຍັດຕິ

໓. ສະຫຼາດໃນເບື້ອງຕົ້ນ

໔. ສະຫຼາດໃນເບື້ອງປາຍ

໕. ຮູ້ການ

໖. ຮູ້ອາບັດແລະອະນາບັດ

໗. ຮູ້ອາບັດເບົາແລະອາບັດໜັກ

໘. ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ

໙. ຮູ້ອາບັດຊົ່ວຫຍາບແລະອາບັດ

໑໐. ຍຶດຖື ໃສ່ໃຈ ພິຈາຣະນາຖ້ອຍບໍ່ຊົ່ວຫຍາບຄຳທີ່ສືບຕໍ່ຈາກອາຈານດ້ວຍດີ

ພຣະວິໄນທອນປະກອບດ້ວຍອົງ ໑໐ ກໍນັບວ່າເປັນຜູ້ໂງ່ຈ້າ ຄື

໑. ບໍ່ຮູ້ອາບັດແລະອະນາບັດ

໒. ບໍ່ຮູ້ອາບັດເບົາແລະອາບັດໜັກ

໓. ບໍ່ຮູ້ອາບັດມີສ່ວນເຫຼືອແລະ

໔. ບໍ່ຮູ້ອາບັດຊົ່ວຫຍາບແລະອາບັດ ອາບັດບໍ່ມີສ່ວນເຫຼືອບໍ່ຊົ່ວຫຍາບ

໕. ຈຳປາຕິໂມກທັງ ໒

໖. ບໍ່ຮູ້ອາບັດແລະອະນາບັດ ໂດຍພິດສະດານບໍ່ດີ ຈຳແນກບໍ່ດີບໍ່ວ້ອງໄວ ວິນິດໄສໂດຍສຸດຕະໂດຍອະນຸພະຍັນຊະນະບໍ່ດີ

໗. ບໍ່ຮູ້ອາບັດເບົາແລະອາບັດໜັກ

໘. ບໍ່ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ

໙. ບໍ່ຮູ້ອາບັດຊົ່ວຫຍາບ

໑໐. ບໍ່ສະຫຼາດໃນການວິນິດໄສອະທິກອນແລະອາບັດບໍ່ຊົ່ວຫຍາບ

ພຣະວິໄນທອນປະກອບດ້ວຍອົງ ໑໐ ນັບວ່າເປັນຜູ້ສະຫຼາດ ຄື

໑. ຮູ້ອາບັດແລະອະນາບັດ

໒. ຮູ້ອາບັດເບົາແລະອາບັດໜັກ

໓. ຮູ້ອາບັດມີສ່ວນເຫຼືອ

໔. ຮູ້ອາບັດຊົ່ວຫຍາບແລະອາບັດແລະອາບັດບໍ່ມີສ່ວນເຫຼືອບໍ່ຊົ່ວຫຍາບ

໕. ຈຳປາຕິໂມກທັງ ໒

໖. ຮູ້ອາບັດແລະອະນາບັດໂດຍພິດສະດານໄດ້ ຈຳແນກໄດ້ດີ ວ້ອງໄວດີ ວິນິດໄສໂດຍສຸດຕະໂດຍອະນຸພະຍັນຊະນະໄດ້ດີ

໗. ຮູ້ອາບັດເບົາແລະອາບັດໜັກ

໘. ຮູ້ອາບັດມີສ່ວນເຫຼືອແລະອາບັດ ບໍ່ມີສ່ວນເຫຼືອ

໙. ຮູ້ອາບັດຊົ່ວຫຍາບ

໑໐. ສະຫຼາດໃນການວິນິດໄສອະທິກອນແລະອາບັດບໍ່ຊົ່ວຫຍາບ

## ວ່າດ້ວຍອຸບພາທິກາສົມມຸດฯເປັນຕົ້ນ

ພິກຂຸປະກອບດ້ວຍອົງ ໑໐ ສິ່ງເພິ່ງແຕ່ງຕັ້ງດ້ວຍອຸບພາທິກາວິທີ ພຣະຕະຖາຄົດເຈົ້າຊົງອາໄສອຳນາດປະໂຫຍດ ໑໐ ປະການ ຈຶ່ງຊົງບັນຍັດສິກຂາບົດແກ່ພຣະສາວົກທັງຫຼາຍ ການເຂົ້າໄປສູ່ພາຍໃນພຣະຣາດຊະຖານມີໂທດ ໑໐ ທານະວັດຖຸມີ ໑໐ ຣັດຕະນະມີ ໑໐ ພິກຂຸສົງມີພວກ ໑໐ ຄະນະສົງມີພວກ ໑໐ ເພິ່ງໃຫ້ອຸປະສົມບົດ ຜ້າບັງສຸກຸນມີ ໑໐ ຈີວອນສຳລັບໃຊ້ສອຍມີ ໑໐ ຊົງອະຕິເຣກຈີວອນ ໑໐ ມື້ເປັນຢ່າງຍິ່ງ ນ້ຳອະສຸຈິມີ ໑໐ ສະຕີມີ ໑໐ ພັນລະຍາມີ ໑໐ ພິກຂຸໃນພຣະນະຄອນເວສາລີສະແດງວັດຖຸ ໑໐ ບຸກຄົນບໍ່ຄວນໄຫວ້ມີ ໑໐ ເລື້ອງສຳລັບດ່າມີ ໑໐ ສັບສໍ່ດ້ວຍອາການ ໑໐ ເສນາສະນະມີ ໑໐ ຂໍພອນ ໑໐ ປະການ ງົດປາຕິໂມກບໍ່ຊອບທຳມີ ໑໐ ງົດປາຕິໂມກຊອບທຳມີ ໑໐ ຍາຄູມີອານິສົງ ໑໐ ຊີ້ນທີ່ບໍ່ຄວນມີ ໑໐ ສິກຂາບົດວ່າດ້ວຍຢ່າງຍິ່ງມີ ໑໐ ພິກຂຸມີພັນສາສິບ ສະຫຼາດ ສາມາດ ຄວນໃຫ້ບັນພະຊາ ອຸປະສົມບົດ ຄວນໃຫ້ນິໄສ ຄວນໃຊ້ສາມະເນນອຸປັດຖາກ ພິກຂຸນີມີພັນສາສິບ ສະຫຼາດ ສາມາດ ຄວນໃຫ້ບັນພະຊາ ອຸປະສົມບົດ ຄວນໃຫ້ນິໄສ ຄວນໃຊ້ສາມະເນຣີອຸປັດຖາກ ພິກຂຸນີມີພັນສາສິບ ສະຫຼາດ ສາມາດ ເພິ່ງຍິນດີການສົມມຸດການໃຫ້ບວດ ພິກຂຸນີມີພັນສາສິບ ຄວນໃຫ້ສິກຂາແກ່ສະຕີທີ່ມີຄອບຄົວ

**ທະສະກະວາຣະ ຈົບ**

## ຫົວຂໍ້ປະຈຳວາຣະ

ອາຄາຕະວັດຖຸ ອຸບາຍກຳຈັດ ວິນີຕະວັດຖຸ ມິດສາທິດຖິ
ສຳມາທິດຖິ ອັນຕະຄາຫິກະທິດຖິ ມິດສັດຕະ ສຳມັດຕະ
ອະກຸສົນກຳມະບົດ ກຸສົນກຳມະບົດ ຈັບສະຫຼາກຊອບທຳ
ຈັບສະຫຼາກບໍ່ຊອບທຳ ສິກຂາບົດຂອງສາມະເນນ
ສາມະເນນທີ່ເພິ່ງໃຫ້ນາສະນະ ຄຳເວົ້າ ອະທິກອນ ຍັດຕິ ອາບັດເບົາ
ອາບັດເບົາອີກ ອາບັດໜັກ ຈຶ່ງຮູ້ຝ່າຍດຳຝ່າຍຂາວເຫຼົ່ານີ້ໄວ້
ອຸບພາທິກະສົມມຸດ ສິກຂາບົດວ່າດ້ວຍການເຂົ້າໄປພາຍໃນພຣະຣາດຊະຖານ
ທານະວັດຖຸ ຣັດຕະນະ ຄະນະສົງມີພວກ ໑໐ ຄະນະສົງມີພວກ ໑໐
ໃຫ້ອຸປະສົມບົດ ຜ້າບັງສຸກຸນ ຈີວອນສຳລັບໃຊ້ສອຍ
ຊົງອະຕິເຣກ ໑໐ ມື້ ນ້ຳອະສຸຈິ ສະຕີ ພັນລະຍາ ວັດຖຸ ໑໐
ບຸກຄົນບໍ່ຄວນໄຫວ້ ເລື້ອງສຳລັບດ່າ ການສັບສໍ່ ເສນາສະນະ ຂໍພອນ

ການງົດປາຕິໂມກບໍ່ຊອບທຳ ການງົດປາຕິໂມກຊອບທຳ
ຍາຄູ ມັງສະ ສິກຂາບົດທີ່ວ່າດ້ວຍຢ່າງຍິ່ງ ພິກຂຸ ພິກຂຸນີ
ໃຫ້ອຸປະສົມບົດສະຕີທີ່ມີຄອບຄົວ
ໝວດສິບ ພຣະຜູ້ມີພຣະພາກເຈົ້າຊົງປະກາດໄວ້ດີແລ້ວແລ

## ໑໑. ເອກາທະສະກະວາຣະ
## ວ່າດ້ວຍໝວດ ໑໑

[໗໑] ບຸກຄົນທີ່ຍັງບໍ່ໄດ້ອຸປະສົມບົດບໍ່ເພິ່ງໃຫ້ອຸປະສົມບົດມີ ໑໑ ຈຳພວກ ທີ່ອຸປະສົມບົດ ແລ້ວເພິ່ງໃຫ້ສິກສາ ຊຽງຕີນບໍ່ຄວນມີ ໑໑ ຊະນິດ ບາດບໍ່ສົມຄວນມີ ໑໑ ຊະນິດ ຈີວອນບໍ່ສົມຄວນມີ ໑໑ ຊະນິດ ສິກຂາບົດເປັນຍາວະຕະຕິຍະກະມີ ໑໑ ເພິ່ງຖາມອັນຕະຣາຍິກະທຳ ໑໑ ຢ່າງຂອງພິກຂຸນີ ຈີວອນຄວນອະທິຖານມີ ໑໑ ຈີວອນບໍ່ຄວນວິກັບມີ ໑໑ ຈີວອນ ໑໑ ຊະນິດ ເປັນນິດສັກຄີເມື່ອອາຣຸນຂຶ້ນ ລູກດຸມທີ່ສົມຄວນມີ ໑໑ ຊະນິດ ລູກຖະວິນທີ່ສົມຄວນມີ ໑໑ ຊະນິດ ດິນບໍ່ສົມຄວນມີ ໑໑ ດິນທີ່ສົມຄວນມີ ໑໑ ການລະງັບນິໄສມີ ໑໑ ບຸກຄົນບໍ່ຄວນໄຫວ້ມີ ໑໑ ສິກຂາບົດທີ່ວ່າດ້ວຍຢ່າງຍິ່ງມີ ໑໑ ຂໍພອນ ໑໑ ປະການ ສີມາມີໂທດ ໑໑ ຢ່າງ ບຸກຄົນຜູ້ດ່າກ່າວໂທດຕ້ອງໄດ້ຮັບໂທດ ໑໑ ຢ່າງ

ເມື່ອເມດຕາເຈໂຕວິມຸດຕິທີ່ບຸກຄົນເສບແລ້ວ ຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານພາຫະນະແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ເພິ່ງຫວັງອານິສົງ ໑໑ ປະການ ຄື

໑. ຫຼັບເປັນສຸກ
໒. ຕື່ນເປັນສຸກ
໓. ບໍ່ຝັນຮ້າຍ
໔. ເປັນທີ່ຮັກຂອງມະນຸດທັງຫຼາຍ
໕. ເປັນທີ່ຮັກຂອງອະມະນຸດທັງຫຼາຍ
໖. ເທວະດາທັງຫຼາຍຮັກສາ
໗. ໄຟ ຢາພິດ ຫຼືອາວຸດ
໘. ຈິດຕັ້ງໝັ້ນໄດ້ໄວແຊກຊຶມບຸກຄົນນັ້ນບໍ່ໄດ້
໙. ສີໜ້າສົດໃສ
໑໐. ບໍ່ຫຼົງລືມສະຕິຕາຍ
໑໑. ເມື່ອຍັງບໍ່ບັນລຸຄຸນວິເສດ ອັນຍິ່ງຂຶ້ນໄປ ຍ່ອມເຂົ້າເຖິງພົມມະໂລກ

ເມື່ອເມດຕາເຈໂຕວິມຸຕິທີ່ບຸກຄົນເສບແລ້ວຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານພາຫະນະແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ເພິ່ງຫວັງອານິສົງ ໑໑ ປະການນີ້ແລ໌

**ເອກາທະສະກະວາຣະ ຈົບ**

## ຫົວຂໍ້ປະຈຳວາຣະ

ຜູ້ທີ່ອຸປະສົມບົດແລ້ວເພິ່ງໃຫ້ສິກ ຊຽງຕົນ ບາດ ຈີວອນ
ສິກຂາບົດເປັນຍາວະຕະຕິຍະ ເພິ່ງຖາມອັນຕະຣາຍິກະທຳ ຈີວອນຄວນອະທິຖານ
ຈີວອນບໍ່ຄວນວິກັບ ເປັນນິດສັກຄີເມື່ອອາຣຸນຂຶ້ນ
ລູກດຸມ ລູກຖະວິນ ດິນບໍ່ສົມຄວນ ດິນສົມຄວນ ການລະງັບນິໄສ
ບຸກຄົນບໍ່ຄວນໄຫວ້ ສິກຂາບົດທີ່ວ່າດ້ວຍຢ່າງຍິ່ງ ພອນ ສີມານິໂທດ
ບຸກຄົນຜູ້ດ່າ ອານິສົງເມດຕາ ຈັດເປັນໝວດ ໑໑

**ເອກາກຸຕະຣິກະ ຈົບ**

## ຫົວຂໍ້ລຳດັບໝວດ

ໝວດເອກາກຸຕະຣິກະ ບໍ່ມີມົນທິນ ຄື ໝວດ ໑
ໝວດ ໒ ໝວດ ໓ ໝວດ ໔ ໝວດ ໕ ໝວດ ໖
ໝວດ ໗ ໝວດ ໘ ໝວດ ໙ ໝວດ ໑໐
ໝວດ ໑໑ ອັນພຣະຜູ້ມີພຣະພາກເຈົ້າຜູ້ມຫາວີຣະ
ມີພຣະທຳອັນຜາກົດແລ້ວ ຜູ້ໝັ້ນຄົງ ຊົງສະແດງໄວ້ແລ້ວ
ເພື່ອຄວາມເກື້ອກູນແກ່ສັບພະສັດແລ

**ເອກາກຸຕະຣິກະ ຈົບ**

# ອຸໂປສະຖາທິປຸດສາວິສັດຊະນາ

ຄຳຖາມ - ຄຳຕອບເລື້ອງອຸໂປສົດ ເປັນຕົ້ນ

## ອາທິມັດຊັນຕະປຸດສະນະ

## ວ່າດ້ວຍຄຳຖາມເຖິງເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດ

[໓໓໔] ຖາມ : ອຸໂປສົດກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ? ເປັນບ່ອນສຸດ ປະວາຣະນາ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ? ເປັນບ່ອນສຸດ ຕັດຊະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ນິຍະສະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ປັບພາຊະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ປະຕິສາຣະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ອຸກເຂປະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການໃຫ້ປະຣິວາດ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການດຶງເຂົ້າຫາອາບັດເດີມ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການໃຫ້ມານັດ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ອັບພານ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ອຸປະສຳປະທາກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການລະງັບຕັດຊະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການລະງັບນິຍະສະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການລະງັບປັບພາຊະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການລະງັບປະຕິສາຣະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການລະງັບອຸກເຂປະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ສະຕິວິໄນ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ອະມູລະຫະວິໄນ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ຕັດສະປາປິຍະສິກາ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ຕິນະວັດຖາຣະກະ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການສົມມຸດໃຫ້ເປັນຜູ້ສອນພິກຂຸນີ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການສົມມຸດບໍ່ຢູ່ປາສະຈາກໄຕຣຈີວອນ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການສົມມຸດສັນຖັດ ມີອັນໃດ?ເປັນ

ເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການສົມມຸດຖິ່ມຣູປີຍະ ມີອັນໃດ? ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການສົມມຸດໃຫ້ຮັບຜ້າສາດົກ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການສົມມຸດໃຫ້ຮັບບາດ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການສົມມຸດໄມ້ການເທົ້າ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການສົມມຸດສາແຫຼກ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ ການສົມມຸດໄມ້ການເທົ້າແລະສາແຫຼກ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

## ອາທິມັດຊັນຕະວິສັດຊະນາ

## ວ່າດ້ວຍຄຳຕອບເຖິງເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດ

[໓໓໓] ຖາມ : ອຸໂປສົດກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດເປັນບ່ອນສຸດ

ຕອບ : ອຸໂປສົດກຳ ມີສາມັກຄີເປັນເບື້ອງຕົ້ນ ມີການກະທຳເປັນທ່າມກາງ ມີຄວາມສຳເລັດເປັນບ່ອນສຸດ

ຖາມ : ປະວາຣະນາ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ປະວາຣະນາ ມີສາມັກຄີເປັນເບື້ອງຕົ້ນ ມີການກະທຳເປັນທ່າມກາງ ມີຄວາມສຳເລັດເປັນບ່ອນສຸດ

ຖາມ : ຕັດຊະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ຕັດຊະນີຍະກຳ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ນິຍະສະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ນິຍະສະກຳ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງມີກຳວາຈາເປັນບ່ອນສຸດ

ຖາມ : ປັບພາຊະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ປັບພາຊະນີຍະກຳ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີ

ກຳວາຈາເປັນບ່ອນສຸດ

ຖາມ : ປະຕິສາຣະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ປະຕິສາຣະນີຍະກຳ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ອຸກເຂປະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ອຸກເຂປະນີຍະກຳ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການໃຫ້ປະຣິວາດ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການໃຫ້ປະຣິວາດ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການດຶງເຂົ້າຫາອາບັດເດີມ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການດຶງເຂົ້າຫາອາບັດເດີມ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການໃຫ້ມານັດ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການໃຫ້ມານັດ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ອັບພານ ມີອັນໃດເປັນເບື້ອງຕົ້ນ ມີອັນໃດເປັນທ່າມກາງ ມີອັນໃດເປັນບ່ອນສຸດ

ຕອບ : ອັບພານ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ອຸປະສຳປະທາກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ອຸປະສຳປະທາກຳ ມີບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການລະງັບຕັດຊະນີຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການລະງັບຕັດຊະນິຍະກຳ ມີຄວາມປະພຶດຊອບເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການລະງັບນິຍະສະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດເປັນບ່ອນສຸດ

ຕອບ : ການລະງັບນິຍະສະກຳ ມີຄວາມປະພຶດຊອບເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການລະງັບປັບພາຊະນິຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການລະງັບປັບພາຊະນິຍະກຳ ມີຄວາມປະພຶດຊອບເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການລະງັບປະຕິສາຣະນິຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງມີອັນໃດ?ເປັນບ່ອນສຸດ

ຕອບ : ການລະງັບປະຕິສາຣະນິຍະກຳ ມີຄວາມປະພຶດຊອບເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງມີກຳວາຈາເປັນບ່ອນສຸດ

ຖາມ : ການລະງັບອຸກເຂປະນິຍະກຳ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການລະງັບອຸກເຂປະນິຍະກຳ ມີຄວາມປະພຶດຊອບເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ສະຕິວິໄນ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ສະຕິວິໄນ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ອະມູລະຫະວິໄນ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ອະມູລະຫະວິໄນ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ຕັດສະປາປິຍະສິກາ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ຕັດສະປາປິຍະສິກາ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ຕິນະວັດຖາຣະກະ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ຕິນະວັດຖາຣະກະ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການສົມມຸດໃຫ້ເປັນຜູ້ສອນພິກຂຸນີ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການສົມມຸດໃຫ້ເປັນຜູ້ສອນພິກຂຸນີ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການສົມມຸດບໍ່ຢູ່ປາສະຈາກໄຕຣຈີວອນ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການສົມມຸດບໍ່ຢູ່ປາສະຈາກໄຕຣຈີວອນ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການສົມມຸດສັນຖັດ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການສົມມຸດສັນຖັດ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການສົມມຸດຖິ້ມຣູປິຍະ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການສົມມຸດຖິ້ມຣູປິຍະ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການສົມມຸດໃຫ້ຮັບຜ້າສາດົກ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການສົມມຸດໃຫ້ຮັບຜ້າສາດົກ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການສົມມຸດໃຫ້ຮັບບາດ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການສົມມຸດໃຫ້ຮັບບາດ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການສົມມຸດໄມ້ການເທົ້າ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການສົມມຸດໄມ້ການເທົ່າ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການສົມມຸດສາແຫຼກ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການສົມມຸດສາແຫຼກ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

ຖາມ : ການສົມມຸດໄມ້ການເທົ່າແລະສາແຫຼກ ມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການສົມມຸດໄມ້ການເທົ່າແລະສາແຫຼກ ມີວັດຖຸແລະບຸກຄົນເປັນເບື້ອງຕົ້ນ ມີຍັດຕິເປັນທ່າມກາງ ມີກຳວາຈາເປັນບ່ອນສຸດ

**ອຸໂປສະຖາທິປຸດສາວິສັດຊະນາ ຈົບ**

## ອັດຖະວະສະປະກອນ

## ວ່າດ້ວຍອຳນາດປະໂຫຍດ ໑໐ ປະການ

[໓໓໔] ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ພຣະສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໑໐ ປະການ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໒. ເພື່ອຄວາມຜາສຸກແຫ່ງສົງ
໓. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ
໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສິນດີງາມ
໕. ເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໖. ເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ
໗. ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ
໘. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ
໙. ເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ
໑໐. ເພື່ອເອື້ອເຟື້ອພຣະວິໄນ

ສິ່ງໃດເປັນຄວາມຍອມຮັບວ່າດີແຫ່ງສົງ ສິ່ງນັ້ນເປັນຄວາມຜາສຸກແຫ່ງສົງ ສິ່ງໃດເປັນຄວາມຜາສຸກແຫ່ງສົງ ສິ່ງນັ້ນເພື່ອຂົ່ມບຸກຄົນຜູ້ດື້ດ້ານ ສິ່ງໃດເພື່ອຂົ່ມບຸກຄົນຜູ້ດື້ດ້ານ ສິ່ງນັ້ນ

ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ ສິ່ງໃດເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ ສິ່ງນັ້ນເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ ສິ່ງໃດເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ ສິ່ງນັ້ນເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ ສິ່ງໃດເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ ສິ່ງນັ້ນເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ ສິ່ງໃດເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ ສິ່ງນັ້ນເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ ສິ່ງໃດເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ ສິ່ງນັ້ນເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ ສິ່ງໃດເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ ສິ່ງນັ້ນເພື່ອເອື້ອເຟື້ອພຣະວິໄນ

ສິ່ງໃດເປັນຄວາມຍອມຮັບວ່າດີແຫ່ງສົງ ສິ່ງນັ້ນເປັນຄວາມຜາສຸກແຫ່ງສົງ ສິ່ງໃດເປັນຄວາມຍອມຮັບວ່າດີແຫ່ງສົງ ສິ່ງນັ້ນເພື່ອຂົ່ມບຸກຄົນຜູ້ດື້ດ້ານ ສິ່ງໃດເປັນຄວາມຍອມຮັບວ່າດີແຫ່ງສົງ ສິ່ງນັ້ນເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ ສິ່ງໃດເປັນຄວາມຍອມຮັບວ່າດີແຫ່ງສົງ ສິ່ງນັ້ນເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ ສິ່ງໃດເປັນຄວາມຍອມຮັບວ່າດີແຫ່ງສົງ ສິ່ງນັ້ນເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ

ສິ່ງໃດເປັນຄວາມຍອມຮັບວ່າດີແຫ່ງສົງ ສິ່ງນັ້ນເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ

ສິ່ງໃດເປັນຄວາມຍອມຮັບວ່າດີແຫ່ງສົງ ສິ່ງນັ້ນເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ ສິ່ງໃດເປັນຄວາມຍອມຮັບວ່າດີແຫ່ງສົງ ສິ່ງນັ້ນເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ ສິ່ງໃດເປັນຄວາມຍອມຮັບວ່າດີແຫ່ງສົງ ສິ່ງນັ້ນເປັນໄປເພື່ອເອື້ອເຟື້ອພຣະວິໄນ

ສິ່ງໃດເປັນຄວາມຜາສຸກແຫ່ງສົງ ສິ່ງນັ້ນເພື່ອຂົ່ມບຸກຄົນຜູ້ດື້ດ້ານ ສິ່ງໃດເປັນຄວາມຜາສຸກແຫ່ງສົງ ສິ່ງນັ້ນເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ ສິ່ງໃດເປັນຄວາມຜາສຸກແຫ່ງສົງ ສິ່ງນັ້ນເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ ສິ່ງໃດເປັນຄວາມຜາສຸກແຫ່ງສົງ ສິ່ງນັ້ນເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ ສິ່ງໃດ ເປັນຄວາມຜາສຸກແຫ່ງສົງ ສິ່ງນັ້ນເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ ສິ່ງໃດເປັນ ຄວາມຜາສຸກແຫ່ງສົງ ສິ່ງນັ້ນເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ ສິ່ງໃດເປັນຄວາມຜາສຸກແຫ່ງສົງ ສິ່ງນັ້ນເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ ສິ່ງໃດເປັນຄວາມຜາສຸກແຫ່ງສົງ ສິ່ງນັ້ນເພື່ອເອື້ອເຟື້ອພຣະວິໄນ

ສິ່ງໃດເພື່ອຂົ່ມບຸກຄົນຜູ້ດື້ດ້ານ ຯລຯ ສິ່ງໃດເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ ຯລຯ ສິ່ງໃດເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ ຯລຯ ສິ່ງໃດເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ ຯລຯ ສິ່ງໃດເພື່ອຄວາມເຫຼື້ອມໃສຂອງຄົນ

ທີ່ຍັງບໍ່ເຫຼື້ອມໃສ ໆລໆ ສິ່ງໃດເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ ໆລໆ ສິ່ງໃດເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ ໆລໆ ສິ່ງໃດເພື່ອເອື້ອເຟື້ອພຣະວິໄນ ສິ່ງນັ້ນເປັນຄວາມຍອມຮັບວ່າດີແຫ່ງສົງ ສິ່ງໃດເພື່ອເອື້ອເຟື້ອພຣະວິໄນ ສິ່ງນັ້ນເພື່ອຄວາມຜາສຸກແຫ່ງສົງ ສິ່ງໃດເພື່ອເອື້ອເຟື້ອພຣະວິໄນ ສິ່ງນັ້ນເພື່ອຂົ່ມບຸກຄົນຜູ້ດື້ດ້ານ ສິ່ງໃດເພື່ອເອື້ອເຟື້ອພຣະວິໄນ ສິ່ງນັ້ນເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສິນດີງາມ ສິ່ງໃດເພື່ອເອື້ອເຟື້ອພຣະວິໄນ ສິ່ງນັ້ນເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ ສິ່ງໃດເພື່ອເອື້ອເຟື້ອພຣະວິໄນ ສິ່ງນັ້ນເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ ສິ່ງໃດເພື່ອເອື້ອເຟື້ອພຣະວິໄນ ສິ່ງນັ້ນເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ ສິ່ງໃດເພື່ອເອື້ອເຟື້ອພຣະວິໄນ ສິ່ງນັ້ນເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ ສິ່ງໃດເພື່ອເອື້ອເຟື້ອພຣະວິໄນ ສິ່ງນັ້ນເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ

ອັດຖະໜຶ່ງຮ້ອຍ ທຳໜຶ່ງຮ້ອຍ ນິຣຸດຕິສອງຮ້ອຍ
ຍານສີ່ຮ້ອຍ ມີໃນອັດຖະວະສະປະກອນ

**ອັດຖະວະສະປະກອນ ຈົບ**

**ມະຫາວັກ ຈົບ**

## ຫົ້ຂໍ້ປະຈຳເລື້ອງ

ໝວດທຳເຫຼົ່ານີ້ຂອງພິກຂຸ ໑໖ ຂອງພິກຂຸນີ ໑໖ ຄື
ໝວດ ໑ ເຖິງໝວດ ๙ ໃນການຖາມແລະປັດໄຈ ແລະໝວດ ໑
ເຖິງໝວດ ๙ ໃນຄຳຖາມແລະປັດໄຈອີກ ເປີຍຍາລະ ອັນຕະຣາເພທະ
ແລະເອກຸດຕະຣິກະ ປະວາຣະນາ ອັດຖະວະສະປະກອນ ສົງເຄາະເຂົ້າມະຫາວັກ

**ອັດຖະວະສະປະກອນ ຈົບ**

# ຄາຖາສັງຄະນິກະ

## ວ່າດ້ວຍກຸ່ມຄາຖາ

### ໑. ສັດຕະນະຄະເຣສຸປັນຍັດຕະສິກຂາບົດ

### ວ່າດ້ວຍສິກຂາບົດທີ່ຊົງບັນຍັດໃນ ๗ ພຣະນະຄອນ

### ພຣະອຸບາລີເຂົ້າເຝົ້າທູນຖາມບັນຫາ

[໓໓໕] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ
ທ່ານທີ່ມຜ້າບ່ງງບ່າ ປະນົມມື ເບິ່ງຄືວ່າມີຄວາມມຸ້ງຫວັງ
ມາສະຖານທີ່ນີ້ເພື່ອປະໂຫຍດອັນໃດ?

ທ່ານພຣະອຸບາລີຂາບທູນວ່າ
ສິກຂາບົດທີ່ພຣະອົງຊົງບັນຍັດໄວ້ໃນວິໄນທັງສອງ
ມາສູ່ອຸດເທດທຸກມື້ອຸໂປສົດນັ້ນມີທີ່ໃດ? ຊົງບັນຍັດ ຢູ່ພຣະນະຄອນຈັກນະຄອນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ
ປັນຍາຂອງທ່ານດີ ທ່ານສອບຖາມຢ່າງລະອຽດ
ຍ້ອນແນວນັ້ນ ເຮົາຈັກບອກທ່ານ ສົມກັບທີ່ທ່ານສະຫຼາດຖາມ

ສິກຂາບົດທີ່ບັນຍັດໄວ້ໃນວິໄນທັງສອງມາສູ່ອຸດເທດທຸກມື້ອຸໂປສົດນັ້ນ
ມີ ໓໕໐ ສິກຂາບົດ ເຮົາບັນຍັດ ຢູ່ພຣະນະຄອນ ๗ ນະຄອນ

ພຣະອຸບາລີຂາບທູນວ່າ
ສິກຂາບົດທີ່ຊົງບັນຍັດ ຢູ່ພຣະນະຄອນ ๗ ນະຄອນ
ພຣະນະຄອນໃດແດ່ ຂໍພຣະອົງໄດ້ໂຜດຊີ້ແຈ່ງພຣະນະຄອນ ๗ ນະຄອນນັ້ນ
ແກ່ຂ້າພຣະອົງ ຂ້າພຣະອົງໄດ້ຟັງຖ້ອຍພຣະດຳຣັດ
ຂອງພຣະອົງແລ້ວຈະປະຕິບັດ
ຂໍ້ນັ້ນຈະເພິ່ງມີເພື່ອຄວາມເກື້ອກູນແກ່ຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດວ່າ
ສິກຂາບົດເຫຼົ່ານັ້ນ ເຮົາບັນຍັດຢູ່ນະຄອນເວສາລີ ຢູ່ນະຄອນຣາດຊະຄຶ
ຢູ່ນະຄອນສາວັດຖີ ຢູ່ເມືອງອາລະວີ ຢູ່ນະຄອນໂກສຳພີ
ຢູ່ແຄວັນສັກກະ ຢູ່ພັກຄະຊົນນະບົດ”

# ສິກຂາບົດບັນຍັດ

ພຣະອຸບາລີຂາບທູນວ່າ
ສິກຂາບົດທີ່ຊົງບັນຍັດ ຢູ່ນະຄອນເວສາລີມີທີ່ໃດ?
ຢູ່ນະຄອນຣາດຊະຄືມີທີ່ໃດ? ຢູ່ນະຄອນສາວັດຖີມີທີ່ໃດ?
ຢູ່ເມືອງອາລະວີມີທີ່ໃດ? ຢູ່ນະຄອນໂກສຳພີມີທີ່ໃດ?
ຢູ່ແຄວັ້ນສັກກະມີທີ່ໃດ? ຢູ່ພັກຄະຊົນນະບົດມີທີ່ໃດ?
ພຣະອົງອັນຂ້າພຣະອົງທູນຖາມແລ້ວ ຂໍໄດ້ໂຜດຕອບຂໍ້ນັ້ນ
ແກ່ຂ້າພຣະອົງ

ພຣະຜູ້ມີພຣະພາກເຈົ້າຕັດວ່າ
ສິກຂາບົດທີ່ບັນຍັດ ຢູ່ນະຄອນເວສາລີມີ ໑໐ ສິກຂາບົດ
ຢູ່ນະຄອນຣາດຊະຄືມີ ໘໑ ສິກຂາບົດ ຢູ່ນະຄອນສາວັດຖີ
ລວມທັງໝົດມີ ໘໙໔ ສິກຂາບົດ ຢູ່ເມືອງອາລະວີມີ ໖ ສິກຂາບົດ
ຢູ່ນະຄອນໂກສຳພີມີ ໘ ສິກຂາບົດ ຢູ່ແຄວັ້ນສັກກະມີ ໘ ສິກຂາບົດ
ຢູ່ພັກຄະຊົນນະບົດມີ ໓ ສິກຂາບົດ
ທ່ານຈົ່ງຟັງສິກຂາບົດທີ່ເຮົາບັນຍັດໄວ້ ຢູ່ນະຄອນເວສາລີ ຕາມລຳດັບຕໍ່ໄປ

ສິກຂາບົດວ່າດ້ວຍການເສບເມຖຸນທຳ ສິກຂາບົດວ່າດ້ວຍການພາກກາຍມະນຸດ
ສິກຂາບົດວ່າດ້ວຍການກ່າວອວດອຸດຕະຣິມະນຸດສະທຳທີ່ບໍ່ມີຈິງ
ສິກຂາບົດວ່າດ້ວຍຊົງອະຕິເຣກຈີວອນ
ສິກຂາບົດວ່າດ້ວຍການເຮັດສັນຖັດໂດຍໃຊ້ຂົນຈຽມດຳລ້ວນ
ສິກຂາບົດວ່າດ້ວຍການບອກອຸດຕະຣິມະນຸດສະທຳທີ່ມີຈິງ
ສິກຂາບົດວ່າດ້ວຍການສັນປະຣຳປະຣະໂພຊະນະ
ສິກຂາບົດວ່າດ້ວຍການຮັບປະເຄນອາຫານນອກຈາກນ້ຳແລະໄມ້ຖູແຂ້ວ
ສິກຂາບົດວ່າດ້ວຍການໃຫ້ຂອງຫຍ້ຳຂອງສັນແກ່ອະເຈລະກະ
ໃນໝູ່ພິກຂຸນີ ສິກຂາບົດວ່າດ້ວຍພິກຂຸນີດ່າ ກ່າວໂທດພິກຂຸ
ລວມສິກຂາບົດທີ່ບັນຍັດ ຢູ່ນະຄອນເວສາລີ ໑໐ ສິກຂາບົດ

ທ່ານຈົ່ງຟັງສິກຂາບົດທີ່ເຮົາບັນຍັດຢູ່ນະຄອນຣາດຊະຄືຕາມລຳດັບຕໍ່ໄປ
ສິກຂາບົດວ່າດ້ວຍການຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໄດ້ໃຫ້ໃນນະຄອນຣາດຊະຄື
ສິກຂາບົດວ່າດ້ວຍໃສ່ຄວາມພິກຂຸ ໘ ສິກຂາບົດ
ສິກຂາບົດວ່າດ້ວຍທຳລາຍສົງແລະປະພຶດຕາມ ໘ ສິກຂາບົດ
ສິກຂາບົດວ່າດ້ວຍການຮັບອັນຕະຣະວາສົກ(ຈີວອນ)

ສິກຂາບົດວ່າດ້ວຍແລກປ່ຽນຣູປີຍະ
ສິກຂາບົດວ່າດ້ວຍການອອກປາກຂໍດ້າຍ
ສິກຂາບົດວ່າດ້ວຍການກ່າວໃຫ້ເພ່ງໂທດ
ສິກຂາບົດວ່າດ້ວຍສັນບິນທະບາດທີ່ພິກຂຸນີແນະນຳໃຫ້ຈັດກຽມ
ສິກຂາບົດວ່າດ້ວຍການສັນພັດຕາຫານໃນບ່ອນພັກແຮມ
ສິກຂາບົດວ່າດ້ວຍການສັນຄະນະໂພຊະນະ
ສິກຂາບົດວ່າດ້ວຍການສັນໂພຊະນະໃນເວລາວິການ
ສິກຂາບົດວ່າດ້ວຍການທ່ຽວສັນຈອນໄປ
ສິກຂາບົດວ່າດ້ວຍການອາບນ້ຳນອກສະໄໝ
ສິກຂາບົດວ່າດ້ວຍການອຸປະສົມບົດໃຫ້ບຸກຄົນມີອາຍຸຍ່ອນກວ່າ ໒໐ ປີ
ສິກຂາບົດວ່າດ້ວຍການໃຫ້ຈີວອນ
ສິກຂາບົດວ່າດ້ວຍການບໍ່ຫ້າມພິກຂຸນີຜູ້ຖ້າບົງການ
ສິກຂາບົດວ່າດ້ວຍການທ່ຽວເບິ່ງມະໂຫລະສົບເທິງຈອມພູ
ສິກຂາບົດວ່າດ້ວຍການບໍ່ຫຼີກຈາຣິກໄປ(໒ ສິກຂາບົດ)
ສິກຂາບົດວ່າດ້ວຍການບວດໃຫ້ສິກຂະມານາໂດຍໃຫ້ປະຣິວາສິກະສັນທະ
ສິກຂາບົດເຫຼົ່ານີ້ບັນຍັດ ຢູ່ນະຄອນຣາດຊະຄຶ
ລວມ ໒໑ ສິກຂາບົດ

ທ່ານຈົ່ງຟັງສິກຂາບົດທີ່ເຮົາບັນຍັດຢູ່ນະຄອນສາວັດຖີ ຕາມລຳດັບຕໍ່ໄປ
ປາຣາຊິກ ໔ ສັງຄາທິເສດ ໑໖ ອະນິຍະຕະ ໒
ນິດສັກຄີ ໒໔ ສິກຂາບົດທີ່ຮຽກວ່າຂຸດທະກະສິກຂາບົດມີ ໑໕໖
ສິກຂາບົດວ່າດ້ວຍການກະທຳທີ່ໜ້າຕຳໜິ ໑໐ ສິກຂາບົດ[1]
ເສຂິຍະວັດ ໗໒ ສິກຂາບົດ
ລວມສິກຂາບົດທັງໝົດທີ່ເຮົາບັນຍັດຢູ່ນະຄອນສາວັດຖີ ໒໗໔ ສິກຂາບົດ

ທ່ານຈົ່ງຟັງສິກຂາບົດທີ່ເຮົາບັນຍັດ ຢູ່ເມືອງອາລະວີ ຕາມລຳດັບຕໍ່ໄປ
ສິກຂາບົດວ່າດ້ວຍການກໍ່ສ້າງກຸດຕິ
ສິກຂາບົດວ່າດ້ວຍການເຮັດສັນຖັດປະສົມໃຍໄໝ
ສິກຂາບົດວ່າດ້ວຍນອນຮ່ວມກັບອະນຸປະສຳບັນ
ສິກຂາບົດວ່າດ້ວຍການຂຸດດິນ
ສິກຂາບົດວ່າດ້ວຍການພາກພູຕະຄາມ
ສິກຂາບົດວ່າດ້ວຍການເອົານ້ຳມີສິ່ງມີຊີວິດຫົດຫຍ້າຫຼືດິນ
ລວມສິກຂາບົດທີ່ເຮົາບັນຍັດ ຢູ່ເມືອງອາລະວີ ໖ ສິກຂາບົດ

ທ່ານຈິ່ງຟັງສິກຂາບົດທີ່ເຮົາບັນຍັດຢູ່ນະຄອນໂກສຳພີ ຕາມລຳດັບຕໍ່ໄປ

ສິກຂາບົດວ່າດ້ວຍການສ້າງວິຫານໃຫຍ່

ສິກຂາບົດວ່າດ້ວຍພິກຂຸເປັນຄົນວ່າຍາກສອນຍາກ

ສິກຂາບົດວ່າດ້ວຍການກ່າວປົກປິດ

ສິກຂາບົດວ່າດ້ວຍການຕິດຕັ້ງບານປະຕູ

ສິກຂາບົດວ່າດ້ວຍການດື່ມສຸຣາແລະເມໄຣ

ສິກຂາບົດວ່າດ້ວຍບໍ່ເອື້ອເຟື້ອ ຕໍ່ຄຳຕັກເຕືອນ

ສິກຂາບົດວ່າດ້ວຍກ່າວຕັກເຕືອນໂດຍຖືກຕ້ອງຕາມທຳ

ສິກຂາບົດວ່າດ້ວຍການສັນນໍ້ານົມສຽງດັງຊູ້ດ ໆ ລວມ ໗ ສິກຂາບົດ

ທ່ານຈິ່ງຟັງສິກຂາບົດທີ່ເຮົາບັນຍັດ ຢູ່ເມືອງກະບິນລະພັດ ແຄວ້ນສັກກະ (໗ ສິກຂາບົດ)ຕາມລຳດັບຕໍ່ໄປ

ສິກຂາບົດວ່າດ້ວຍການໃຫ້ຊັກຂົນຈຽມ

ສິກຂາບົດວ່າດ້ວຍບາດມີຮອຍຊ່ອມ ໕ ແຫ່ງ

ສິກຂາບົດວ່າດ້ວຍເຂົ້າໄປສັ່ງສອນພິກຂຸນີຮອດບ່ອນຢູ່

ສິກຂາບົດວ່າດ້ວຍຂໍເພສັດ

ສິກຂາບົດວ່າດ້ວຍການເຮັດກ່ອງເຂັມ

ສິກຂາບົດວ່າດ້ວຍການຢູ່ໃນເສນາສະນະປ່າ

ສິກຂາບົດວ່າດ້ວຍການໃຊ້ນໍ້າຊຳຮະ

ສິກຂາບົດວ່າດ້ວຍການບໍ່ໄປຮັບໂອວາດ ເຮົາກ່າວໄວ້ໃນໝູ່ພິກຂຸນີ

ທ່ານຈິ່ງຟັງສິກຂາບົດທີ່ເຮົາບັນຍັດ ຢູ່ພັກຄະຊົນນະບົດ ຕາມລຳດັບຕໍ່ໄປ

ສິກຂາບົດວ່າດ້ວຍດັງໄຟຜີງ

ສິກຂາບົດວ່າດ້ວຍການຈັບພາຊະນະນໍ້າດື່ມດ້ວຍມືເປື້ອນອາມິດ

ສິກຂາບົດວ່າດ້ວຍການຖອກນໍ້າລ້າງບາດມີເມັດເຂົ້າສຸກໃນບໍລິເວນເຮືອນ

ສິກຂາບົດທັງຫຼາຍ ຄື ປາຣາຊິກ ໔ ສັງຄາທິເສດ ໗ ນິດສັກຄີ ໗ ຊຸດທະກະ ໓໔ ສິກຂາບົດທີ່ໜ້າຕຳໜິ(ປະຕິເທສະນີຍະ) ໔ ເສຂິຍະວັດ ໑ ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກ ບັນຍັດ ຢູ່ ໖ ພຣະນະຄອນ ລວມ ໕໖ ສິກຂາບົດ

ພຣະໂຄດົມຜູ້ມີພຣະຍົດຊົງບັນຍັດ ຢູ່ນະຄອນສາວັດຖີ

ລວມທັງໝົດ ໔໙໔ ສິກຂາບົດ

## ໔. ຈະຕຸວິບັດ

## ວ່າດ້ວຍວິບັດ ໔

## ຊົງພະຍາກອນອາບັດໜັກ ແລະອາບັດເບົາ ເປັນຕົ້ນ

[໓໖໖] ພຣະອຸບາລີຂາບທູນວ່າ
ຂ້າພຣະອົງທັງຫຼາຍໄດ້ທູນຖາມບັນຫາຂໍ້ໃດກັບພຣະອົງ
ພຣະອົງໄດ້ຕັດແກ້ບັນຫາຂໍ້ນັ້ນແກ່ຂ້າພຣະອົງທັງຫຼາຍ
ທູນຖາມເລື້ອງໃດ ໆ ພຣະອົງກໍໄດ້ຊົງແກ້ສະເພາະເລື້ອງນັ້ນ ໆ
ໂດຍບໍ່ໄດ້ຊົງແກ້ໂດຍປະການອື່ນ
ຂ້າພຣະອົງທັງຫຼາຍຂໍທູນຖາມບັນຫາຂໍ້ອື່ນກັບພຣະອົງ
ຂໍພຣະອົງໂຜດຕອບບັນຫາຂໍ້ນັ້ນຕໍ່ໄປ
ຄື ອາບັດໜັກ ອາບັດເບົາ ອາບັດທີ່ມີສ່ວນເຫຼືອ
ອາບັດທີ່ບໍ່ມີສ່ວນເຫຼືອ ອາບັດຊົ່ວຫຍາບ ອາບັດທີ່ບໍ່ຊົ່ວຫຍາບ
ສິກຂາບົດເປັນຍາວະຕະຕິຍະກະ ສິກຂາບົດທົ່ວໄປ ສິກຂາບົດບໍ່ທົ່ວໄປ
ສິກຂາບົດທີ່ຈຳແນກໄວ້ລະງັບດ້ວຍສະມະຖະ ໑
ຂໍພຣະອົງໄດ້ໂຜດຊີ້ແຈ່ງເລື້ອງນັ້ນແມ່ນທັງໝົດເທີ້ນ
ຂ້າພຣະອົງທັງຫຼາຍຈະຟັງພຣະດຳຣັດຂອງພຣະອົງ
ພຣະຜູ້ມີພຣະພາກເຈົ້າຕັດວ່າ
ອາບັດໜັກມີ ໓໑ ໃນອາບັດໜັກເຫຼົ່ານັ້ນ
ອາບັດບໍ່ມີສ່ວນເຫຼືອມີ ๘ ອາບັດໜັກຈັດເປັນອາບັດຊົ່ວຫຍາບ
ອາບັດຊົ່ວຫຍາບຈັດເປັນສີລະວິບັດ
ສີລະວິບັດ ແລະອາຈາຣະວິບັດ
ປາຣາຊິກ ສັງຄາທິເສດ ຮຽກວ່າ ສີລະວິບັດ ຖຸນລັດໄຈ ປາຈິດຕີ ປະຕິເທສະນີຍະ ທຸກກົດ ທຸບພາສິດ ຄື ດ່າດ້ວຍປະສົງຈະລົ້ຫຼິ້ນ ອາບັດນີ້ນັ້ນ ລວມຮຽກວ່າ ອາຈາຣະວິບັດ

## ທິດຖິວິບັດ

ບຸກຄົນມີປັນຍາຈ້າທັງຫຼາຍ ຖືກໂມຫະຄອບງຳ

ຖືກອະສັດທຳຣຸມລ້ອມ ຢຶດຖືຄວາມເຫັນວິປະຣິດ
ກ່າວຕູ່ພຣະສຳມາສຳພຸດທະເຈົ້າ ນີ້ນັ້ນ ລວມຮຽກວ່າ ທິດຖິວິບັດ

## ອາຊີວະວິບັດ

ພິກຂຸມີຄວາມປາຖະໜາຊົ່ວ ຖືກຄວາມຢາກຄອບງຳ ກ່າວອວດອຸດຕະຣິມະນຸດສະທຳ ທີ່ບໍ່ມີຢູ່ ບໍ່ເປັນຈິງ ຍ້ອນເຫດແຫ່ງອາຊີວະ[១] ຍ້ອນການແຫ່ງອາຊີວະ ພິກຂຸເຮັດໜ້າທີ່ຊັກສື່ ຍ້ອນເຫດແຫ່ງອາຊີວະ ຍ້ອນການແຫ່ງອາຊີວະ ພິກຂຸກ່າວວ່າ ພິກຂຸອົງໃດຢູ່ໃນວິຫານຂອງທ່ານ ພິກຂຸອົງນັ້ນ ເປັນພຣະອະຣະຫັນ ຍ້ອນເຫດແຫ່ງອາຊີວະ ຍ້ອນການແຫ່ງອາຊີວະ ພິກຂຸອອກປາກຂໍໂພຊະນະອັນປະນີດມາເພື່ອຕົນແລ້ວສັນ ຍ້ອນເຫດແຫ່ງອາຊີວະ ຍ້ອນການແຫ່ງອາຊີວະ ພິກຂຸນີອອກປາກຂໍໂພຊະນະອັນປະນີດມາເພື່ອຕົນແລ້ວສັນ ຍ້ອນເຫດແຫ່ງອາຊີວະ ພິກຂຸບໍ່ອາພາດອອກປາກຂໍແກງຫຼືເຂົ້າສຸກມາເພື່ອຕົນແລ້ວສັນ ຍ້ອນເຫດແຫ່ງອາຊີວະ ຍ້ອນການແຫ່ງອາຊີວະນີ້ນັ້ນ ລວມຮຽກວ່າ ອາຊີວະວິບັດ

## ຍາວະຕະຕິຍະກສິກຂາບົດ

ຍາວະຕະຕິຍະກະ ໑໑ ສິກຂາບົດນັ້ນ
ທ່ານຈົ່ງຟັງຕາມລຳດັບຕໍ່ໄປ ອຸກຂິດຕານຸວັດຕິກາສິກຂາບົດ[១]
ຍາວະຕະຕິຍະກະສັງຄາທິເສດ ໗ ສິກຂາບົດ[៤]
ອະຣິດຖະສິກຂາບົດ ຈັນທະກາລີສິກຂາບົດ[៣]
ສິກຂາບົດເຫຼົ່ານີ້ນັ້ນ ຊື່ວ່າ ຍາວະຕະຕິຍະກະສິກຂາບົດ

## ໓. ເສທະນະກາທິ

## ວ່າດ້ວຍເສທະນະກະສິກຂາບົດ ເປັນຕົ້ນ

## ຊົງພະຍາກອນເສທະນະກະສິກຂາບົດ ແລະເພທະນະກະສິກຂາບົດ ເປັນຕົ້ນ

[໓໓໗] ພຣະອຸບາລີຂາບທູນວ່າ

ສິກຂາບົດວ່າດ້ວຍການຕັດມີທີ່ໃດ? ສິກຂາບົດວ່າດ້ວຍການທຳລາຍມີທີ່ໃດ? ສິກຂາບົດວ່າດ້ວຍການຮື້ມີທີ່ໃດ? ສິກຂາບົດໃນປາຈິດຕິວ່າດ້ວຍບໍ່ມີອັນໃດ?ອື່ນມີທີ່ໃດ? ສິກຂາບົດວ່າດ້ວຍການສົມມຸດພິກຂຸມີທີ່ໃດ? ສິກຂາບົດວ່າດ້ວຍການເຮັດທີ່ສົມຄວນມີທີ່ໃດ? ສິກຂາບົດທີ່ວ່າ

ດ້ວຍຢ່າງຍິ່ງມີທີ່ໃດ? ສິກຂາບົດທີ່ພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຊົງບັນຍັດວ່າ ຮູ້ຢູ່ ມີທີ່ໃດ?

## ພຣະຜູ້ມີພຣະພາກເຈົ້າຕັດວ່າ

ສິກຂາບົດວ່າດ້ວຍການຕັດມີ ໖ ສິກຂາບົດວ່າດ້ວຍການທຳລາຍມີ ໑ ສິກຂາບົດວ່າດ້ວຍການຮື້ມີ ໑ ສິກຂາບົດໃນປາຈິດຕິວ່າດ້ວຍບໍ່ມີອັນໃດ?ອື່ນມີ ໔ ສິກຂາບົດວ່າດ້ວຍການສົມມຸດພິກຂຸມີ ໔ ສິກຂາບົດວ່າດ້ວຍການກະທຳທີ່ສົມຄວນມີ ໗ ສິກຂາບົດທີ່ວ່າດ້ວຍຢ່າງຍິ່ງມີ ໑໔ ສິກຂາບົດທີພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຊົງບັນຍັດວ່າ ຮູ້ຢູ່ ມີ ໑໖ ສິກຂາບົດ

## ໔. ອະສາທາຣະນາທິ

## ວ່າດ້ວຍອະສາທາລະນະສິກຂາບົດ ເປັນຕົ້ນ

## ຈຳນວນສິກຂາບົດຂອງພິກຂຸ ເປັນຕົ້ນ

[໓໓໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ
ສິກຂາບົດຂອງພິກຂຸມາສູ່ອຸດເທດທຸກມື້ອຸໂປສົດ(ຍົກຂຶ້ນສູດທຸກມື້ອຸໂປສົດ)
ລວມ ໒໒໐ ສິກຂາບົດ ຂອງພິກຂຸນີມາສູ່ອຸດເທດທຸກມື້ອຸໂປສົດ
ລວມ ໓໐໔ ສິກຂາບົດ

ສິກຂາບົດຂອງພິກຂຸທີ່ບໍ່ທົ່ວໄປກັບພິກຂຸນີ ມີ ໔໖ ສິກຂາບົດ
ສິກຂາບົດຂອງພິກຂຸນີທີ່ບໍ່ທົ່ວໄປກັບພິກຂຸ ມີ ໑໓໐ ສິກຂາບົດ

ສິກຂາບົດຂອງທັງສອງຝ່າຍທີ່ບໍ່ທົ່ວໄປ ມີ ໑໗໖ ສິກຂາບົດ
ສິກຂາບົດຂອງທັງສອງຝ່າຍທີ່ສຶກສາຮ່ວມກັນ ມີ ໑໗໔ ສິກຂາບົດ[9]
ປະເພດສິກຂາບົດຂອງພິກຂຸ

ສິກຂາບົດຂອງພິກຂຸ ໒໒໐ ສິກຂາບົດ ມາສູ່ອຸດເທດທຸກມື້ອຸໂປສົດ
ທ່ານຈົ່ງຟັງສິກຂາບົດເຫຼົ່ານັ້ນ ຕາມລຳດັບຕໍ່ໄປ

ປາຣາຊິກ ໔ ສັງຄາທິເສດ ໑໓ ອະນິຍະຕະ ໒ ນິດສັກຄີ ໓໐
ຂຸດທະກະ ໙໒ ປະຕິເທສະນີຍະ ໔ ເສຂິຍະ ໗໕

ສິກຂາບົດຂອງພິກຂຸ ໒໒໐ ສິກຂາບົດເຫຼົ່ານີ້
ມາສູ່ອຸດເທດທຸກມື້ອຸໂປສົດ

ປະເພດສິກຂາບົດຂອງພິກຂຸນີ

ສິກຂາບົດຂອງພິກຂຸນີ ၃໐໔ ສິກຂາບົດ ມາສູ່ອຸດເທດທຸກມື້ອຸໂປສົດ ທ່ານຈົ່ງຟັງສິກຂາບົດເຫຼົ່ານັ້ນ ຕາມລຳດັບຕໍ່ໄປ

ປາຣາຊິກ ໘ ສັງຄາທິເສດ ໑໗ ນິດສັກຄີ ၃໐

ຊຸດທະກະ ໑໖໖ ປະຕິເທສະນີຍະ ໘ ເສຂິຍະ ໗໕

ສິກຂາບົດຂອງພິກຂຸນີ ၃໐໔ ສິກຂາບົດເຫຼົ່ານີ້

ມາສູ່ອຸດເທດທຸກມື້ອຸໂປສົດ

ອະສາທາລະນະສິກຂາບົດຂອງພິກຂຸ

ສິກຂາບົດຂອງພິກຂຸທີ່ບໍ່ທົ່ວໄປກັບພິກຂຸນີ ມີ ໔໖ ສິກຂາບົດ ທ່ານຈົ່ງຟັງສິກຂາບົດເຫຼົ່ານັ້ນ ຕາມລຳດັບຕໍ່ໄປ

ສັງຄາທິເສດ ໖ ລວມກັບອະນິຍະຕະ ໒ ສິກຂາບົດ ເປັນ ໘

ນິດສັກຄີ ໑໒ ລວມກັນເປັນ ໒໐ ຊຸດທະກະ ໒໒

ປະຕິເທສະນີຍະ ໔ ສິກຂາບົດຂອງພິກຂຸທີ່ບໍ່ທົ່ວໄປກັບພິກຂຸນີນີ້

ລວມ ໔໖ ສິກຂາບົດ°

ອະສາທາລະນະສິກຂາບົດຂອງພິກຂຸນີ

ສິກຂາບົດຂອງພິກຂຸນີທີ່ບໍ່ທົ່ວໄປກັບພິກຂຸ ມີ ໑၃໐ ສິກຂາບົດ ທ່ານຈົ່ງຟັງສິກຂາບົດເຫຼົ່ານັ້ນ ຕາມລຳດັບຕໍ່ໄປ

ປາຣາຊິກ ໔ ສັງຄາທິເສດທີ່ເຮັດໃຫ້ຖືກຂັບອອກຈາກໝູ່ ໑໐

ນິດສັກຄີ ໑໒ ຊຸດທະກະ ໙໖ ປະຕິເທສະນີຍະ ໘

ສິກຂາບົດຂອງພິກຂຸນີທີ່ບໍ່ທົ່ວໄປກັບພິກຂຸນີ້ ລວມ ໑၃໐ ສິກຂາບົດ

ສິກຂາບົດທີ່ບໍ່ທົ່ວໄປແກ່ສອງຝ່າຍ

ສິກຂາບົດຂອງທັງ ໒ ຝ່າຍທີ່ບໍ່ທົ່ວໄປ ມີ ໑໗໖ ສິກຂາບົດ ທ່ານຈົ່ງຟັງສິກຂາບົດເຫຼົ່ານັ້ນ ຕາມລຳດັບຕໍ່ໄປ

ປາຣາຊິກ ໔ ສັງຄາທິເສດ ໑໖ ອະນິຍະຕະ ໒ ນິດສັກຄີ ໒໔

ຊຸດທະກະ ໑໑໘ ປະຕິເທສະນີຍະ ໑໒

ສິກຂາບົດຂອງທັງ ໒ ຝ່າຍທີ່ບໍ່ທົ່ວໄປນີ້ ລວມ ໑໗໖ ສິກຂາບົດ

ສິກຂາບົດຂອງທັງສອງຝ່າຍທີ່ສຶກສາຮ່ວມກັນ

ສິກຂາບົດຂອງທັງ ໒ ຝ່າຍທີ່ສຶກສາຮ່ວມກັນ ມີ ໑໗໔ ສິກຂາບົດ ທ່ານຈົ່ງຟັງສິກຂາບົດເຫຼົ່ານັ້ນ ຕາມລຳດັບຕໍ່ໄປ

ປາຣາຊິກ ໔ ສັງຄາທິເສດ ໗ ນິດສັກຄີ ໑໘

ຊຸດທະກະ ໗໐ ຖ້ວນ ເສຂິຍະ ໗໕

ສິກຂາບົດຂອງທັງ ໒ ຝ່າຍທີ່ສຶກສາຮ່ວມກັນນີ້ ລວມ ໑໗໔ ສິກຂາບົດ
ອາບັດທີ່ລະງັບບໍ່ໄດ້

ບຸກຄົນຜູ້ເປັນປາຣາຊິກ ๘ ຈຳພວກ ເຂົ້າໃກ້ໄດ້ຍາກ
ປຽບຄືຕົ້ນຕານເຫຼືອແຕ່ພື້ນທີ່ ບຸກຄົນຜູ້ເປັນປາຣາຊິກເຫຼົ່ານັ້ນ
ຍ່ອມເປັນຜູ້ບໍ່ງອກງາມ ປຽບຄືໃບໄມ້ຫຼ່ນເຫຼືອງ ແຜ່ນສິລາໜາ
ຄົນຖືກຕັດຫົວ ຕົ້ນຕານຍອດກຸດ ສັນນັ້ນ
ອາບັດທີ່ລະງັບໄດ້

ສັງຄາທິເສດ ໒໓ ອະນິຍະຕະ ໒ ນິດສັກຄີ ໔໒
ປາຈິດຕີ ໑๘๘ ປະຕິເທສະນີຍະ ໑໒
ເສຂິຍະ ໗໕ ລະງັບດ້ວຍສະມະຖະ ໓ ຄື
(໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ຕິນະວັດຖາຣະກະ
ສ່ວນທີ່ຊົງຈຳແນກ

ອຸໂປສົດ ໒ ປະວາຣະນາ ໒ ກຳ ໔
ອັນພຣະຊິນນະເຈົ້າຊົງສະແດງແລ້ວ
ອຸດເທດ ໕ ແລະອຸດເທດ ໔
ຍ່ອມບໍ່ມີໂດຍປະການອື່ນ ແລະກອງອາບັດ ມີ ໗
ອະທິກອນ

ອະທິກອນ ໔ ລະງັບດ້ວຍສະມະຖະ ໗ ຄື ລະງັບດ້ວຍສະມະຖະ ໒
ສະມະຖະ ໔ ສະມະຖະ ໓ ແຕ່ກິດຈາທິກອນ ລະງັບດ້ວຍສະມະຖະ ໑

## ໕. ປາຣາຊິກາທິອາປັດຕິ

## ວ່າດ້ວຍອາບັດປາຣາຊິກ ເປັນຕົ້ນ

### ວິເຄາະປາຣາຊິກ

[໓໓໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ
ທ່ານຈົ່ງຟັງອາບັດທີ່ເຮົາຮຽກວ່າປາຣາຊິກ ຕາມລຳດັບ
ບຸກຄົນເປັນຜູ້ເຄື່ອນ ຜິດ ພາດ ແລະເຫີນຫ່າງຈາກສັດທຳທັງຫຼາຍ
ອັນໜຶ່ງ ແມ່ນສັງວາດກໍບໍ່ມີໃນບຸກຄົນນັ້ນ
ຍ້ອນເຫດນັ້ນ ເຮົາຈຶ່ງຮຽກອາບັດນັ້ນວ່າ ອາບັດປາຣາຊິກ

## ວິເຄາະສັງຄາທິເສດ

ທ່ານຈົ່ງຟັງອາບັດທີ່ເຮົາຮຽກວ່າສັງຄາທິເສດ ຕາມລຳດັບ ສົງຫ່ນັ້ນໃຫ້ປະຣິວາດ ດຶງເຂົ້າຫາອາບັດເດີມ ໃຫ້ມານັດ ອັບພານ ຍ້ອນເຫດນັ້ນ ເຮົາຈຶ່ງຮຽກອາບັດນັ້ນວ່າ ອາບັດສັງຄາທິເສດ

## ວິເຄາະອະນິຍະຕະ

ທ່ານຈົ່ງຟັງອາບັດທີ່ເຮົາຮຽກວ່າອະນິຍະຕະ ຕາມລຳດັບ
ກອງອາບັດຊື່ວ່າອະນິຍະຕະ ຍ້ອນບໍ່ແນ່
ຂໍ້ທີ່ເຮົາບັນຍັດໄວ້ແລ້ວໂດຍບໍ່ແມ່ນສ່ວນດຽວ
ໃນຖານະທັງ ໓ ຖານະແນວໃດແນວໜຶ່ງ ຮຽກວ່າ ອະນິຍະຕະ

## ວິເຄາະຖຸນລັດໄຈ

ທ່ານຈົ່ງຟັງອາບັດທີ່ເຮົາຮຽກວ່າຖຸນລັດໄຈ ຕາມລຳດັບ
ພິກຂຸໃດສະແດງໃນພິກຂຸອົງດຽວ
ແລະພິກຂຸອົງໃດຮັບໂທດນັ້ນ ໂທດສະເໝີດ້ວຍໂທດນັ້ນບໍ່ມີ
ຍ້ອນເຫດນັ້ນ ເຮົາຈຶ່ງຮຽກໂທດນັ້ນວ່າ ຖຸນລັດໄຈ

## ວິເຄາະນິດສັກຄີ

ທ່ານຈົ່ງຟັງອາບັດທີ່ເຮົາຮຽກວ່ານິດສັກຄີ ຕາມລຳດັບ
ພິກຂຸຍອມສະລະແລະສະແດງຂໍ້ລະເມີດໃດພ້ອມກັນໃນທ່າມກາງສົງ
ທ່າມກາງຄະນະ ແລະໃນສຳນັກພິກຂຸໜຶ່ງ
ຍ້ອນເຫດນັ້ນ ເຮົາຈຶ່ງຮຽກຂໍ້ລະເມີດນັ້ນວ່າ ນິດສັກຄີ
ວິເຄາະປາຈິດຕີ

ທ່ານຈົ່ງຟັງອາບັດທີ່ເຮົາຮຽກວ່າປາຈິດຕີ ຕາມລຳດັບ
ຄວາມລະເມີດຍັງກຸສົນທຳໃຫ້ຕົກໄປ ເຮັດອະຣິຍະມັກໃຫ້ເສຍໄປ
ເປັນເຫດເຮັດໃຫ້ຈິດລຸ້ມຫຼົງ
ຍ້ອນເຫດນັ້ນ ເຮົາຈຶ່ງຮຽກຄວາມລະເມີດນັ້ນວ່າ ປາຈິດຕີ

## ວິເຄາະປະຕິເທສະນີຍະ

ທ່ານຈົ່ງຟັງອາບັດທີ່ເຮົາຮຽກວ່າປະຕິເທສະນີຍະ ຕາມລຳດັບ
ພິກຂຸບໍ່ມີຍາດ ຫາໂພຊະນະມາໄດ້ຍາກ
ຮັບມາເອງແລ້ວສັນ ຮຽກວ່າ ຕ້ອງທຳທີ່ໜ້າຕິຕຽນ

ພິກຂຸສັນຢູ່ໃນບ່ອນນິມົນ ພິກຂຸນີບົງການຢູ່ໃນສະຖານທີ່ນິມົນນັ້ນ
ຕາມຄວາມພໍໃຈ ພິກຂຸບໍ່ຫ້າມແຕ່ກັບສັນຢູ່ໃນບ່ອນນັ້ນ
ຮຽກວ່າ ຕ້ອງທຳທີ່ໜ້າຕິຕຽນ

ພິກຂຸບໍ່ອາພາດ ໄປສູ່ຕະກູນທີ່ມີຈິດສັດທາ ແຕ່ມີໂພຄະຊັບໜ້ອຍ
ຜູ້ບໍ່ຮັ່ງມີແລ້ວສັນໃນບ່ອນນັ້ນ ຮຽກວ່າ ຕ້ອງທຳທີ່ໜ້າຕິຕຽນ

ພິກຂຸຢູ່ໃນປ່າທີ່ໜ້າຫວາດຣະແວງມີໄພເປັນຕາຢ້ານ ສັນອາຫານທີ່ເຂົາ
ບໍ່ໄດ້ຮັບແຈ້ງໄວ້ກ່ອນ ໃນບ່ອນນັ້ນ ຮຽກວ່າ ຕ້ອງທຳທີ່ໜ້າຕິຕຽນ

ພິກຂຸນີບໍ່ມີຍາດ ຂໍໂພຊະນະທີ່ຜູ້ອື່ນຍຶດຖືວ່າເປັນຂອງເຮົາ ຄື
ເນີຍໃສ ນ້ຳມັນ ນ້ຳເຜິ້ງ ນ້ຳອ້ອຍ ປາ ຊີ້ນ ນົມສົດ ແລະນົມສົ້ມ
ດ້ວຍຕົນເອງ ຊື່ວ່າ ຕ້ອງທຳທີ່ໜ້າຕິຕຽນໃນສາດສະໜາຂອງພຣະສຸຄົດເຈົ້າ

## ວິເຄາະທຸກກົດ

ທ່ານຈົ່ງຟັງອາບັດທີ່ເຮົາຮຽກວ່າທຸກກົດ ຕາມລຳດັບ
ກຳທີ່ຜິດ ຜິດພາດ ຈັດເປັນກຳທີ່ເຮັດບໍ່ດີ

ຄົນທຳຄວາມຊົ່ວອັນໃດໄວ້ໃນກາງແຈ້ງຫຼືໃນບ່ອນລັບ
ບັນດິດທັງຫຼາຍຍ່ອມປະກາດຄວາມຊົ່ວນັ້ນວ່າ ເຮັດຊົ່ວ
ຍ້ອນເຫດນັ້ນ ເຮົາຈຶ່ງຮຽກອາບັດນັ້ນວ່າ ທຸກກົດ

## ວິເຄາະທຸບພາສິດ

ທ່ານຈົ່ງຟັງອາບັດທີ່ເຮົາຮຽກວ່າທຸບພາສິດ ຕາມລຳດັບ
ບົດໃດອັນພິກຂຸກ່າວບໍ່ດີ ເວົ້າບໍ່ດີ ແລະເສື່ອມເສຍ
ທັງວິນຍູຊົນທັງຫຼາຍຍ່ອມຕິຕຽນບົດໃດ
ຍ້ອນເຫດນັ້ນ ເຮົາຈຶ່ງຮຽກຂໍ້ນັ້ນວ່າ ທຸບພາສິດ

## ວິເຄາະເສຂິຍະ

ທ່ານຈົ່ງຟັງອາບັດທີ່ເຮົາຮຽກວ່າເສຂິຍະ ຕາມລຳດັບ

ຂໍ້ນັ້ນເປັນເບື້ອງຕົ້ນ ເປັນຂໍ້ປະພຶດ ເປັນທາງ
ແລະເປັນຂໍ້ສັງວອນລະວັງຂອງພຣະເສຂະ ຜູ້ກຳລັງສຶກສາ
ຜູ້ດຳເນີນໄປສູ່ເສັ້ນທາງກົງ ສິກຂາທັງຫຼາຍແນວນີ້ບໍ່ມີ
ຍ້ອນເຫດນັ້ນ ເຮົາຈຶ່ງຮຽກຂໍ້ນັ້ນວ່າ ເສຂິຍະ
ອຸປະມາອາບັດ ແລະອະນາບັດ

ຍິ່ງປິດຍິ່ງຮົ່ວ ເປີດແລ້ວບໍ່ຮົ່ວ
ຍ້ອນແນວນັ້ນ ເພິ່ງເປີດສິ່ງທີ່ປິດ
ເມື່ອເປັນດັ່ງນີ້ ສິ່ງທີ່ເປີດນັ້ນກໍຈະບໍ່ຮົ່ວ[໑]

ປ່າໃຫຍ່ເປັນບ່ອນເພິ່ງຂອງໝູ່ມະລຶຄະ ອາກາດເປັນທາງໄປຂອງໝູ່ປັກສີ
ຄວາມເສື່ອມເປັນຄະຕິຂອງທຳທັງຫຼາຍ[໒]
ພຣະນິບພານເປັນພູມທີ່ໄປຂອງພຣະອະຣະຫັນ

**ຄາຖາສັງຄະນິກະ ຈົບ**

## ຫົວຂໍ້ປະຈຳວາຣະ

ສິກຂາບົດທີ່ຊົງບັນຍັດ ນະ ກຸ ພຣະນະຄອນ ວິບັດ ໔ ຢ່າງ
ສິກຂາບົດຂອງພິກຂຸແລະພິກຂຸນີທີ່ທົ່ວໄປ ທີ່ບໍ່ທົ່ວໄປ
ນີ້ເປັນຄຳເວົ້າທີ່ປະມວນໄວ້ດ້ວຍຄາຖາ ເພື່ອອະນຸເຄາະພຣະສາດສະໜາ”

**ຄາຖາສັງຄນິກະ ຈົບ**

# ອະທິກະຣະນະເພທະ

## ວ່າດ້ວຍປະເພດແຫ່ງອະທິກອນ

### ໑. ອຸກໂກຕະນະເພທາທິ

### ວ່າດ້ວຍປະເພດການຣີ້ຟື້ນ ເປັນຕົ້ນ

[໓໔໐] ອະທິກອນມີ ໔ ຢ່າງ ຄື

໑. ວິວາທາທິກອນ ໒. ອະນຸວາທາທິກອນ

໓. ອາປັດຕາທິກອນ ໔. ກິດຈາທິກອນ

ອະທິກອນມີ ໔ ຢ່າງເຫຼົ່ານີ້

ຖາມ : ການຣື້ຟື້ນອະທິກອນ ໔ ຢ່າງນີ້ ມີທີ່ໃດ?

ຕອບ : ການຣື້ຟື້ນອະທິກອນ ໔ ຢ່າງນີ້ ມີ ໑໐ ຢ່າງ ຄື ຣື້ຟື້ນວິວາທາທິກອນມີ ໒ ຣື້ຟື້ນອະນຸວາທາທິກອນມີ ໔ ຣື້ຟື້ນອາປັດຕາທິກອນມີ ໓ ຣື້ຟື້ນກິດຈາທິກອນມີ ໑ ການຣື້ຟື້ນອະທິກອນ ໔ ຢ່າງນີ້ ມີ ໑໐ ຢ່າງເຫຼົ່ານີ້

ຖາມ : ເມື່ອຣື້ຟື້ນວິວາທາທິກອນ ຍ່ອມຣື້ຟື້ນສະມະຖະທີ່ໃດ? ເມື່ອຣື້ຟື້ນອະນຸວາທາທິກອນ ຍ່ອມຣື້ຟື້ນສະມະຖະທີ່ໃດ? ເມື່ອຣື້ຟື້ນອາປັດຕາທິກອນ ຍ່ອມຣື້ຟື້ນສະມະຖະທີ່ໃດ? ເມື່ອຣື້ຟື້ນກິດຈາທິກອນ ຍ່ອມຣື້ຟື້ນສະມະຖະທີ່ໃດ?

ຕອບ : ເມື່ອຣື້ຟື້ນວິວາທາທິກອນ ຍ່ອມຣື້ຟື້ນສະມະຖະ ໒ ຢ່າງ ເມື່ອຣື້ຟື້ນອະນຸວາທາທິກອນ ຍ່ອມຣື້ຟື້ນສະມະຖະ ໔ ຢ່າງ ເມື່ອຣື້ຟື້ນອາປັດຕາທິກອນ ຍ່ອມຣື້ຟື້ນສະມະຖະ ໓ ຢ່າງ ເມື່ອຣື້ຟື້ນກິດຈາທິກອນ ຍ່ອມຣື້ຟື້ນສະມະຖະຢ່າງດຽວ

### ວ່າດ້ວຍການຣື້ຟື້ນອະທິກອນ ເປັນຕົ້ນ

[໓໔໑] ຖາມ : ການຣື້ຟື້ນມີທີ່ໃດ? ດ້ວຍອາການທີ່ໃດ? ຈຶ່ງນັບວ່າຣື້ຟື້ນ ບຸກຄົນປະກອບດ້ວຍອົງທີ່ໃດ? ຈຶ່ງຣື້ຟື້ນອະທິກອນໄດ້ ບຸກຄົນຈັກຈຳພວກ ເມື່ອຣື້ຟື້ນອະທິກອນ ຍ່ອມຕ້ອງອາບັດ

ຕອບ : ການຣື້ຟື້ນມີ ໑໒ ຢ່າງ ດ້ວຍອາການ ໑໐ ຈຶ່ງນັບວ່າຣື້ຟື້ນ ບຸກຄົນປະກອບດ້ວຍອົງ ໕ ຈຶ່ງຣື້ຟື້ນອະທິກອນໄດ້ ບຸກຄົນ ໔ ຈຳພວກ ເມື່ອຣື້ຟື້ນອະທິກອນ ຍ່ອມຕ້ອງອາບັດ

## ການຮື້ຟື້ນມີ ໑໘ ຢ່າງ ຄື

໑. ຮື້ຟື້ນກຳທີ່ສົງຍັງບໍ່ໄດ້ເຮັດ
໒. ຮື້ຟື້ນກຳທີ່ສົງເຮັດບໍ່ດີ
໓. ຮື້ຟື້ນກຳທີ່ສົງຄວນເຮັດໃໝ່
໔. ຮື້ຟື້ນກຳທີ່ສົງຍັງເຮັດບໍ່ສຳເລັດ
໕. ຮື້ຟື້ນກຳທີ່ສົງເຮັດສຳເລັດແລ້ວບໍ່ດີ
໖. ຮື້ຟື້ນກຳທີ່ສົງຄວນເຮັດອີກ
໗. ຮື້ຟື້ນກຳທີ່ສົງຍັງບໍ່ໄດ້ວິນິດໄສ
໘. ຮື້ຟື້ນກຳທີ່ສົງວິນິດໄສບໍ່ຖືກຕ້ອງ
໙. ຮື້ຟື້ນກຳທີ່ສົງຄວນວິນິດໄສໃໝ່
໑໐. ຮື້ຟື້ນກຳທີ່ຍັງບໍ່ລະງັບ
໑໑. ຮື້ຟື້ນກຳທີ່ລະງັບແລ້ວບໍ່ດີ
໑໒. ຮື້ຟື້ນກຳທີ່ຄວນລະງັບໃໝ່

ການຮື້ຟື້ນມີ ໑໒ ຢ່າງເຫຼົ່ານີ້

## ດ້ວຍອາການ ໑໐ ຢ່າງ ຈຶ່ງນັບວ່າຮື້ຟື້ນ ຄື

໑. ຮື້ຟື້ນອະທິກອນທີ່ເກີດໃນບ່ອນນັ້ນ
໒. ຮື້ຟື້ນອະທິກອນທີ່ເກີດໃນບ່ອນນັ້ນແຕ່ລະງັບແລ້ວ
໓. ຮື້ຟື້ນອະທິກອນໃນລະຫວ່າງທາງ
໔. ຮື້ຟື້ນອະທິກອນທີ່ລະງັບແລ້ວໃນລະຫວ່າງທາງ
໕. ຮື້ຟື້ນອະທິກອນອັນໄປແລ້ວໃນບ່ອນນັ້ນ
໖. ຮື້ຟື້ນອະທິກອນອັນໄປແລ້ວແຕ່ລະງັບແລ້ວ
໗. ຮື້ຟື້ນສະຕິວິໄນ
໘. ຮື້ຟື້ນອະມູລະຫະວິໄນ
໙. ຮື້ຟື້ນຕັດສະປາປີຍະສິກາ
໑໐. ຮື້ຟື້ນຕິນະວັດຖາຣະກະ

ດ້ວຍອາການ ໑໐ ຢ່າງນີ້ ຈຶ່ງນັບວ່າຮື້ຟື້ນ

## ບຸກຄົນປະກອບດ້ວຍອົງ ໔ ຈຶ່ງຮື້ຟື້ນອະທິກອນໄດ້ ຄື

໑. ລຳອຽງຍ້ອນຮັກຈຶ່ງຮື້ຟື້ນອະທິກອນໄດ້
໒. ລຳອຽງຍ້ອນຊັງຈຶ່ງຮື້ຟື້ນອະທິກອນໄດ້
໓. ລຳອຽງຍ້ອນຫຼົງຈຶ່ງຮື້ຟື້ນອະທິກອນໄດ້
໔. ລຳອຽງຍ້ອນຢ້ານຈຶ່ງຮື້ຟື້ນອະທິກອນໄດ້

ບຸກຄົນປະກອບດ້ວຍອົງ ໔ ນີ້ ຈຶ່ງຮື້ຟື້ນອະທິກອນໄດ້

## ບຸກຄົນ ໔ ຈຳພວກ ເມື່ອຮື້ຟື້ນອະທິກອນ ຍ່ອມຕ້ອງອາບັດ ຄື

໑. ພິກຂຸຜູ້ອຸປະສົມບົດໃນມື້ນັ້ນແລ້ວຮື້ຟື້ນອະທິກອນ ຕ້ອງອາບັດປາຈິດຕີທີ່ຮື້ຟື້ນ

໒. ພິກຂຸເປັນອາຄັນຕຸກະຮື້ຟື້ນອະທິກອນ ຕ້ອງອາບັດປາຈິດຕີທີ່ຮື້ຟື້ນ

໓. ພິກຂຸຜູ້ກະທຳຮື້ຟື້ນອະທິກອນ ຕ້ອງອາບັດປາຈິດຕີທີ່ຮື້ຟື້ນ

໔. ພິກຂຸຜູ້ໃຫ້ສັນທະຮື້ຟື້ນອະທິກອນ ຕ້ອງອາບັດປາຈິດຕີທີ່ຮື້ຟື້ນ

ບຸກຄົນ ໔ ຈຳພວກນີ້ ເມື່ອຮື້ຟື້ນອະທິກອນ ຍ່ອມຕ້ອງອາບັດ

## ໒. ອະທິກະຣະນະນິທານາທິ

## ວ່າດ້ວຍນິທານແຫ່ງອະທິກອນ ເປັນຕົ້ນ

[໓໔໒] ຖາມ : ວິວາທາທິກອນ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ອະນຸວາທາທິກອນ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ອາປັດຕາທິກອນ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ກິດຈາທິກອນ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ຕອບ : ວິວາທາທິກອນ ມີຜິດຖຽງເປັນນິທານ ມີຜິດຖຽງເປັນສະມຸໄທ ມີຜິດຖຽງເປັນຊາດ ມີຜິດຖຽງເປັນແດນເກີດກ່ອນ ມີຜິດຖຽງເປັນອົງ ມີຜິດຖຽງເປັນສະມຸດຖານ

ອະນຸວາທາທິກອນ ມີອະນຸວາທະເປັນນິທານ ມີອະນຸວາທະເປັນສະມຸໄທ ມີອະນຸວາທະເປັນຊາດ ມີອະນຸວາທະເປັນແດນເກີດກ່ອນ ມີອະນຸວາທະເປັນອົງ ມີອະນຸວາທະເປັນສະມຸດຖານ

ອາປັດຕາທິກອນ ມີອາບັດເປັນນິທານ ມີອາບັດເປັນສະມຸໄທ ມີອາບັດເປັນຊາດ

ມີອາບັດເປັນແດນເກີດກ່ອນ ມີອາບັດເປັນອົງ ມີອາບັດເປັນສະມຸດຖານ

ກິດຈາທິກອນ ມີກິດເປັນນິທານ ມີກິດເປັນສະມຸໄທ ມີກິດເປັນຊາດ ມີກິດເປັນແດນ w ເກີດກ່ອນ ມີກິດເປັນອົງ ມີກິດເປັນສະມຸດຖານ

ຖາມ : ວິວາທາທິກອນ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ ເປັນສະມຸດຖານ

ອະນຸວາທາທິກອນ ຯລຯ ອາປັດຕາທິກອນ ຯລຯ ກິດຈາທິກອນ ຯລຯ

ຕອບ : ວິວາທາທິກອນ ມີເຫດເປັນນິທານ ມີເຫດເປັນສະມຸໄທ ມີເຫດເປັນຊາດ ມີເຫດ ເປັນແດນເກີດກ່ອນ ມີເຫດເປັນອົງ ມີເຫດເປັນສະມຸດຖານ

ອະນຸວາທາທິກອນ ຯລຯ ອາປັດຕາທິກອນ ຯລຯ ກິດຈາທິກອນ ຯລຯ

ຖາມ : ວິວາທາທິກອນ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນ ຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະ ມຸດຖານ

ອະນຸວາທາທິກອນ ຯລຯ ອາປັດຕາທິກອນ ຯລຯ ກິດຈາທິກອນ ຯລຯ

ຕອບ : ວິວາທາທິກອນ ມີປັດໄຈເປັນນິທານ ມີປັດໄຈເປັນສະມຸໄທ ມີປັດໄຈເປັນຊາດ ມີປັດໄຈເປັນແດນເກີດກ່ອນ ມີປັດໄຈເປັນອົງ ມີປັດໄຈເປັນສະມຸດຖານ

ອະນຸວາທາທິກອນ ຯລຯ ອາປັດຕາທິກອນ ຯລຯ ກິດຈາທິກອນ ຯລຯ

## ໓. ອະທິກະຣະນະມູລາທິ

## ວ່າດ້ວຍມູນເຫດອະທິກອນ ເປັນຕົ້ນ

[໓໔໓] ຖາມ : ອະທິກອນ ໔ ມີມູນເຫດທໍ່ໃດ? ມີສະມຸດຖານທໍ່ໃດ?

ຕອບ : ອະທິກອນ ໔ ມີມູນເຫດ ໓໓ ມີສະມຸດຖານ ໓໓

ຖາມ : ອະທິກອນ ໔ ມີມູນເຫດ ໓໓ ຢ່າງໃດ

ຕອບ : ວິວາທາທິກອນ ມີມູນເຫດ ໑໒ ອະນຸວາທາທິກອນ ມີມູນເຫດ ໑໔ ອາປັດຕາທິ ກອນ ມີມູນເຫດ ໖ ກິດຈາທິກອນ ມີມູນເຫດດຽວຄືສົງ ລວມອະທິກອນ ໔ ມີ ມູນເຫດ ໓໓ ນີ້

ຖາມ : ອະທິກອນ ໔ ມີສະມຸດຖານ ໓໓ ຢ່າງໃດ

ຕອບ : ວິວາທາທິກອນ ມີເລື້ອງທຳຄວາມແຕກກັນ ໑໘ ເລື້ອງ ເປັນສະມຸດຖານ ອະນຸ ວາທາທິກອນ ມີວິບັດ ໔ ເປັນສະມຸດຖານ ອາປັດຕາທິກອນ ມີອາບັດ ໗ ກອງ ເປັນ ສະມຸດຖານ ກິດຈາທິກອນ ມີກຳ ໔ ເປັນສະມຸດຖານ ລວມອະທິກອນ ໔ ມີສະມຸດຖານ ໓໓ ນີ້

## ໔. ອະທິກະຣະນະປັດຈະຍາປັດຕິ

## ວ່າດ້ວຍອາບັດມີອະທິກອນເປັນປັດໄຈ

[໓໔໔] ຖາມ : ວິວາທາທິກອນ ເປັນອາບັດຫຼືອະນາບັດ

ຕອບ : ວິວາທາທິກອນ ເປັນອະນາບັດ

ຖາມ : ກໍຍ້ອນວິວາທາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດບໍ

ຕອບ : ຖືກແລ້ວ ຍ້ອນວິວາທາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດ

ຖາມ : ຍ້ອນວິວາທາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນວິວາທາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດ ໒ ຢ່າງ ຄື

໑. ດ່າອຸປະສໍາບັນຕ້ອງອາບັດປາຈິດຕີ

໒. ດ່າອະນຸປະສໍາບັນຕ້ອງອາບັດທຸກກົດ

ຍ້ອນວິວາທາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດ ໒ ຢ່າງນີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດແນວໃດ? ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ? ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດໃດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານທໍ່ໃດ? ລະງັບດ້ວຍອະທິກອນທໍ່ໃດ? ໃນຖານະທໍ່ໃດ? ດ້ວຍສະມະຖະທໍ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໑ ຢ່າງ ຄື ອາຈາຣະວິບັດ ບັນດາອະທິກອນ ໔ ເປັນອາປັດຕາທິກອນ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໒ ກອງ ຄື (໑) ກອງອາບັດປາຈິດຕີ (໒) ກອງອາບັດທຸກກົດ

ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ລະງັບດ້ວຍອະທິກອນ ໑ ຄື ກິດຈາທິກອນ ລະງັບໃນ ໓ ຖານະ ຄື ທ່າມກາງສົງ ທ່າມກາງຄະນະ ສໍານັກບຸກຄົນ ລະງັບດ້ວຍສະມະຖະ ໓ ຄື (໑) ສໍາມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສໍາມຸຂາວິໄນແລະຕິນະວັດຖາຣະກະ

## ວ່າດ້ວຍອະນຸວາທາທິກອນເປັນອາບັດຫຼືອະນາບັດ ເປັນຕົ້ນ

[໓໔໕] ຖາມ : ອະນຸວາທາທິກອນ ເປັນອາບັດຫຼືອະນາບັດ

ຕອບ : ອະນຸວາທາທິກອນ ເປັນອະນາບັດ

ຖາມ : ກໍຍ້ອນອະນຸວາທາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດບໍ

ຕອບ : ຖືກແລ້ວ ຍ້ອນອະນຸວາທາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດ

ຖາມ : ຍ້ອນອະນຸວາທາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນອະນຸວາທາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດ ໓ ຢ່າງ ຄື

໑. ໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກທີ່ບໍ່ມີມູນ ຕ້ອງອາບັດສັງຄາທິເສດ

໒. ໃສ່ຄວາມພິກຂຸດ້ວຍອາບັດສັງຄາທິເສດທີ່ບໍ່ມີມູນ ຕ້ອງອາບັດປາຈິດຕີ

໓. ໃສ່ຄວາມພິກຂຸດ້ວຍອາບັດປາຈິດຕີທີ່ບໍ່ມີມູນ ຕ້ອງອາບັດທຸກກົດ

ຍ້ອນອະນຸວາທາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດ ໓ ຢ່າງນີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ? ບັນດາກອງອາບັດ ៗ ກອງ ຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານທີ່ໃດ? ລະງັບດ້ວຍອະທິກອນທີ່ໃດ? ໃນຖານະທີ່ໃດ? ດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງຈັດເປັນວິບັດ ໒ ຢ່າງ ຄື (໑) ສີລະວິບັດ (໒) ອາຈາຣະວິບັດ ບັນດາອະທິກອນ ໔ ເປັນອາບັດຕາທິກອນ ບັນດາ ກອງອາບັດ ៗ ກອງ ຈັດເຂົ້າກອງອາບັດ ໓ ກອງ ຄື (໑) ກອງອາບັດສັງຄາທິເສດ (໒) ກອງອາບັດປາຈິດຕີ (໓) ກອງອາບັດທຸກກົດ ບັນດາສະມຸດຖານແຫ່ງອາບັດ ໖

ສະມຸດຖານ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ອາບັດໜັກລະງັບດ້ວຍອະທິກອນ ໑ ຄື

ກິດຈາທິກອນ ລະງັບໃນ ໑ ຖານະ ຄື ທ່າມກາງສົງ ລະງັບດ້ວຍສະມະຖະ ໒ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ ອາບັດເບົາລະງັບດ້ວຍອະທິກອນ ໑ ຄື ກິດຈາທິກອນ ລະງັບໃນ ໓ ຖານະ ຄື ໃນທ່າມກາງສົງ ໃນທ່າມກາງຄະນະ ໃນສຳນັກບຸກຄົນ ລະງັບດ້ວຍສະມະຖະ ໓ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນແລະຕິນະວັດຖາຣະກະ

## ວ່າດ້ວຍອາປັດຕາທິກອນເປັນອາບັດຫຼືອະນາບັດ ເປັນຕົ້ນ

[໓໒໖] ຖາມ : ອາປັດຕາທິກອນ ເປັນອາບັດຫຼືອະນາບັດ

ຕອບ : ອາປັດຕາທິກອນ ເປັນອະນາບັດ

ຖາມ : ກໍຍ້ອນອາປັດຕາທິກອນເປັນປັດໄຈ ຈຶ່ງຕ້ອງອາບັດບໍ

ຕອບ : ຖືກແລ້ວ ຍ້ອນອາປັດຕາທິກອນເປັນປັດໄຈ ຈຶ່ງຕ້ອງອາບັດ

ຖາມ : ຍ້ອນອາປັດຕາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດທີ່ໃດ?

ຕອບ : ຍ້ອນອາປັດຕາທິກອນເປັນປັດໄຈ ຈຶ່ງຕ້ອງອາບັດ ໔ ຢ່າງ ຄື

໑. ພິກຂຸນີ ຮູ້ຢູ່ ປົກປິດພິກຂຸນີຜູ້ຕ້ອງອາບັດປາຣາຊິກ ຕ້ອງອາບັດປາຣາຊິກ

໒. ສົງໄສປົກປິດໄວ້ ຕ້ອງອາບັດຖຸນລັດໄຈ

໓. ພິກຂຸປົກປິດອາບັດສັງຄາທິເສດ ຕ້ອງອາບັດປາຈິດຕີ

໔. ປົກປິດອາຈາຣະວິບັດ ຕ້ອງອາບັດທຸກກົດ

ຍ້ອນອາປັດຕາທິກອນເປັນປັດໄຈ ຈຶ່ງຕ້ອງອາບັດ ໔ ຢ່າງນີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ? ບັນດາກອງອາບັດ ៗ ກອງ ຈັດເຂົ້າກອງອາ

ບັດທໍ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານທໍ່ໃດ? ລະງັບດ້ວຍອະທິກອນທໍ່ໃດ? ໃນຖານະທໍ່ໃດ? ດ້ວຍສະມະຖະທໍ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື (໑) ສີລະວິບັດ (໒) ອາຈາຣະວິບັດ ບັນດາອະທິກອນ ໔ ເປັນອາປັດຕາທິກອນ ບັນດາກອງອາບັດ ໗ ກອງ ຈັດເຂົ້າອາບັດ ໔ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດຖຸນລັດໄຈ (໓) ກອງອາບັດປາຈິດຕີ (໔) ກອງອາບັດທຸກກົດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ອາບັດທີ່ບໍ່ມີສ່ວນເຫຼືອລະງັບດ້ວຍອະທິກອນໃດບໍ່ໄດ້ ລະງັບໃນຖານະໃດບໍ່ໄດ້ ລະງັບດ້ວຍສະມະຖະໃດບໍ່ໄດ້ ອາບັດເບົາລະງັບດ້ວຍອະທິກອນ ໑ ຄື ກິດຈາທິກອນ ລະງັບໃນ ໓ ຖານະ ຄື ໃນທ່າມກາງສົງ ໃນທ່າມກາງຄະນະ ໃນສຳນັກບຸກຄົນ ລະງັບດ້ວຍສະມະຖະ ໓ ຄື (໑) ສຳມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສຳມຸຂາວິໄນແລະຕິນະວັດຖາຣະກະ

## ວ່າດ້ວຍກິດຈາທິກອນເປັນອາບັດຫຼືອະນາບັດ ເປັນຕົ້ນ

[໓໔໗] ຖາມ : ກິດຈາທິກອນ ເປັນອາບັດຫຼືອະນາບັດ

ຕອບ : ກິດຈາທິກອນ ເປັນອະນາບັດ

ຖາມ : ກໍຍ້ອນກິດຈາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດບໍ

ຕອບ : ຖືກແລ້ວ ຍ້ອນກິດຈາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດ

ຖາມ : ຍ້ອນກິດຈາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນກິດຈາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດ ໕ ຢ່າງ ຄື

໑. ພິກຂຸນີຜູ້ປະພຶດຕາມພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຈົບຍັດຕິຕ້ອງອາບັດທຸກກົດ

໒. ຈົບກຳວາຈາ ໒ ຄັ້ງຕ້ອງອາບັດຖຸນລັດໄຈ

໓. ຈົບກຳວາຈາຄັ້ງສຸດທ້າຍຕ້ອງອາບັດປາຣາຊິກ

໔. ພິກຂຸປະພຶດຕາມພິກຂຸຜູ້ທຳລາຍສົງ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດສັງຄາທິເສດ

໕. ພິກຂຸບໍ່ລະທິດຖິບາບ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດປາຈິດຕີ

ຍ້ອນກິດຈາທິກອນເປັນປັດໄຈ ພິກຂຸຈຶ່ງຕ້ອງອາບັດ ໕ ຢ່າງນີ້

ຖາມ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດທີ່ໃດ? ບັນດາອະທິກອນ ໔ ຢ່າງ ເປັນອະທິກອນແນວໃດ? ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດທີ່ໃດ? ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານເກີດດ້ວຍສະມຸດຖານທີ່ໃດ? ລະງັບດ້ວຍອະທິກອນທີ່ໃດ? ໃນຖານະທີ່ໃດ? ດ້ວຍສະມະຖະທີ່ໃດ?

ຕອບ : ອາບັດເຫຼົ່ານັ້ນ ບັນດາວິບັດ ໔ ຢ່າງ ຈັດເປັນວິບັດ ໒ ຢ່າງ ຄື (໑) ສີລະວິບັດ (໒) ອາຈາຣະວິບັດ ບັນດາອະທິກອນ ໔ ຢ່າງ ເປັນອາປັດຕາທິກອນ ບັນດາກອງອາບັດ ໗ ກອງ ຈັດເຂົ້າກອງອາບັດ ໕ ກອງ ຄື (໑) ກອງອາບັດປາຣາຊິກ (໒) ກອງອາບັດສັງຄາທິເສດ (໓) ກອງອາບັດຖຸນລັດໄຈ (໔) ກອງອາບັດປາຈິດຕີ (໕) ກອງອາບັດທຸກກົດ ບັນດາສະມຸດຖານແຫ່ງອາບັດ ໖ ສະມຸດຖານ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ ອາບັດທີ່ບໍ່ມີສ່ວນເຫຼືອ ລະງັບດ້ວຍອະທິກອນໃດບໍ່ໄດ້ ລະງັບໃນຖານະໃດບໍ່ໄດ້ ລະງັບດ້ວຍສະມະຖະໃດບໍ່ໄດ້ ອາບັດໜັກລະງັບດ້ວຍອະທິກອນດຽວ ຄື ກິດຈາທິກອນ ລະງັບໃນຖານະດຽວ ຄື ທ່າມກາງສົງ ລະງັບດ້ວຍສະມະຖະ ໒ ຄື (໑) ສໍາມຸຂາວິໄນ (໒) ປະຕິນຍາຕະກະຣະນະ ອາບັດເບົາລະງັບດ້ວຍອະທິກອນດຽວ ຄື ກິດຈາທິກອນ ລະງັບໃນ ໓ ຖານະ ຄື ໃນທ່າມກາງສົງ ໃນທ່າມກາງຄະນະ ໃນສໍານັກບຸກຄົນ ລະງັບດ້ວຍສະມະຖະ ໓ ຄື (໑) ສໍາມຸຂາວິໄນ (໒) ປະຕິນຍາຕະກະຣະນະ (໓) ສໍາມຸຂາວິໄນແລະຕິນະວັດຖາຣະກະ

## ໕. ອະທິກະຣະນາທິປະປາຍະ

## ວ່າດ້ວຍອະທິບາຍອະທິກອນ

## ວິວາທາທິກອນ

[໓໔໗] ຖາມ : ວິວາທາທິກອນ ເປັນອະນຸວາທາທິກອນ ເປັນອາປັດຕາທິກອນ ເປັນກິດຈາທິກອນບໍ

ຕອບ : ວິວາທາທິກອນ ບໍ່ເປັນອະນຸວາທາທິກອນ ອາປັດຕາທິກອນ ກິດຈາທິກອນ ແຕ່ຍ້ອນວິວາທາທິກອນເປັນປັດໄຈ ອະນຸວາທາທິກອນ ອາປັດຕາທິກອນ ກິດຈາທິກອນ ຍ່ອມມີໄດ້ ປຽບຄືອັນໃດ? ປຽບຄື ພິກຂຸທັງຫຼາຍໃນທໍາວິໄນນີ້ຜິດຖຽງກັນວ່ານີ້ເປັນທໍາ ນີ້ເປັນອະທໍາ ຯລຯ ນີ້ອາບັດຊົ່ວຫຍາບ ນີ້ອາບັດບໍ່ຊົ່ວຫຍາບ ຄວາມໝາງໃຈ ຄວາມຜິດຖຽງ ຄວາມແກ່ງແຍ່ງ ຄວາມວິວາດ ການກ່າວຕ່າງກັນ ການກ່າວໂດຍປະການອື່ນ ການເວົ້າເພື່ອຄວາມກັດກຸ້ມ ຄວາມ

ໝາຍໝັ້ນໃນເລື້ອງນັ້ນ ນີ້ຮຽກວ່າ ວິວາທາທິກອນ ສິ່ງຜິດຖຽງກັນໃນຍ້ອນວິວາທາທິກອນ ຈັດເປັນວິວາທາທິກອນ ເມື່ອຜິດຖຽງກັນ ຍ່ອມໂຈດ ຈັດເປັນອະນຸວາທາທິກອນ ເມື່ອໂຈດຍ່ອມຕ້ອງອາບັດ ຈັດເປັນອາປັດຕາທິກອນ ສິ່ງເຮັດກຳຕາມອາບັດນັ້ນ ຈັດເປັນກິດຈາທິກອນ ຍ້ອນວິວາທາທິກອນເປັນປັດໄຈ ອະນຸວາທາທິກອນ ອາປັດຕາທິກອນ ກິດຈາທິກອນ ຍ່ອມມີແນວນີ້

## ອະນຸວາທາທິກອນ

ຖາມ : ອະນຸວາທາທິກອນ ເປັນອາປັດຕາທິກອນ ເປັນກິດຈາທິກອນ ເປັນວິວາທາທິ-ກອນບໍ

ຕອບ : ອະນຸວາທາທິກອນ ບໍ່ເປັນອາປັດຕາທິກອນ ກິດຈາທິກອນ ວິວາທາທິກອນ ແຕ່ຍ້ອນອະນຸວາທາທິກອນເປັນປັດໄຈ ອາປັດຕາທິກອນ ກິດຈາທິກອນ ວິວາທາທິກອນ ຍ່ອມມີໄດ້ ປຽບຄືອັນໃດ? ປຽບຄືພິກຂຸທັງຫຼາຍໃນທຳວິໄນນີ້ ໂຈດພິກຂຸດ້ວຍສີລະວິບັດ ອາຈາຣະວິບັດ ທິດຖິວິບັດ ຫຼືອາຊີວະວິບັດ ການໂຈດ ການກ່າວຫາ ການຟ້ອງຮ້ອງ ການປະທ້ວງ ຄວາມເປັນຜູ້ຄ້ອຍຕາມ ການກະທຳຄວາມພະຍາຍາມໂຈດ ການໃຫ້ກຳລັງສະໜັບສະໜູນໃນເລື້ອງນັ້ນ ນີ້ຮຽກວ່າ ອະນຸວາທາທິກອນ ສິ່ງຜິດຖຽງກັນຍ້ອນອະນຸວາທາທິກອນ ຈັດເປັນວິວາທາທິກອນ ເມື່ອຜິດຖຽງກັນ ຍ່ອມໂຈດ ຈັດເປັນອະນຸວາທາທິກອນ ເມື່ອໂຈດຍ່ອມຕ້ອງອາບັດ ຈັດເປັນອາປັດຕາທິກອນ ສິ່ງເຮັດກຳຕາມອາບັດນັ້ນ ຈັດເປັນກິດຈາທິກອນ ຍ້ອນອະນຸວາທາທິກອນເປັນປັດໄຈ ອາປັດຕາທິກອນ ກິດຈາທິກອນ ວິວາທາທິກອນ ຍ່ອມມີແນວນີ້

## ອາປັດຕາທິກອນ

ຖາມ : ອາປັດຕາທິກອນ ເປັນກິດຈາທິກອນ ເປັນວິວາທາທິກອນ ເປັນອະນຸວາທາທິກອນບໍ

ຕອບ : ອາປັດຕາທິກອນ ບໍ່ເປັນກິດຈາທິກອນ ວິວາທາທິກອນ ອະນຸວາທາທິກອນ ແຕ່ຍ້ອນອາປັດຕາທິກອນເປັນປັດໄຈ ກິດຈາທິກອນ ວິວາທາທິກອນ ອະນຸວາທາທິກອນ ຍ່ອມມີໄດ້ ປຽບຄືອັນໃດ? ປຽບຄືອາບັດທັງ ໕ ກອງ ຊື່ອາປັດຕາທິກອນ ອາບັດທັງ ໗ ກອງ ຊື່ອາປັດຕາທິກອນ ນີ້ຮຽກວ່າອາປັດຕາທິກອນ ສິ່ງຜິດຖຽງກັນໃນຍ້ອນອະນຸວາທາທິກອນ ຈັດເປັນວິວາທາທິກອນ ເມື່ອຜິດຖຽງກັນ ຍ່ອມໂຈດ ຈັດເປັນອະນຸວາທາທິກອນ ເມື່ອໂຈດຍ່ອມຕ້ອງອາບັດ ຈັດເປັນອາປັດຕາທິກອນ ສິ່ງເຮັດກຳຕາມອາບັດນັ້ນ ຈັດເປັນກິດຈາທິກອນ

ຍ້ອນອາປັດຕາທິກອນເປັນປັດໄຈ ກິດຈາທິກອນ ວິວາທາທິກອນ ອະນຸວາທາທິກອນ ຍ່ອມມີແນວນີ້

## ກິດຈາທິກອນ

ຖາມ : ກິດຈາທິກອນ ເປັນວິວາທາທິກອນ ເປັນອະນຸວາທາທິກອນ ເປັນອາ ປັດຕາທິກອນບໍ

ຕອບ : ກິດຈາທິກອນ ບໍ່ເປັນວິວາທາທິກອນ ອະນຸວາທາທິກອນ ອາປັດຕາທິກອນ ແຕ່ຍ້ອນກິດຈາທິກອນເປັນປັດໄຈ ວິວາທາທິກອນ ອະນຸວາທາທິກອນ ອາປັດຕາທິກອນ ຍ່ອມມີໄດ້ ປຽບຄືອັນໃດ? ປຽບຄືຄວາມມີແຫ່ງກິດ ຄວາມມີກິດອັນຈະເພິ່ງເຮັດຂອງສົງ ຄື ອະປະໂລກະນະກຳ ຍັດຕິກຳ ຍັດຕິທຸຕິຍະກຳ ຍັດຕິຈະຕຸດຖະກຳ ນີ້ຮຽກວ່າກິດຈາທິກອນ ສົງຜິດຖຽງກັນຍ້ອນອະນຸວາທາທິກອນ ຈັດເປັນວິວາທາທິກອນ ເມື່ອຜິດຖຽງກັນ ຍ່ອມໂຈດ ຈັດເປັນອະນຸວາທາທິກອນ ເມື່ອໂຈດຍ່ອມຕ້ອງອາບັດ ຈັດເປັນອາປັດຕາທິກອນ ສົງເຮັດກຳຕາມອາບັດນັ້ນ ຈັດເປັນກິດຈາທິກອນ ຍ້ອນກິດຈາທິກອນເປັນປັດໄຈ ວິວາທາທິກອນ ອະນຸວາທາທິກອນ ອາປັດຕາທິກອນຍ່ອມມີແນວນີ້

## ໙. ປຸດສາວາຣະ

## ວ່າດ້ວຍວາຣະແຫ່ງການຖາມ

## ອະທິບາຍສະມະຖະ

[໓໔໗] ສະຕິວິໄນມີໃນບ່ອນໃດ ສຳມຸຂາວິໄນມີໃນບ່ອນນັ້ນ ສຳມຸຂາວິໄນມີໃນບ່ອນໃດ ສະຕິວິໄນມີໃນບ່ອນນັ້ນ ອະມູລະຫະວິໄນມີໃນບ່ອນໃດ ສຳມຸຂາວິໄນມີໃນບ່ອນນັ້ນ ສຳມຸຂາວິໄນມີໃນບ່ອນໃດ ອະມູລະຫະວິໄນມີໃນບ່ອນນັ້ນ ປະຕິນຍາຕະກະຣະນະມີໃນບ່ອນໃດ ສຳມຸຂາວິໄນມີໃນບ່ອນນັ້ນ ສຳມຸຂາວິໄນມີໃນບ່ອນໃດ ປະຕິນຍາຕະກະຣະນະມີໃນບ່ອນນັ້ນ ເຍພຸຍຍະສິກາມີໃນບ່ອນໃດ ສຳມຸຂາວິໄນມີໃນບ່ອນນັ້ນ ສຳມຸຂາວິໄນມີໃນບ່ອນໃດ ເຍພຸຍຍະສິກາມີໃນບ່ອນນັ້ນ ຕັດສະປາປິຍະສິກາມີໃນບ່ອນໃດ ສຳມຸຂາວິໄນມີໃນບ່ອນນັ້ນ ສຳມຸຂາວິໄນມີໃນບ່ອນໃດ ຕັດສະປາປິຍະສິກາມີໃນບ່ອນນັ້ນ ຕິນະວັດຖາຣະກະມີໃນບ່ອນໃດ ສຳມຸຂາວິໄນມີໃນບ່ອນນັ້ນ ສຳມຸຂາວິໄນມີໃນບ່ອນໃດ ຕິນະວັດຖາຣະກະມີໃນບ່ອນນັ້ນ

## ໗. ວິສັດຊະນາວາຣະ

## ວ່າດ້ວຍວາຣະແຫ່ງການຕອບ

### ອະທິກອນລະງັບ

[໙໔໐] ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະສະຕິວິໄນ ສະໄໝນັ້ນ ສະຕິວິໄນມີໃນບ່ອນໃດ ສຳມຸຂາວິໄນມີໃນບ່ອນນັ້ນ ສຳມຸຂາວິໄນມີໃນບ່ອນໃດ ສະຕິວິໄນມີໃນບ່ອນນັ້ນ ແຕ່ໃນບ່ອນນັ້ນບໍ່ມີອະມູລະຫະວິໄນ ປະຕິນຍາຕະກະຣະນະ ເຍພຸຍຍະສິກາ ຕັດສະປາປິຍະສິກາ ແລະຕິນະວັດຖາຣະກະ

ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະອະມູລະຫະວິໄນ ຯລຯ

ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະປະຕິນຍາຕະກະຣະນະ ຯລຯ

ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະເຍພຸຍຍະສິກາ ຯລຯ

ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະຕັດສະປາປິຍະສິກາ ຯລຯ

ສະໄໝໃດ ອະທິກອນລະງັບດ້ວຍສຳມຸຂາວິໄນແລະຕິນະວັດຖາຣະກະ ສະໄໝນັ້ນ ຕິນະວັດຖາຣະກະມີໃນບ່ອນໃດ ສຳມຸຂາວິໄນມີໃນບ່ອນນັ້ນ ສຳມຸຂາວິໄນມີໃນບ່ອນໃດ ຕິນະວັດຖາຣະກະມີໃນບ່ອນນັ້ນ ແຕ່ບໍ່ມີສະຕິວິໄນ ອະມູລະຫະວິໄນ ປະຕິນຍາຕະກະຣະນະ ເຍພຸຍຍະສິກາ ແລະຕັດສະປາປິຍະສິກາ

## ໘. ສັງສັດຖະວາຣະ

## ວ່າດ້ວຍວາຣະທີ່ວ່າດ້ວຍການລວມກັນ

[໙໔໑] ຖາມ : ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ສະຕິວິໄນກໍດີ ລວມກັນຫຼືແຍກກັນ ກໍແລ ນັກປາດຍັກຍ້າຍບັນຍັດທຳເຫຼົ່ານີ້ໃຫ້ແຍກອອກຈາກກັນໄດ້ບໍ?

ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ອະມູລະຫະວິໄນກໍດີ ຯລຯ

ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ປະຕິນຍາຕະກະຣະນະກໍດີ ຯລຯ

ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ເຍພຸຍຍະສິກາກໍດີ ຯລຯ

ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ຕັດສະປາປິຍະສິກາກໍດີ ຯລຯ

ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ຕິນະວັດຖາຣະກະກໍດີ ລວມກັນຫຼືແຍກກັນ ກໍແລ ນັກປາດຍັກຍ້າຍບັນຍັດທຳເຫຼົ່ານີ້ໃຫ້ແຍກອອກຈາກກັນໄດ້ບໍ

ຕອບ : ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ສະຕິວິໄນກໍດີ ລວມກັນບໍ່ແຍກຈາກກັນ ກໍແລ ນັກປາດຍັກຍ້າຍບັນຍັດທຳເຫຼົ່ານີ້ໃຫ້ແຍກອອກຈາກກັນບໍ່ໄດ້

ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ອະມູລະຫະວິໄນກໍດີ ฯລฯ

ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ປະຕິນຍາຕະກະຣະນະກໍດີ ฯລฯ

ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ເຍພຸຍຍະສິກາກໍດີ ฯລฯ

ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ຕັດສະປາປິຍະສິກາກໍດີ ฯລฯ

ທຳເຫຼົ່ານີ້ ຄື ສຳມຸຂາວິໄນກໍດີ ຕິນະວັດຖາຣະກະກໍດີ ລວມກັນ ບໍ່ແຍກຈາກກັນ ກໍແລ ນັກປາດຍັກຍ້າຍບັນຍັດທຳເຫຼົ່ານີ້ໃຫ້ແຍກອອກຈາກກັນບໍ່ໄດ້

## ໗. ສັດຕະສະມະຖະນິທານ

## ວ່າດ້ວຍນິທານແຫ່ງສະມະຖະ ๗

[໕໔໘] ຖາມ : ສຳມຸຂາວິໄນ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ? ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ ສະຕິວິໄນ ฯລฯ ອະມູລະຫະວິໄນ ฯລฯ ປະຕິນຍາຕະກະຣະນະ ฯລฯ ເຍພຸຍຍະສິກາ ฯລฯ ຕັດສະປາປິຍະສິກາ ฯລฯຕິນະວັດຖາຣະກະ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ຕອບ : ສຳມຸຂາວິໄນມີນິທານເປັນນິທານ ມີນິທານເປັນສະມຸໄທ ມີນິທານເປັນຊາດ ມີນິທານເປັນແດນເກີດກ່ອນ ມີນິທານເປັນອົງ ມີນິທານເປັນສະມຸດຖານ ສະຕິວິໄນ ฯລฯ ອະມູລະຫະວິໄນ ฯລฯ ປະຕິນຍາຕະກະຣະນະ ฯລฯ ເຍພຸຍຍະສິກາ ฯລฯ ຕັດສະປາປິຍະສິກາ ฯລฯ ຕິນະວັດຖາຣະກະ ມີນິທານເປັນນິທານ ມີນິທານເປັນສະມຸໄທ ມີນິທານເປັນຊາດ ມີນິທານເປັນແດນເກີດກ່ອນ ມີນິທານເປັນອົງ ມີນິທານເປັນສະມຸດຖານ

ຖາມ : ສຳມຸຂາວິໄນ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ ສະຕິວິໄນ ฯລฯ ອະມູລະຫະວິໄນ ฯລฯ ປະຕິນຍາຕະກະຣະນະ ฯລฯ ເຍພຸຍຍະສິກາ ฯລฯ ຕັດສະປາປິຍະສິກາ ฯລฯ ຕິນະວັດຖາຣະກະ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ຕອບ : ສຳມຸຂາວິໄນ ມີເຫດເປັນນິທານ ມີເຫດເປັນສະມຸໄທ ມີເຫດເປັນຊາດ ມີເຫດເປັນແດນເກີດກ່ອນ ມີເຫດເປັນອົງ ມີເຫດເປັນສະມຸດຖານ ສະຕິວິໄນ ฯລฯ

ອະມູລະຫະວິໄນ ໆລໆ ປະຕິນຍາຕະກະຣະນະ ໆລໆ ເຍພຸຍຍະສິກາ ໆລໆ ຕັດສະປາປິຍະສິກາ ໆລໆ ຕິນະວັດຖາຣະກະ ມີເຫດເປັນນິທານ ມີເຫດເປັນສະມຸໄທ ມີເຫດເປັນຊາດ ມີເຫດເປັນແດນເກີດກ່ອນ ມີເຫດເປັນອົງ ມີເຫດເປັນສະມຸດຖານ

ຖາມ : ສຳມຸຂາວິໄນ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ ສະຕິວິໄນ ໆລໆ ອະມູລະຫະວິໄນ ໆລໆ ປະຕິນຍາຕະກະຣະນະ ໆລໆ ເຍພຸຍຍະສິກາ ໆລໆ ຕັດສະປາປິຍະສິກາ ໆລໆຕິນະວັດຖາຣະກະ ມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ຕອບ : ສຳມຸຂາວິໄນ ມີປັດໄຈເປັນນິທານ ມີປັດໄຈເປັນສະມຸໄທ ມີປັດໄຈເປັນຊາດ ມີປັດໄຈເປັນແດນເກີດກ່ອນ ມີປັດໄຈເປັນອົງ ມີປັດໄຈເປັນສະມຸດຖານ ສະຕິວິໄນ ໆລໆ ອະມູລະຫະວິໄນ ໆລໆ ປະຕິນຍາຕະກະຣະນະ ໆລໆ ເຍພຸຍຍະສິກາ ໆລໆ ຕັດສະປາປິຍະສິກາ ໆລໆຕິນະວັດຖາຣະກະ ມີປັດໄຈເປັນນິທານ ມີປັດໄຈເປັນສະມຸໄທ ມີປັດໄຈເປັນຊາດ ມີປັດໄຈເປັນແດນເກີດກ່ອນ ມີປັດໄຈເປັນອົງ ມີປັດໄຈເປັນສະມຸດຖານ

## ວ່າດ້ວຍມູນເຫດ ແລະສະມຸດຖານແຫ່ງສະມະຖະ

[໓໕໓] ຖາມ : ສະມະຖະ ໗ ມີມູນເຫດທີ່ໃດ? ມີສະມຸດຖານທີ່ໃດ?

ຕອບ : ສະມະຖະ ໗ ມີມູນເຫດ ໒໖ ມີສະມຸດຖານ ໓໖

ຖາມ : ສະມະຖະ ໗ ມີມູນເຫດ ໒໖ ອັນໃດແດ່

ຕອບ : ສຳມຸຂາວິໄນ ມີມູນເຫດ ໔ ຄື ຄວາມພ້ອມໜ້າສົງ ໑ ຄວາມພ້ອມໜ້າທຳ ໑ ຄວາມພ້ອມໜ້າວິໄນ ໑ ຄວາມພ້ອມໜ້າບຸກຄົນ ໑ ສະຕິວິໄນ ມີມູນເຫດ ໔ ອະມູລະຫະວິໄນ ມີມູນເຫດ ໔ ປະຕິນຍາຕະກະຣະນະ ມີມູນເຫດ ໒ ຄື (໑) ຜູ້ສະແດງ (໒) ຜູ້ຮັບ ເຍພຸຍຍະສິກາ ມີມູນເຫດ ໔ ຕັດສະປາປິຍະສິກາ ມີມູນເຫດ ໔ ຕິນະວັດຖາຣະກະ ມີມູນເຫດ ໔ ຄື (໑) ຄວາມພ້ອມໜ້າສົງ (໒) ຄວາມພ້ອມໜ້າທຳ (໓) ຄວາມພ້ອມໜ້າວິໄນ (໔) ຄວາມພ້ອມໜ້າບຸກຄົນ ສະມະຖະ ໗ ມີມູນເຫດ ໒໖ ນີ້

ຖາມ : ສະມະຖະ ໗ ມີສະມຸດຖານ ໓໖ ອັນໃດແດ່

ຕອບ : ການປະກອບ ການກະທຳ ການເຂົ້າເຖິງ ການຂໍຮ້ອງ ກິຣິຍາທີ່ຍອມຮັບ ບໍ່ຄັດຄ້ານ ກຳ ຄື ສະຕິວິໄນ

ການປະກອບ ການກະທຳ ການເຂົ້າເຖິງ ການຂໍຮ້ອງ ກິຣິຍາທີ່ຍອມຮັບ ບໍ່ຄັດຄ້ານ ກຳ ຄື ອະມູລະຫະວິໄນ

ການປະກອບ ການກະທຳ ການເຂົ້າເຖິງ ການຂໍຮ້ອງ ກິຣິຍາທີ່ຍອມຮັບ ບໍ່ຄັດຄ້ານ ກຳ ຄື ປະຕິນຍາຕະກະຣະນະ

ການປະກອບ ການກະທຳ ການເຂົ້າເຖິງ ການຂໍຮ້ອງ ກິຣິຍາທີ່ຍອມຮັບ ບໍ່ຄັດຄ້ານ ກຳ ຄື ເຍພຸຍຍະສິກາ

ການປະກອບ ການກະທຳ ການເຂົ້າເຖິງ ການຂໍຮ້ອງ ກິຣິຍາທີ່ຍອມຮັບ ບໍ່ຄັດຄ້ານ ກຳ ຄື ຕັດສະປາປິຍະສິກາ

ການປະກອບ ການກະທຳ ການເຂົ້າເຖິງ ການຂໍຮ້ອງ ກິຣິຍາທີ່ຍອມຮັບ ບໍ່ຄັດຄ້ານ ກຳ ຄື ຕິນະວັດຖາຣະກະ

ສະມະຖະ ໗ ມີສະມຸດຖານ ໓໖ ນີ້

## ໑໐. ສັດຕະສະມະຖະນານັດຖາທິ

## ວ່າດ້ວຍສະມະຖະ ໗ ມີອັດຖະຕ່າງກັນ ເປັນຕົ້ນ

[໓໕໘] ຖາມ : ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ສະຕິວິໄນກໍດີ ມີອັດຖະຕ່າງກັນ ມີພະຍັນຊະນະຕ່າງກັນ ຫຼືມີອັດຖະແນວດຽວກັນ ແຕ່ພະຍັນຊະນະຕ່າງກັນ

ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ອະມູລະຫະວິໄນກໍດີ ຯລຯ

ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ປະຕິນຍາຕະກະຣະນະກໍດີ ຯລຯ

ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ເຍພຸຍຍະສິກາກໍດີ ຯລຯ

ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ຕັດສະປາປິຍະສິກາກໍດີ ຯລຯ

ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ຕິນະວັດຖາຣະກະກໍດີ ມີອັດຖະຕ່າງກັນ ມີພະຍັນຊະນະຕ່າງກັນ ຫຼືມີອັດຖະແນວດຽວກັນ ແຕ່ພະຍັນຊະນະຕ່າງກັນ

ຕອບ : ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ສະຕິວິໄນກໍດີ ມີອັດຖະຕ່າງກັນ ມີພະຍັນຊະນະຕ່າງກັນ ຫຼືມີອັດຖະແນວດຽວກັນ ແຕ່ພະຍັນຊະນະຕ່າງກັນ

ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ອະມູລະຫະວິໄນກໍດີ ຯລຯ

ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ປະຕິນຍາຕະກະຣະນະກໍດີ ຯລຯ

ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ເຍພຸຍຍະສິກາກໍດີ ຯລຯ

ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ຕັດສະປາປິຍະສິກາກໍດີ ຯລຯ

ທຳເຫຼົ່ານີ້ຄື ສຳມຸຂາວິໄນກໍດີ ຕິນະວັດຖາຣະກະກໍດີ ກໍມີອັດຖະຕ່າງກັນ ມີພະຍັນຊະນະຕ່າງກັນ

## ວິວາທາທິກອນ

[໖໕໕] ຜິດຖຽງເປັນວິວາທາທິກອນ ຜິດຖຽງບໍ່ເປັນອະທິກອນ ອະທິກອນບໍ່ເປັນຜິດຖຽງ ເປັນອະທິກອນດ້ວຍ ເປັນຜິດຖຽງດ້ວຍ ຜິດຖຽງເປັນວິວາທາທິກອນກໍມີ ຜິດຖຽງບໍ່ເປັນອະທິກອນກໍມີ ອະທິກອນບໍ່ເປັນຜິດຖຽງກໍມີ ເປັນອະທິກອນດ້ວຍ ເປັນຜິດຖຽງດ້ວຍກໍມີ

ໃນຂໍ້ນັ້ນ ຜິດຖຽງແນວໃດເປັນວິວາທາທິກອນ ພິກຂຸໃນທຳວິໄນນີ້ຜິດຖຽງກັນວ່າ ນີ້ເປັນທຳ ນີ້ບໍ່ເປັນທຳ ໆລໆ

ນີ້ອາບັດຊົ່ວຫຍາບ ນີ້ອາບັດບໍ່ຊົ່ວຫຍາບ ຄວາມໝາງໃຈ ຄວາມຜິດຖຽງ ຄວາມແກ່ງແຍ່ງ ຄວາມວິວາດ ການກ່າວຕ່າງກັນ ການກ່າວໂດຍປະການອື່ນ ການເວົ້າເພື່ອຄວາມກັດກຸ້ມ ຄວາມໝາຍໝັ້ນໃນເລື້ອງນັ້ນ ຜິດຖຽງ ນີ້ເປັນວິວາທາທິກອນ

ໃນຂໍ້ນັ້ນ ຜິດຖຽງແນວໃດບໍ່ຈັດເປັນອະທິກອນ ມານດາຜິດຖຽງກັບບຸດແດ່ ບຸດຜິດຖຽງກັບມານດາແດ່ ບິດາຜິດຖຽງກັບບຸດແດ່ ບຸດຜິດຖຽງກັບບິດາແດ່ ອ້າຍຜິດຖຽງກັບນ້ອງຊາຍແດ່ ນ້ອງຊາຍຜິດຖຽງກັບເອື້ອຍແດ່ ເອື້ອຍຜິດຖຽງກັບນ້ອງສາວແດ່ ເພື່ອນຜິດຖຽງກັບເພື່ອນແດ່ ຜິດຖຽງນີ້ບໍ່ເປັນອະທິກອນ

ໃນຂໍ້ນັ້ນ ອະທິກອນແນວໃດ?ບໍ່ເປັນຜິດຖຽງ ອະນຸວາທາທິກອນ ອາປັດຕາທິກອນ ກິດຈາທິກອນ ອະທິກອນນີ້ບໍ່ເປັນຜິດຖຽງ

ໃນຂໍ້ນັ້ນ ແນວໃດ?ເປັນອະທິກອນດ້ວຍ ເປັນຜິດຖຽງດ້ວຍ ວິວາທາທິກອນ ເປັນອະທິກອນດ້ວຍ ເປັນຜິດຖຽງດ້ວຍ

## ອະນຸວາທາທິກອນ

[໖໕໖] ການໂຈດເປັນອະນຸວາທາທິກອນ ການໂຈດບໍ່ເປັນອະທິກອນ ອະທິກອນບໍ່ເປັນການໂຈດ ເປັນອະທິກອນດ້ວຍ ເປັນການໂຈດດ້ວຍ ການໂຈດເປັນອະນຸວາທາທິກອນກໍມີ ການໂຈດບໍ່ເປັນອະທິກອນກໍມີ ອະທິກອນບໍ່ເປັນການໂຈດກໍມີ ເປັນອະທິກອນດ້ວຍ ເປັນການໂຈດດ້ວຍກໍມີ

ໃນຂໍ້ນັ້ນ ການໂຈດແນວໃດເປັນອະນຸວາທາທິກອນ ພິກຂຸໃນທຳວິໄນນີ້ຍ່ອມໂຈດພິກຂຸດ້ວຍສີລະວິບັດຫຼືອາຈາຣະວິບັດ ທິດຖິວິບັດຫຼືອາຊີວະວິບັດ ການໂຈດ ການກ່າວຫາ ການຟ້ອງຮ້ອງ ການປະທ້ວງ ຄວາມເປັນຜູ້ຄອນຕາມ ການທຳຄວາມພະຍາຍາມໂຈດ ການໃຫ້ກຳລັງສະໜັບສະໜູນໃນເລື້ອງນັ້ນ ການໂຈດນີ້ເປັນອະນຸວາທາທິກອນ

ໃນຂໍ້ນັ້ນ ການໂຈດແນວໃດບໍ່ເປັນອະທິກອນ ມານດາຟ້ອງບຸດແດ່ ບຸດຟ້ອງມານດາແດ່ ບິດາຟ້ອງບຸດແດ່ ບຸດຟ້ອງບິດາແດ່ ອ້າຍຟ້ອງນ້ອງຊາຍແດ່ ນ້ອງຊາຍຟ້ອງເອື້ອຍແດ່ ເອື້ອຍຟ້ອງນ້ອງຊາຍແດ່ ເພື່ອນຟ້ອງເພື່ອນແດ່ ການໂຈດນີ້ບໍ່ເປັນອະທິກອນ

ໃນຂໍ້ນັ້ນ ອະທິກອນແນວໃດ?ບໍ່ເປັນການໂຈດ ອາປັດຕາທິກອນ ກິດຈາທິກອນ ວິວາທາທິກອນ ອະທິກອນນີ້ບໍ່ເປັນການໂຈດ

ໃນຂໍ້ນັ້ນ ແນວໃດ?ເປັນອະທິກອນດ້ວຍ ເປັນການໂຈດດ້ວຍ ອະນຸວາທາທິກອນ ເປັນອະທິກອນດ້ວຍ ເປັນການໂຈດດ້ວຍ

## ອາປັດຕາທິກອນ

[໓໕໗] ອາບັດເປັນອາປັດຕາທິກອນ ອາບັດບໍ່ເປັນອະທິກອນ ອະທິກອນບໍ່ເປັນອາບັດ ເປັນອະທິກອນດ້ວຍ ເປັນອາບັດດ້ວຍ ອາບັດເປັນອາປັດຕາທິກອນກໍມີ ອາບັດບໍ່ເປັນອະທິກອນກໍມີ ອະທິກອນບໍ່ເປັນອາບັດກໍມີ ເປັນອະທິກອນດ້ວຍ ເປັນອາບັດດ້ວຍກໍມີ

ໃນຂໍ້ນັ້ນ ອາບັດແນວໃດ?ເປັນອາປັດຕາທິກອນ ອາບັດທັງ ໕ ກອງ ເປັນອາປັດຕາທິກອນ ອາບັດທັງ ໗ ກອງ ເປັນອາປັດຕາທິກອນ ອາບັດນີ້ເປັນອາປັດຕາທິກອນ

ໃນຂໍ້ນັ້ນ ອາບັດແນວໃດ?ບໍ່ເປັນອະທິກອນ

ໂສດາບັດ ສະມາບັດ ອາບັດນີ້ບໍ່ເປັນອະທິກອນ

ໃນຂໍ້ນັ້ນ ອະທິກອນແນວໃດ?ບໍ່ເປັນອາບັດ

ກິດຈາທິກອນ ວິວາທາທິກອນ ອະນຸວາທາທິກອນ ອາປັດຕາທິກອນ ອະທິກອນນີ້ບໍ່ເປັນອາບັດ

ໃນຂໍ້ນັ້ນ ແນວໃດ?ເປັນອະທິກອນດ້ວຍ ເປັນອາບັດດ້ວຍ ອາປັດຕາທິກອນເປັນອະທິກອນດ້ວຍ ເປັນອາບັດດ້ວຍ

### ກິດຈາທິກອນ

[໓໕໘] ກິດເປັນກິດຈາທິກອນ ກິດບໍ່ເປັນອະທິກອນ ອະທິກອນບໍ່ເປັນກິດ ເປັນອະທິກອນດ້ວຍ ເປັນກິດດ້ວຍ ກິດເປັນກິດຈາທິກອນກໍມີ ກິດບໍ່ເປັນອະທິກອນກໍມີ ອະທິກອນບໍ່ເປັນກິດກໍມີ ເປັນອະທິກອນດ້ວຍ ເປັນກິດດ້ວຍກໍມີ

ໃນຂໍ້ນັ້ນ ກິດແນວໃດ?ເປັນກິດຈາທິກອນ

ຄວາມທີ່ສົງນີກິດ ຄວາມທີ່ສົງນີກິດອັນຈະເພິ່ງເຮັດ ຄື ອະປະໂລກະນະກຳ ຍັດຕິກຳ ຍັດຕິທຸຕິຍະກຳ ຍັດຕິຈະຕຸດຖະກຳ ກິດນີ້ເປັນກິດຈາທິກອນ

ໃນຂໍ້ນັ້ນ ກິດແນວໃດ?ບໍ່ເປັນອະທິກອນ

ກິດທີ່ເພິ່ງເຮັດແກ່ພຣະອາຈານ ກິດທີ່ເພິ່ງເຮັດແກ່ພຣະອຸປັດຊາ ກິດທີ່ເພິ່ງເຮັດແກ່ພິກຂຸປູນອຸປັດຊາ ກິດທີ່ເພິ່ງເຮັດແກ່ພິກຂຸປູນອາຈານ ກິດນີ້ບໍ່ເປັນອະທິກອນ

ໃນຂໍ້ນັ້ນ ອະທິກອນແນວໃດ? ບໍ່ເປັນກິດ

ວິວາທາທິກອນ ອະນຸວາທາທິກອນ ອາປັດຕາທິກອນ ອະທິກອນນີ້ບໍ່ເປັນກິດ

ໃນຂໍ້ນັ້ນ ກິດແນວໃດ?ເປັນອະທິກອນດ້ວຍ ເປັນກິດດ້ວຍ

ກິດຈາທິກອນເປັນອະທິກອນດ້ວຍ ເປັນກິດດ້ວຍ

**ອະທິກະຣະນະເພທະ ຈົບ**

## ຫົວຂໍ້ປະຈຳເລື້ອງ

ການຮື້ຟື້ນ ອະທິກອນ ຮື້ຟື້ນດ້ວຍອາການທໍ່ໃດ?

ບຸກຄົນຮື້ຟື້ນ ມີອັນໃດ?ເປັນນິທານ

ເຫດ ປັດໄຈ ມູນ ສະມຸດຖານ ເປັນອາບັດ

ມີອະທິກອນ ໃນບ່ອນໃດ ແຍກຈາກກັນ ມີນິທານ ເຫດ ປັດໄຈ

ມູນ ສະມຸດຖານ ມີພະຍັນຊະນະ ຜິດຖຽງ ອະທິກອນ

ດັ່ງທີ່ກ່າວມານີ້ ຈັດລົງໃນປະເພດອະທິກອນ ດ້ວຍປະການດັ່ງນີ້ແລ

# ອະປະຣະຄາຖາສັງຄະນິກະ

## ວ່າດ້ວຍກຸ່ມຄາຖາອີກກຸ່ມໜຶ່ງ

### ໑. ໂຈທະນາທີປຸດສາວິສັດຊະນາ

### ວ່າດ້ວຍຄຳຖາມ ແລະຄຳຕອບການໂຈດ ເປັນຕົ້ນ

[໓໕໙] ທ່ານພຣະອຸບາລີທູນຖາມວ່າ
ການໂຈດເພື່ອປະໂຫຍດອັນໃດ? ການສອບສວນເພື່ອເຫດອັນໃດ?
ສົງເພື່ອປະໂຫຍດອັນໃດ? ສ່ວນການລົງມະຕິເພື່ອເຫດອັນໃດ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ
ການໂຈດເພື່ອປະໂຫຍດໃຫ້ຣະນຶກ ການສອບສວນເພື່ອປະໂຫຍດຈະຂົ່ມ
ສົງເພື່ອປະໂຫຍດຈະຊ່ອຍກັນພິຈາລະນາ
ສ່ວນການລົງມະຕິເພື່ອຊ່ອຍກັນວິນິດໄສແຕ່ລະເລື້ອງ

ຖ້າທ່ານເປັນຜູ້ວິນິດໄສອະທິກອນ ຢ່າດ່ວນເວົ້າ
ຢ່າເວົ້າດ້ວຍຄວາມກະໂຊກໂຮກຮາກ
ຢ່າຍົ່ວຄວາມໂກດ ຢ່າເວົ້າໂດຍຮີບຟ້າວ
ຢ່າກ່າວຄຳເວົ້າຊວນຜິດຖຽງບໍ່ປະກອບດ້ວຍປະໂຫຍດ

ຂໍ້ວັດປະຕິບັດຄືການຊັກຖາມອັນອະນຸໂລມແກ່ສິກຂາບົດ
ທີ່ພຣະພຸດທະເຈົ້າຜູ້ແຫຼມຄົມມີພຣະປັນຍາຊົງວາງໄວ້
ຕັດໄວ້ດີແລ້ວໃນພຣະສູດ ໃນພຣະວິໄນ
ໃນອະນຸໂລມ ໃນພຣະບັນຍັດ ແລະອະນຸໂລມິກະ[๑]
ທ່ານຈົ່ງພິຈາລະນາຂໍ້ວັດປະຕິບັດຄືການຊັກຖາມນັ້ນ
ຢ່າໃຫ້ເສຍຄະຕິທີ່ເປັນໄປໃນສຳປະຣາຍະພົບ ເປັນຜູ້ໄຝ່ຫາປະໂຫຍດ
ຈົ່ງຊັກຖາມຄຳເວົ້າທີ່ປະກອບດ້ວຍປະໂຫຍດໂດຍການ

ສຸພາສິດທີ່ກ່າວໂດຍຮີບຟ້າວຂອງຈຳເລີຍແລະໂຈດ
ທ່ານຢ່າເຊື່ອຖື ໂຈດກໍຟ້ອງວ່າຕ້ອງອາບັດ
ແຕ່ຈຳເລີຍປະຕິເສດວ່າບໍ່ໄດ້ຕ້ອງອາບັດ ທ່ານຕ້ອງສອບສວນທັງສອງຝ່າຍ
ເພິ່ງປັບຕາມຄຳຮັບສາລະພາບ ແລະຄຳເວົ້າສຸພາສິດ

ຄໍາຮັບສາລະພາບ ເຮົາກ່າວໄວ້ໃນໝູ່ລັດຊີ
ແຕ່ຂໍ້ນັ້ນ ບໍ່ມີໃນໝູ່ອະລັດຊີ ອັນໜຶ່ງ ພິກຂຸອະລັດຊີເວົ້າຫຼາຍ
ທ່ານເພິ່ງປັບຕາມຄໍາເວົ້າສຸພາສິດດັ່ງກ່າວແລ້ວ

## ອະລັດຊີບຸກຄົນ

ພຣະອຸບາລີຂາບທູນວ່າ
ອະລັດຊີ ເປັນຄົນຢ່າງໃດ ຄໍາຮັບສາລະພາບຂອງຜູ້ໃດຟັງບໍ່ຂຶ້ນ
ຂ້າພຣະອົງທູນຖາມພຣະອົງເຖິງຂໍ້ນັ້ນ
ຄົນຢ່າງໃດ ພຣະພຸດທະອົງຕັດຮຽກວ່າ ອະລັດຊີບຸກຄົນ
ພຣະຜູ້ມີພຣະພາກເຈົ້າຕັດວ່າ
ຜູ້ທີ່ຈົງໃຈຕ້ອງອາບັດ ປົກປິດອາບັດ ແລະເຖິງຄວາມລໍາອຽງ
ຄົນແນວນີ້ ເຮົາຮຽກວ່າ ອະລັດຊີບຸກຄົນ

## ລັດຊີບຸກຄົນ

ພຣະອຸບາລີຂາບທູນວ່າ
ຈິງ ຂ້ານ້ອຍ ແມ່ນຂ້າພຣະອົງກໍ່ຮູ້ແລ້ວວ່າ
ຄົນແນວນີ້ເປັນອະລັດຊີບຸກຄົນ
ຂ້າພຣະອົງຂໍທູນຖາມພຣະອົງເຖິງຂໍ້ອື່ນ
ຄົນຢ່າງໃດ ພຣະພຸດທະອົງຕັດຮຽກວ່າ ລັດຊີບຸກຄົນ
ພຣະຜູ້ມີພຣະພາກເຈົ້າຕັດວ່າ
ຜູ້ທີ່ບໍ່ຈົງໃຈຕ້ອງອາບັດ ບໍ່ປົກປິດອາບັດ ບໍ່ເຖິງຄວາມລໍາອຽງ
ຄົນແນວນີ້ ເຮົາຮຽກວ່າ ລັດຊີບຸກຄົນ
ບຸກຄົນຜູ້ໂຈດບໍ່ເປັນທໍາ
ພຣະອຸບາລີຂາບທູນວ່າ
ຈິງ ຂ້ານ້ອຍ ແມ່ນຂ້າພຣະອົງກໍ່ຮູ້ແລ້ວວ່າ
ຄົນແນວນີ້ຕັດຮຽກວ່າ ລັດຊີບຸກຄົນ
ຂ້າພຣະອົງຂໍທູນຖາມພຣະອົງເຖິງຂໍ້ອື່ນ
ຄົນຢ່າງໃດ ຕັດຮຽກວ່າ ຜູ້ໂຈດບໍ່ເປັນທໍາ
ພຣະຜູ້ມີພຣະພາກເຈົ້າຕັດວ່າ
ພິກຂຸໂຈດໂດຍການບໍ່ຄວນ ໂຈດດ້ວຍເລື່ອງບໍ່ເປັນຈິງ ໂຈດດ້ວຍຄໍາຫຍາບ
ໂຈດດ້ວຍຄໍາບໍ່ປະກອບດ້ວຍປະໂຫຍດ ມຸ້ງຮ້າຍໂຈດ ບໍ່ມີເມດຕາຈິດໂຈດ

ຄົນແບບນີ້ ເຮົາຮຽກວ່າ ຜູ້ໃຈດບໍ່ເປັນທໍາ
ບຸກຄົນຜູ້ໃຈດເປັນທໍາ
        ພຣະອຸບາລີຂາບທູນວ່າ
ຈິງ ຂ້ານ້ອຍ ແມ່ນຂ້າພຣະອົງກໍຮູ້ແລ້ວວ່າ
ຄົນແບບນີ້ຕັດຮຽກວ່າ ຜູ້ໃຈດບໍ່ເປັນທໍາ
ຂ້າພຣະອົງຂໍທູນຖາມພຣະອົງເຖິງຂໍ້ອື່ນ
ຄົນຢ່າງໃດ ຕັດຮຽກວ່າ ຜູ້ໃຈດເປັນທໍາ
        ພຣະຜູ້ມີພຣະພາກເຈົ້າຕັດວ່າ
ພິກຂຸໃຈດໂດຍການ ໃຈດດ້ວຍເລື້ອງຈິງ ໃຈດດ້ວຍຄໍາສຸພາບ
ໃຈດດ້ວຍຄໍາປະກອບດ້ວຍປະໂຫຍດ ມີເມດຕາຈິດ ບໍ່ມຸ້ງຮ້າຍໃຈດ
ຄົນແບບນີ້ ເຮົາຮຽກວ່າ ຜູ້ໃຈດເປັນທໍາ

## ຄົນໃຈດຜູ້ໂງ່ຈ້າ

        ພຣະອຸບາລີຂາບທູນວ່າ
ຈິງ ຂ້ານ້ອຍ ແມ່ນຂ້າພຣະອົງກໍຮູ້ແລ້ວວ່າ
ຄົນແບບນີ້ຕັດຮຽກວ່າ ຜູ້ໃຈດເປັນທໍາ
ຂ້າພຣະອົງຂໍທູນຖາມພຣະອົງເຖິງຂໍ້ອື່ນ
ຄົນຢ່າງໃດ ຕັດຮຽກວ່າ ໃຈດຜູ້ໂງ່ຈ້າ
        ພຣະຜູ້ມີພຣະພາກເຈົ້າຕັດວ່າ
ບຸກຄົນບໍ່ຮູ້ຄໍາຕົ້ນແລະຄໍາຫຼັງ ບໍ່ສະຫຼາດໃນຄໍາຕົ້ນແລະຄໍາຫຼັງ
ບໍ່ຮູ້ທາງແຫ່ງຄໍາເວົ້າສຸພາສິດ ບໍ່ສະຫຼາດໃນຄໍາເວົ້າສຸພາສິດ
ຄົນແບບນີ້ ເຮົາຮຽກວ່າ ໃຈດຜູ້ໂງ່ຈ້າ

## ຄົນໃຈດຜູ້ສະຫຼາດ

        ພຣະອຸບາລີຂາບທູນວ່າ
ຈິງ ຂ້ານ້ອຍ ແມ່ນຂ້າພຣະອົງກໍຮູ້ແລ້ວວ່າ
ຄົນແບບນີ້ຕັດຮຽກວ່າ ໃຈດຜູ້ຈ້າ
ຂ້າພຣະອົງຂໍທູນຖາມພຣະອົງເຖິງຂໍ້ອື່ນ
ຄົນຢ່າງໃດ ຕັດຮຽກວ່າ ໃຈດຜູ້ສະຫຼາດ
        ພຣະຜູ້ມີພຣະພາກເຈົ້າຕັດວ່າ
ບຸກຄົນຮູ້ຄໍາຕົ້ນແລະຄໍາຫຼັງ ສະຫຼາດໃນຄໍາຕົ້ນແລະຄໍາຫຼັງ

ຮູ້ທາງແຫ່ງຄຳເວົ້າສຸພາສິດ ສະຫຼາດໃນຄຳເວົ້າສຸພາສິດ
ຄົນແບບນີ້ ເຮົາຮຽກວ່າ ໂຈດຜູ້ສະຫຼາດ

## ການໂຈດ

ພຣະອຸບາລີຂາບທູນວ່າ
ຈິງ ຂ້ານ້ອຍ ແມ່ນຂ້າພຣະອົງກໍຮູ້ແລ້ວວ່າ
ຄົນແບບນີ້ຕັດຮຽກວ່າ ໂຈດຜູ້ສະຫຼາດ
ຂ້າພຣະອົງຂໍທູນຖາມພຣະອົງເຖິງຂໍ້ອື່ນ
ກິຣິຍາຢ່າງໃດ ພຣະອົງຕັດຮຽກວ່າ ການໂຈດ”
ພຣະຜູ້ມີພຣະພາກເຈົ້າຕັດວ່າ
ກິຣິຍາທີ່ຖືກໂຈດດ້ວຍສີລະວິບັດ ດ້ວຍອາຈາຣະວິບັດ ດ້ວຍທິດຖິວິບັດ
ແລະແມ່ນດ້ວຍອາຊີວະວິບັດ ດັ່ງນັ້ນ ເຮົາຈຶ່ງຮຽກວ່າ ການໂຈດ”

**ອະປະຣະຄາຖາສັງຄະນິກະ ຈົບ**

# ໂຈທະນາກັນ

## ວ່າດ້ວຍໝວດການໂຈດ

## ໑. ອະນຸວິດຊະກະອະນຸໂຍຄະ

## ວ່າດ້ວຍຂໍ້ຊັກຖາມຂອງພິກຂຸຜູ້ວິນິດໄສອະທິກອນ

[໓໖໐] ພິກຂຸຜູ້ວິນິດໄສອະທິກອນ ເພິ່ງຖາມໂຈດວ່າ ອາວຸໂສ ຂໍ້ທີ່ທ່ານໂຈດພິກຂຸອົງນີ້ນັ້ນ ໂຈດຍ້ອນເລື່ອງອັນໃດ? ທ່ານໂຈດດ້ວຍສີລະວິບັດ ໂຈດດ້ວຍອາຈາຣະວິບັດ ຫຼືໂຈດດ້ວຍທິດຖິວິບັດ ຖ້າໂຈດນັ້ນຕອບແບບນີ້ວ່າ ຂ້າພະເຈົ້າໂຈດດ້ວຍສີລະວິບັດ ໂຈດດ້ວຍອາຈາຣະວິບັດ ຫຼືໂຈດດ້ວຍທິດຖິວິບັດ ພິກຂຸຜູ້ວິນິດໄສອະທິກອນເພິ່ງຊັກຖາມໂຈດແບບນີ້ວ່າ ທ່ານຮູ້ສີລະວິບັດ ຮູ້ອາຈາຣະວິບັດ ຮູ້ທິດຖິວິບັດບໍ?

ຖ້າໂຈດຕອບແບບນີ້ວ່າ ອາວຸໂສ ຂ້າພະເຈົ້າຮູ້ສີລະວິບັດ ຮູ້ອາຈາຣະວິບັດ ຮູ້ທິດຖິວິບັດ ພິກຂຸຜູ້ວິນິດໄສອະທິກອນເພິ່ງຊັກຖາມໂຈດແບບນີ້ວ່າ ອາວຸໂສ ກໍ ສີລະວິບັດເປັນແບບໃດ? ອາຈາຣະວິບັດເປັນແບບໃດ? ທິດຖິວິບັດເປັນແບບໃດ?

ຖ້າໂຈດນັ້ນຕອບແນວນີ້ວ່າ ປາຣາຊິກ ໔ ສັງຄາທິເສດ ໑໓ ນີ້ຈັດເປັນສີລະວິບັດ ຖຸນລັດໄຈ ປາຈິດຕິ ປະຕິເທສະນີຍະ ທຸກກົດ ທຸບພາສິດ ນີ້ຈັດເປັນອາຈາຣະວິບັດ ມິດສາທິດຖິອັນຕະຄາຫິກະທິດຖິ ນີ້ຈັດເປັນທິດຖິວິບັດພິກຂຸຜູ້ວິນິດໄສອະທິກອນເພິ່ງຊັກຖາມໂຈດແນວນີ້ວ່າ ອາວຸໂສ ຂໍ້ທີ່ທ່ານໂຈດ

ພິກຂຸ ອົງນີ້ນັ້ນ ທ່ານໂຈດດ້ວຍເລື້ອງທີ່ໄດ້ເຫັນ ດ້ວຍເລື້ອງທີ່ໄດ້ຍິນ ຫຼື ດ້ວຍເລື້ອງທີ່ນຶກສົງໄສ

ຖ້າໂຈດນັ້ນຕອບແນວນີ້ວ່າ ຂ້າພະເຈົ້າໂຈດດ້ວຍເລື້ອງທີ່ເຫັນ ດ້ວຍເລື້ອງທີ່ໄດ້ຍິນ ຫຼື ດ້ວຍເລື້ອງທີ່ນຶກສົງໄສ

ພິກຂຸຜູ້ວິນິດໄສອະທິກອນເພິ່ງຊັກຖາມໂຈດແນວນີ້ວ່າ ອາວຸໂສ ຂໍ້ທີ່ທ່ານໂຈດພິກຂຸອົງນີ້ດ້ວຍເລື້ອງທີ່ໄດ້ເຫັນນັ້ນ ທ່ານເຫັນອັນໃດ? ເຫັນແນວໃດ ເຫັນເມື່ອໃດ ເຫັນຢູ່ໃສ ທ່ານເຫັນພິກຂຸອົງນີ້ຕ້ອງອາບັດປາຣາຊິກ ຫຼືທ່ານເຫັນພິກຂຸອົງນີ້ຕ້ອງອາບັດສັງຄາທິເສດ ຖຸນລັດໄຈ ປາຈິດຕິ ປະຕິເທສະນີຍະ ທຸກກົດ ທຸບພາສິດຫຼື ອັນໜຶ່ງ ທ່ານຢູ່ທີ່ໃດ ແລະພິກຂຸອົງນີ້ຢູ່ທີ່ໃດ ທ່ານເຮັດຫຍັງຢູ່ ພິກຂຸອົງນີ້ເຮັດຫຍັງຢູ່

ຖ້າໂຈດຕອບແນວນີ້ວ່າ ອາວຸໂສ ຂ້າພະເຈົ້າບໍ່ໄດ້ໂຈດພິກຂຸອົງນີ້ດ້ວຍເລື້ອງທີ່ໄດ້ເຫັນ ແຕ່ຂ້າພະເຈົ້າໂຈດດ້ວຍເລື້ອງທີ່ໄດ້ຍິນ

ພິກຂຸຜູ້ວິນິດໄສອະທິກອນເພິ່ງຊັກຖາມແນວນີ້ວ່າ ອາວຸໂສ ຂໍ້ທີ່ທ່ານໂຈດພິກຂຸອົງນີ້ດ້ວຍເລື້ອງທີ່ໄດ້ຍິນນັ້ນ ທ່ານໄດ້ຍິນອັນໃດ? ໄດ້ຍິນແນວໃດ ໄດ້ຍິນເມື່ອໃດ ໄດ້ຍິນຢູ່ໃສ ທ່ານໄດ້ຂ່າວວ່າພິກຂຸອົງນີ້ຕ້ອງອາບັດປາຣາຊິກ ຫຼືທ່ານໄດ້ຂ່າວວ່າພິກຂຸອົງນີ້ຕ້ອງອາບັດສັງຄາທິເສດ ຖຸນລັດໄຈ ປາຈິດຕິ ປະຕິເທສະນີຍະ ທຸກກົດ ທຸບພາສິດ ຫຼືທ່ານໄດ້ຍິນຈາກພິກຂຸ ຫຼືໄດ້ຍິນຈາກພິກຂຸນີ ສິກຂະມານາ ສາມະເນນ ສາມະເນຣີ ອຸປາສົກ ອຸປາສິກາ ພຣະຣາຊາ ຣາຊະມະຫາອຳໝາດ ເດຍຣະຖີ ສາວົກຂອງເດຍຣະຖີບໍ

ຖ້າໂຈດຕອບແນວນີ້ວ່າ ອາວຸໂສ ຂ້າພະເຈົ້າບໍ່ໄດ້ໂຈດພິກຂຸອົງນີ້ດ້ວຍເລື້ອງທີ່ໄດ້ຍິນ ແຕ່ວ່າໂຈດດ້ວຍເລື້ອງທີ່ນຶກສົງໄສ

ພິກຂຸຜູ້ວິນິດໄສອະທິກອນເພິ່ງຊັກຖາມແນວນີ້ວ່າ ອາວຸໂສ ຂໍ້ທີ່ທ່ານໂຈດພິກຂຸອົງນີ້ດ້ວຍເລື້ອງທີ່ນຶກສົງໄສນັ້ນ ທ່ານນຶກສົງໄສອັນໃດ? ນຶກສົງໄສແນວໃດ ນຶກສົງໄສເມື່ອໃດ ນຶກສົງໄສຢູ່ໃສ ທ່ານນຶກສົງໄສວ່າພິກຂຸອົງນີ້ຕ້ອງອາບັດປາຣາຊິກ ຫຼືທ່ານນຶກສົງໄສວ່າພິກຂຸອົງນີ້ຕ້ອງອາບັດສັງຄາທິເສດ ຖຸນລັດໄຈ ປາຈິດຕິ ປະຕິເທສະນີຍະ ທຸກກົດ ທຸບພາສິດ ຫຼືທ່ານໄດ້ຍິນຈາກພິກຂຸແລ້ວນຶກສົງໄສ ຫຼືໄດ້ຍິນຈາກພິກຂຸນີ ສິກຂະມານາ ສາມະເນນ ສາມະເນຣີ ອຸປາ

ສິກ ອຸປາສິກາ ພຣະຣາຊາ ຣາຊະມະຫາອຳໝາດ ເດຍຣະຖີ ສາວົກຂອງເດຍຣະຖີແລ້ວນຶກສົງໄສບໍ

## ປຽບທຽບອະທິກອນ

[໓໖໑] ເລື້ອງທີ່ໄດ້ເຫັນສົມດ້ວຍເລື້ອງທີ່ໄດ້ເຫັນ
ເລື້ອງທີ່ໄດ້ເຫັນທຽບກັນໄດ້ກັບເລື້ອງທີ່ໄດ້ເຫັນ
ແຕ່ບຸກຄົນນັ້ນບໍ່ຍອມຮັບ ຍ້ອນອາໄສການເຫັນ
ບຸກຄົນນັ້ນຖືກສົງໄສວ່າບໍ່ບໍລິສຸດ ເພິ່ງປັບອາບັດຕາມປະຕິຍານ
ເພິ່ງເຮັດອຸໂປສົດກັບບຸກຄົນນັ້ນ

ເລື້ອງທີ່ໄດ້ຍິນສົມດ້ວຍເລື້ອງທີ່ໄດ້ຍິນ
ເລື້ອງທີ່ໄດ້ຍິນທຽບກັນໄດ້ກັບເລື້ອງທີ່ໄດ້ຍິນ
ແຕ່ບຸກຄົນນັ້ນບໍ່ຍອມຮັບ ຍ້ອນອາໄສການໄດ້ຍິນ
ບຸກຄົນນັ້ນຖືກສົງໄສວ່າບໍ່ບໍລິສຸດ ເພິ່ງປັບອາບັດຕາມປະຕິຍານ
ເພິ່ງເຮັດອຸໂປສົດກັບບຸກຄົນນັ້ນ
ເລື້ອງທີ່ໄດ້ຮູ້ສົມດ້ວຍເລື້ອງທີ່ໄດ້ຮູ້
ເລື້ອງທີ່ໄດ້ຮູ້ທຽບກັນໄດ້ກັບເລື້ອງທີ່ໄດ້ຮູ້
ແຕ່ບຸກຄົນນັ້ນບໍ່ຍອມຮັບ ຍ້ອນອາໄສການໄດ້ຮູ້
ບຸກຄົນນັ້ນຖືກສົງໄສວ່າບໍ່ບໍລິສຸດ ເພິ່ງປັບອາບັດຕາມປະຕິຍານ
ເພິ່ງເຮັດອຸໂປສົດກັບບຸກຄົນນັ້ນເທີ້ນ

## ຂໍ້ຊັກຖາມຂອງພິກຂຸຜູ້ວິນິດໄສອະທິກອນ

[໓໖໔] ຖາມ : ການໂຈດມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ການໂຈດມີໂອກາດເປັນເບື້ອງຕົ້ນ ມີການເຮັດເປັນທ່າມກາງ ມີການລະງັບເປັນບ່ອນສຸດ

ຖາມ : ການໂຈດມີມູນທໍ່ໃດ? ມີວັດຖຸທໍ່ໃດ? ມີພູມທໍ່ໃດ? ໂຈດດ້ວຍອາການທໍ່ໃດ?

ຕອບ : ການໂຈດມີມູນ ໔ ມີວັດຖຸ ໓ ມີພູມ ໕ ໂຈດດ້ວຍອາການ ໔ ຢ່າງ

ຖາມ : ການໂຈດມີມູນ ໔ ເປັນແນວໃດ?

ຕອບ : ການໂຈດມີມູນ ການໂຈດບໍ່ມີມູນ ນີ້ການໂຈດມີມູນ ໔

ຖາມ : ການໂຈດມີວັດຖຸ ໓ ເປັນແນວໃດ?

ຕອບ : ເລື້ອງທີ່ໄດ້ເຫັນ ເລື້ອງທີ່ໄດ້ຍິນ ເລື້ອງທີ່ນຶກສົງໄສ ນີ້ການໂຈດມີວັດຖຸ ໓
ຖາມ : ການໂຈດມີພູມ ໕ ເປັນແນວໃດ?
ຕອບ : ໑. ຈັກໂຈດໂດຍການທີ່ສົມຄວນ ຈັກບໍ່ໂຈດໂດຍການບໍ່ຄວນ

໒. ຈັກໂຈດດ້ວຍເລື້ອງຈິງ ຈັກບໍ່ໂຈດດ້ວຍເລື້ອງບໍ່ຈິງ

໓. ຈັກໂຈດດ້ວຍຄຳສຸພາບ ຈັກບໍ່ໂຈດດ້ວຍຄຳຫຍາບ

໔. ຈັກໂຈດດ້ວຍເລື້ອງທີ່ເປັນປະໂຫຍດ ຈັກບໍ່ໂຈດດ້ວຍເລື້ອງທີ່ບໍ່ເປັນປະໂຫຍດ

໕. ຈັກມີເມດຕາຈິດໂຈດ ຈັກບໍ່ມຸ້ງຮ້າຍໂຈດ

ນີ້ການໂຈດມີພູມ ໕

ຖາມ : ໂຈດດ້ວຍອາການ ໒ ຢ່າງ ເປັນແນວໃດ?

ຕອບ : ໂຈດດ້ວຍກາຍ ໂຈດດ້ວຍວາຈາ ນີ້ໂຈດດ້ວຍອາການ ໒ ຢ່າງ

## ໒. ໂຈທະກາທິປະຕິປັດຕິ

## ວ່າດ້ວຍຂໍ້ປະຕິບັດຂອງໂຈດ ເປັນຕົ້ນ

[໓໗໓] ໂຈດເພິ່ງປະຕິບັດແນວໃດ ຈຳເລີຍເພິ່ງປະຕິບັດແນວໃດ ສົງເພິ່ງປະຕິບັດແນວໃດ ພິກຂຸຜູ້ວິນິດໄສອະທິກອນເພິ່ງປະຕິບັດແນວໃດ

ຖາມ : ໂຈດເພິ່ງປະຕິບັດແນວໃດ

ຕອບ : ໂຈດເພິ່ງຕັ້ງຢູ່ໃນທຳ ໕ ຢ່າງ ແລ້ວຈຶ່ງໂຈດຜູ້ອື່ນ ຄື

໑. ຈັກໂຈດໂດຍການທີ່ສົມຄວນ ຈັກບໍ່ໂຈດໂດຍການບໍ່ຄວນ

໒. ຈັກໂຈດດ້ວຍເລື້ອງຈິງ ຈັກບໍ່ໂຈດດ້ວຍເລື້ອງບໍ່ຈິງ

໓. ຈັກໂຈດດ້ວຍຄຳສຸພາບ ຈັກບໍ່ໂຈດດ້ວຍຄຳຫຍາບ

໔. ຈັກໂຈດດ້ວຍເລື້ອງທີ່ເປັນປະໂຫຍດ ຈັກບໍ່ໂຈດ້ວຍເລື້ອງທີ່ບໍ່ເປັນປະໂຫຍດ

໕. ຈັກມີເມດຕາຈິດໂຈດ ຈັກບໍ່ມຸ້ງຮ້າຍໂຈດ

ໂຈດເພິ່ງປະຕິບັດແນວນີ້

ຖາມ : ຈຳເລີຍເພິ່ງປະຕິບັດແນວໃດ

ຕອບ : ຈຳເລີຍເພິ່ງຕັ້ງຢູ່ໃນທຳ ໒ ປະການ ຄື

໑. ໃນຄວາມສັດ

໒. ໃນຄວາມບໍ່ຂຸ່ນເຄືອງ

ຈຳເລີຍເພິ່ງປະຕິບັດແນວນີ້

ຖາມ : ສົງເພິ່ງປະຕິບັດແນວໃດ

ຕອບ : ສົງເພິ່ງຮູ້ຄຳທີ່ເຂົ້າບັນຫາແລະບໍ່ເຂົ້າບັນຫາ ສົງເພິ່ງປະຕິບັດແນວນີ້

ຖາມ : ພິກຂຸຜູ້ວິນິດໄສອະທິກອນຄວນປະຕິບັດແນວໃດ
ຕອບ : ພິກຂຸຜູ້ວິນິດໄສອະທິກອນເພິ່ງລະງັບອະທິກອນນັ້ນ ໂດຍປະການທີ່ອະທິກອນນັ້ນຈະລະງັບໂດຍທຳ ໂດຍວິໄນ ໂດຍສັດຖຸສາດ ພິກຂຸຜູ້ວິນິດໄສອະທິກອນເພິ່ງປະຕິບັດແນວນີ້

## ວ່າດ້ວຍອຸໂປສົດ ເປັນຕົ້ນ

[໓໖໔] ຖາມ : ອຸໂປສົດເພື່ອປະໂຫຍດອັນໃດ? ປະວາຣະນາເພື່ອເຫດອັນໃດ? ປະຣິວາດເພື່ອປະໂຫຍດອັນໃດ? ການດຶງເຂົ້າຫາອາບັດເດີມເພື່ອເຫດອັນໃດ? ມານັດເພື່ອປະໂຫຍດອັນໃດ? ອັບພານເພື່ອເຫດອັນໃດ?
ຕອບ : ອຸໂປສົດເພື່ອປະໂຫຍດແກ່ຄວາມພ້ອມພຽງ
ປະວາຣະນາເພື່ອປະໂຫຍດແກ່ຄວາມບໍລິສຸດ
ປະຣິວາດເພື່ອປະໂຫຍດແກ່ມານັດ
ການດຶງເຂົ້າຫາອາບັດເດີມເພື່ອປະໂຫຍດແກ່ນິກຄະຫະ
ມານັດເພື່ອປະໂຫຍດແກ່ອັບພານ
ອັບພານເພື່ອປະໂຫຍດແກ່ຄວາມບໍລິສຸດ

ພິກຂຸຜູ້ວິນິດໄສອະທິກອນມີປັນຍາຊາມ
ໂງ່ຈ້າ ແລະບໍ່ມີຄວາມເຄົາລົບໃນສິກຂາກ່າວໂທດພຣະເຖຣະ
ລຳອຽງຍ້ອນຮັກ ລຳອຽງຍ້ອນຊັງ
ລຳອຽງຍ້ອນຢ້ານ ລຳອຽງຍ້ອນຫຼົງ
ເປັນຜູ້ຂຸດຕົນກຳຈັດອິນຊີແລ້ວ ຍ້ອນກາຍແຕກຍ່ອມເຂົ້ານະຣົກ
ພິກຂຸຜູ້ວິນິດໄສອະທິກອນບໍ່ເພິ່ງເຫັນແກ່ອາມິດ
ແລະບໍ່ເພິ່ງເຫັນແກ່ບຸກຄົນ ຄວນເວັ້ນສອງຢ່າງນັ້ນແລ້ວ
ເຮັດຕາມທີ່ເປັນທຳ

## ໓. ໂຈທະກັດສະອັດຕະຊາປະນະ

## ວ່າດ້ວຍການເຜົາຕົນຂອງພິກຂຸຜູ້ເປັນໂຈດ

ໂຈດເປັນຜູ້ມັກໂກດ ມັກຖືໂກດ ດຸຮ້າຍ ມັກກ່າວກ່າວໂທດຍ່ອມປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດຊິ່ມໃກ້ຫູຖ້າຈັບຜິດ ເຮັດໃຫ້ບົກຜ່ອງ

ເສບທາງຜິດ ຍ່ອມປຸກອະນາບັດວ່າເປັນອາບັດ
ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດ ໂຈດໂດຍການອັນບໍ່ຄວນ ໂຈດດ້ວຍຄຳບໍ່ຈິງ ໂຈດດ້ວຍຄຳຫຍາບ ໂຈດດ້ວຍຄຳບໍ່ປະກອບດ້ວຍປະໂຫຍດ ມຸ້ງຮ້າຍໂຈດບໍ່ມີເມດຕາຈິດໂຈດ ປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດບໍ່ຮູ້ທຳແລະອະທຳ ບໍ່ສະຫຼາດໃນທຳແລະອະທຳ ປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດບໍ່ຮູ້ວິໄນແລະບໍ່ແມ່ນວິໄນ ບໍ່ສະຫຼາດໃນວິໄນແລະບໍ່ແມ່ນວິໄນ ປຸກອະນາບັດວ່າອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດບໍ່ຮູ້ສິ່ງທີ່ພຣະຕະຖາຄົດພາສິດໄວ້ແລະບໍ່ໄດ້ພາສິດໄວ້ ບໍ່ສະຫຼາດໃນສິ່ງທີ່ພຣະຕະຖາຄົດພາສິດໄວ້ແລະບໍ່ໄດ້ພາສິດໄວ້ ປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດບໍ່ຮູ້ສິ່ງທີ່ພຣະຕະຖາຄົດເຈົ້າຊົງປະພຶດມາແລະບໍ່ໄດ້ຊົງປະພຶດມາ ບໍ່ສະຫຼາດໃນສິ່ງທີ່ພຣະຕະຖາຄົດເຈົ້າຊົງປະພຶດມາແລະບໍ່ໄດ້ຊົງປະພຶດມາ ປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດບໍ່ຮູ້ສິ່ງທີ່ພຣະຕະຖາຄົດເຈົ້າຊົງບັນຍັດໄວ້ແລະບໍ່ໄດ້ຊົງບັນຍັດໄວ້ ບໍ່ສະຫຼາດໃນສິ່ງທີ່ພຣະຕະຖາຄົດເຈົ້າຊົງບັນຍັດໄວ້ແລະບໍ່ໄດ້ຊົງບັນຍັດໄວ້ ປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດບໍ່ຮູ້ອາບັດແລະອະນາບັດ ບໍ່ສະຫຼາດໃນອາບັດແລະອະນາບັດ ປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດບໍ່ຮູ້ອາບັດເບົາແລະອາບັດໜັກ
ບໍ່ສະຫຼາດໃນອາບັດເບົາແລະອາບັດໜັກ
ປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດບໍ່ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
ບໍ່ສະຫຼາດໃນອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
ປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດບໍ່ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
ບໍ່ສະຫຼາດໃນອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
ປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ

ໂຈດບໍ່ຮູ້ຄຳຕົ້ນແລະຄຳຫຼັງ ບໍ່ສະຫຼາດໃນຄຳຕົ້ນແລະຄຳຫຼັງ

ປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ
ໂຈດບໍ່ຮູ້ທາງຄໍາເວົ້າອັນຕໍ່ເນື່ອງກັນ
ບໍ່ສະຫຼາດຕໍ່ທາງຄໍາເວົ້າອັນຕໍ່ເນື່ອງກັນ
ປຸກອະນາບັດວ່າເປັນອາບັດ ໂຈດເຊັ່ນນັ້ນຊື່ວ່າຍ່ອມເຜົາຕົນ ແລ

**ໂຈທະນາກັນ ຈົບ**

## ຫົວຂໍ້ປະຈໍາກັນ

ການໂຈດ ພິກຂຸຜູ້ວິນິດໄສອະທິກອນ ເປັນເບື້ອງຕົ້ນ ມີມູນ
ອຸໂປສົດ ຄະຕິ ເປັນຄໍາສັ່ງສອນທີ່ຄົງຢູ່ໃນໂຈທະນາກັນ

# ຈູລະສົງຄາມ

## ວ່າດ້ວຍພິກຂຸຜູ້ເຂົ້າສູ່ຈູລະສົງຄາມ

### ໑. ອະນຸວິດຊະກັດສະປະຕິປັດຕິ

## ວ່າດ້ວຍຂໍ້ປະຕິບັດຂອງພິກຂຸຜູ້ວິນິດໄສອະທິກອນ

[໓໘໕] ອັນພິກຂຸຜູ້ເຂົ້າສົງຄາມເມື່ອເຂົ້າຫາສົງເພິ່ງເປັນຜູ້ມີຈິດຢໍາເກງ ມີຈິດສະເໝີດ້ວຍຜ້າເຊັດທຸລີ ເຂົ້າຫາສົງ ເພິ່ງເປັນຜູ້ຮູ້ຈັກບ່ອນນັ່ງ ຮູ້ຈັກການນັ່ງບໍ່ບຽດພິກຂຸຜູ້ເຖຣະ ບໍ່ບຽດອາສະນະພິກຂຸຜູ້ອ່ອນກວ່າ ເພິ່ງນັ່ງອາສະນະຕາມສົມຄວນ ບໍ່ເພິ່ງເວົ້າເລື້ອງຕ່າງ ໆ ບໍ່ເພິ່ງເວົ້າເລື້ອງເດຍຣັດສານກະຖາ ເພິ່ງກ່າວທໍາເອງ ຫຼືເຊື້ອເຊີນພິກຂຸອົງອື່ນ ບໍ່ເພິ່ງດູໝິ່ນອະຣິຍະດຸດສະນີພາບ

ອັນພິກຂຸຜູ້ວິນິດໄສອະທິກອນທີ່ສົງອະນຸມັດແລ້ວ ມີປະສົງຈະວິນິດໄສອະທິກອນ ບໍ່ເພິ່ງຖາມເຖິງອຸປັດຊາ ບໍ່ເພິ່ງຖາມເຖິງອາຈານ ບໍ່ເພິ່ງຖາມເຖິງສັດທິວິຫາຣິກ ບໍ່ເພິ່ງຖາມເຖິງອັນເຕວາສິກ ບໍ່ເພິ່ງຖາມເຖິງພິກຂຸປູນອຸປັດຊາ ບໍ່ເພິ່ງຖາມເຖິງພິກຂຸປູນອາຈານ ບໍ່ເພິ່ງຖາມເຖິງຊາດບໍ່ເພິ່ງຖາມເຖິງຊື່ ບໍ່ເພິ່ງຖາມເຖິງໂຄດ ບໍ່ເພິ່ງຖາມເຖິງອາຄົມ ບໍ່ເພິ່ງຖາມເຖິງຊັ້ນແຫ່ງຕະກູນ

ບໍ່ເພິ່ງຖາມເຖິງຊາດພູມ ຍ້ອນເຫດໃດ ຍ້ອນຄວາມຮັກຫຼືຄວາມຊັງຈະເພິ່ງມີໃນບຸກຄົນນັ້ນ ເມື່ອມີຄວາມຮັກຫຼືຄວາມຊັງ ເພິ່ງລຳອຽງຍ້ອນຄວາມຮັກແດ່ ເພິ່ງລຳອຽງຍ້ອນຄວາມຊັງແດ່ ເພິ່ງລຳອຽງຍ້ອນຄວາມຫຼົງແດ່ ເພິ່ງລຳອຽງຍ້ອນຄວາມຢ້ານແດ່

ອັນພິກຂຸຜູ້ວິນິດໄສອະທິກອນທີ່ສົງອະນຸມັດແລ້ວ ມີປະສົງຈະວິນິດໄສອະທິກອນ ເພິ່ງເປັນຜູ້ ໜັກໃນສົງ ບໍ່ເພິ່ງເປັນຜູ້ໜັກໃນບຸກຄົນ ເພິ່ງເປັນຜູ້ໜັກໃນພຣະສັດທຳ ບໍ່ເພິ່ງເປັນຜູ້ໜັກໃນອາມິດ ເພິ່ງເປັນຜູ້ໄປຕາມອຳນາດແຫ່ງຄະດີ ບໍ່ເພິ່ງເປັນຜູ້ເຫັນແກ່ບໍລິສັດ ເພິ່ງວິນິດໄສໂດຍການອັນຄວນ ບໍ່ເພິ່ງວິນິດໄສໂດຍການບໍ່ຄວນ ເພິ່ງວິນິດໄສດ້ວຍຄຳຈິງ ບໍ່ເພິ່ງວິນິດໄສດ້ວຍຄຳບໍ່ຈິງ ເພິ່ງວິນິດໄສດ້ວຍຄຳສຸພາບ ບໍ່ເພິ່ງວິນິດໄສດ້ວຍຄຳຫຍາບ ເພິ່ງວິນິດໄສດ້ວຍຄຳປະກອບດ້ວຍປະໂຫຍດ ບໍ່ເພິ່ງວິນິດໄສດ້ວຍຄຳບໍ່ປະກອບດ້ວຍປະໂຫຍດ ເພິ່ງເປັນຜູ້ມີເມດຕາຈິດວິນິດໄສ ບໍ່ເພິ່ງເປັນຜູ້ມຸ້ງຮ້າຍວິນິດໄສ ບໍ່ເພິ່ງເປັນຜູ້ຊິ່ມທີ່ຫູ ບໍ່ເພິ່ງຖ້າຈັບຜິດ ບໍ່ເພິ່ງກະພິບຕາ ບໍ່ເພິ່ງຍົກຄິ້ວ ບໍ່ເພິ່ງຊະເງີ້ຫົວ ບໍ່ເພິ່ງເຮັດວິການແຫ່ງມື ບໍ່ເພິ່ງໃຊ້ມືສະແດງທ່າທາງ ເພິ່ງເປັນຜູ້ຮູ້ຈັກບ່ອນນັ່ງ ເພິ່ງເປັນຜູ້ຮູ້ຈັກການນັ່ງ ເພິ່ງນັ່ງເທິງອາສະນະຂອງຕົນ

ທອດຕາຊົ່ວແອກ ເພ່ງເນື້ອຄວາມແລະບໍ່ລຸກຈາກອາສະນະໄປຂ້າງໃດ ບໍ່ເພິ່ງຍັງການວິນິດໄສ

ໃຫ້ບົກຜ່ອງ ບໍ່ເພິ່ງເສບທາງຜິດ ບໍ່ເພິ່ງເວົ້າສັດສ່າຍ ເພິ່ງເປັນຜູ້ບໍ່ຮີບຮ້ອນ ບໍ່ຮີບຟ້າວ ບໍ່ດຸດັນ ເປັນຜູ້ອົດທົນໄດ້ຕໍ່ຄຳເວົ້າ ເພິ່ງເປັນຜູ້ມີເມດຕາຈິດ ຄິດອີດູເພື່ອປະໂຫຍດ ເພິ່ງເປັນ

ຜູ້ມີກະລຸນາຂົນຂວາຍ ເພື່ອປະໂຫຍດ ເພິ່ງເປັນຜູ້ບໍ່ເວົ້າໂລເລ ເປັນຜູ້ເວົ້າມີບ່ອນສຸດ ເພິ່ງເປັນຜູ້ບໍ່ຜູກເວນ ບໍ່ຂັດເຄືອງ ເພິ່ງຮູ້ຈັກຕົນ ເພິ່ງຮູ້ຈັກຜູ້ອື່ນ ເພິ່ງສັງເກດໂຈດ ເພິ່ງສັງເກດຈຳເລີຍ

ເພິ່ງກຳນົດຮູ້ຜູ້ໂຈດບໍ່ເປັນທຳ ເພິ່ງກຳນົດຮູ້ຜູ້ຖືກໂຈດບໍ່ເປັນທຳ ເພິ່ງກຳນົດຮູ້ຜູ້ໂຈດເປັນທຳ ເພິ່ງກຳນົດຮູ້ຜູ້ຖືກໂຈດເປັນທຳ ເພິ່ງກຳນົດຂໍ້ຄວາມເພິ່ງເປີດເຜີຍຜູ້ບໍ່ສະອາດ ທີ່ ໔ ຝ່າຍກ່າວບໍ່ໃຫ້ຕົກຫຼົ່ນ ບໍ່ແຊມຂໍ້ຄວາມອັນເຂົາບໍ່ໄດ້ກ່າວ ເພິ່ງຈື່ບົດພະຍັນຊະນະອັນເຂົ້າບັນທາໄວ້ເປັນຢ່າງດີສອບສວນຈຳເລີຍ ແລ້ວເພິ່ງປັບຕາມຄຳຮັບສາລະພາບ ໂຈດຫຼືຈຳເລີຍຕົກຊະເງີ້ເພິ່ງເວົ້າເອົາໃຈ ເປັນຜູ້ສະຫຼາດ ເພິ່ງເວົ້າປອບ ເພິ່ງເປັນຜູ້ດຸຫ້າມໄວ້ ເພິ່ງເປັນຜູ້ກົງກັບຜູ້ປະພຶດອ່ອນໂຍນ ບໍ່ເພິ່ງລຳອຽງຍ້ອນຮັກ ບໍ່ເພິ່ງລຳອຽງຍ້ອນຊັງ ບໍ່ເພິ່ງລຳອຽງຍ້ອນຫຼົງ ບໍ່ເພິ່ງລຳອຽງຍ້ອນຢ້ານ ເພິ່ງວາງຕົນເປັນກາງ ທັງໃນທຳ ທັງໃນບຸກຄົນ

ກໍແລ ພິກຂຸຜູ້ວິນິດໄສອະທິກອນ ເມື່ອວິນິດໄສອະທິກອນດ້ວຍອາການແນວນີ້ ຊື່ວ່າເປັນຜູ້ເຮັດຕາມຄຳສອນຂອງພຣະສາດສະດາ ເປັນທີ່ຮັກທີ່ພໍໃຈທີ່ເຄົາລົບ ທີ່ສັນເສີນແຫ່ງສະພົມມະຈາຣີທັງຫຼາຍຜູ້ເປັນວິນຍູ

## ວ່າດ້ວຍປະໂຫຍດແຫ່ງສູດ ເປັນຕົ້ນ

[໓໗໓] ສູດເພື່ອປະໂຫຍດແກ່ການຫຼຽບຄຽງ ຂໍ້ອຸປະມາເພື່ອປະໂຫຍດແກ່ການຊີ້ແຈ່ງ ເນື້ອຄວາມເພື່ອປະໂຫຍດທີ່ຈະໃຫ້ເຂົາເຂົ້າໃຈ ການຍ້ອນຖາມເພື່ອປະໂຫຍດແກ່ຄວາມດໍາລົງຢູ່

ການຂໍໂອກາດເພື່ອປະໂຫຍດແກ່ການໂຈດ ການໂຈດເພື່ອປະໂຫຍດແກ່ການໃຫ້ຈໍາເລີຍ ຣະນຶກ ການໃຫ້ຣະນຶກເພື່ອປະໂຫຍດແກ່ຄວາມເປັນຜູ້ມີຄໍາເວົ້າອັນຈະເພິ່ງກ່າວ ຄວາມເປັນຜູ້ມີ ຄໍາເວົ້າອັນຈະເພິ່ງກ່າວເພື່ອປະໂຫຍດແກ່ປະລິໂພດ ປະລິໂພດເພື່ອປະໂຫຍດແກ່ການວິນິດໄສ ການວິນິດໄສເພື່ອປະໂຫຍດແກ່ການພິຈາລະນາ ການພິຈາລະນາເພື່ອປະໂຫຍດແກ່ການຮູ້ຖານະ ແລະບໍ່ແມ່ນຖານະ ການຮູ້ຖານະແລະບໍ່ແມ່ນຖານະເພື່ອປະໂຫຍດແກ່ການຂົ່ມບຸກຄົນຜູ້ດື້ດ້ານ ເພື່ອປະໂຫຍດແກ່ການຍົກຍ້ອງເຫຼົ່າພິກຂຸມີສິນດີງາມ ສົງເພື່ອປະໂຫຍດແກ່ການສອດສ່ອງແລະ ຮັບຮອງ ບຸກຄົນທີ່ສົງອະນຸມັດແລ້ວ ຕັ້ງຢູ່ໃນຕໍາແໜ່ງສະເພາະ ຕັ້ງຢູ່ໃນຕໍາແໜ່ງຜູ້ບໍ່ກ່າວໃຫ້ ຄາດເຄື່ອນປະໂຫຍດແຫ່ງວິໄນ ເປັນຕົ້ນ

ວິໄນເພື່ອປະໂຫຍດແກ່ຄວາມສັງລວມ ຄວາມສັງລວມເພື່ອປະໂຫຍດແກ່ຄວາມບໍ່ເດືອດ ຮ້ອນ ຄວາມບໍ່ເດືອດຮ້ອນເພື່ອປະໂຫຍດແກ່ຄວາມປາໂມດ ຄວາມປາໂມດເພື່ອປະໂຫຍດແກ່ ຄວາມປິຕິ ຄວາມປິຕິ ເພື່ອປະໂຫຍດແກ່ປັດສັດທິ ປັດສັດທິເພື່ອປະໂຫຍດແກ່ຄວາມສຸກ ຄວາມ ສຸກເພື່ອປະໂຫຍດແກ່ສະມາທິ ສະມາທິເພື່ອປະໂຫຍດແກ່ຄວາມຮູ້ເຫັນຕາມເປັນຈິງ ຄວາມຮູ້ ເຫັນຕາມເປັນຈິງເພື່ອປະໂຫຍດແກ່ຄວາມເບື່ອໜ່າຍ ຄວາມເບື່ອໜ່າຍເພື່ອປະໂຫຍດແກ່ຄວາມ ຄາຍກໍາໜັດ ຄວາມຄາຍກໍາໜັດ ເພື່ອປະໂຫຍດແກ່ວິມຸດຕິ ວິມຸດຕິເພື່ອປະໂຫຍດແກ່ວິມຸດຕິ ຍານທັດສະນະ ວິມຸດຕິຍານ ທັດສະນະເພື່ອປະໂຫຍດແກ່ອະນຸປາທາປະຣິນິບພານ ການ ກ່າວມີອະນຸປາທານິບພານນັ້ນເປັນປະໂຫຍດ ການເປີກສາມີອະນຸປາທານິບພານນັ້ນເປັນ ປະໂຫຍດ ຄວາມເປັນປັດໄຈກັນມີອະນຸປາທາ ນິບພານນັ້ນເປັນປະໂຫຍດ ຄວາມງ່ຽງໂສດສະ ດັບມີອະນຸປາທານິບພານນັ້ນເປັນປະໂຫຍດ ຄື ຄວາມພົ້ນວິເສດແຫ່ງຈິດຍ້ອນບໍ່ຍຶດໝັ້ນ

## ອະນຸໂຍຄະຂໍ້ວັດປະຕິບັດ(ຂໍ້ວັດປະຕິບັດໃນການຊັກຖາມ)

[໓໗໗] ທ່ານຈົ່ງພິຈາລະນາຂໍ້ວັດປະຕິບັດ ໃນການຊັກຖາມ ອະນຸໂລມແກ່ສິກຂາບົດ
ອັນພຣະພຸດທະເຈົ້າ ຜູ້ສະຫຼາດ ມີພຣະປັນຍາຊົງວາງໄວ້
ຕັດໄວ້ດີແລ້ວ ຢ່າໃຫ້ເສຍຄະຕິທີ່ເປັນໄປໃນສໍາປະຣາຍະພົບ
ພິກຂຸໃດບໍ່ຮູ້ວັດຖຸ ວິບັດ ອາບັດ ນິທານ ຄໍາຕົ້ນ ຄໍາຫຼັງ
ສິ່ງທີ່ເຮັດແລ້ວແລະຍັງບໍ່ໄດ້ເຮັດ ໂດຍສະເໝີ ແລະເປັນຜູ້ບໍ່ເຂົ້າໃຈອາການ
ພິກຂຸຜູ້ເຊັ່ນນັ້ນແລ ພຣະຜູ້ມີພຣະພາກເຈົ້າຕັດວ່າບໍ່ຄວນເລືອກ

ອັນໜຶ່ງ ພິກຂຸໃດບໍ່ຮູ້ກຳ ອະທິກອນ ແລະບໍ່ເຂົ້າໃຈສະມະຖະ
ເປັນຜູ້ກຳໜັດຂັດເຄືອງ ແລະຫຼົງ ຍ່ອມລຳອຽງຍ້ອນຢ້ານ
ຍ້ອນຫຼົງ ບໍ່ສະຫຼາດໃນສັນຍັດ ບໍ່ສະຫຼາດໃນການພິນິດ
ເປັນຜູ້ໄດ້ພັກພວກ ບໍ່ມີຄວາມລະອາຍ ມີກຳດຳ ບໍ່ເອື້ອເຟື້ອ
ພິກຂຸຜູ້ເຊັ່ນນັ້ນ ໆ ແລ ພຣະຜູ້ມີພຣະພາກເຈົ້າຕັດວ່າບໍ່ຄວນເລືອກ

ພິກຂຸໃດຮູ້ວັດຖຸ ວິບັດ ອາບັດ ນິທານ ຄຳຕົ້ນ ຄຳຫຼັງ
ສິ່ງທີ່ເຮັດແລ້ວແລະຍັງບໍ່ໄດ້ເຮັດໂດຍສະເໝີ ແລະເປັນຜູ້ເຂົ້າໃຈອາການ
ພິກຂຸຜູ້ເຊັ່ນນັ້ນແລ ພຣະຜູ້ມີພຣະພາກເຈົ້າຕັດວ່າຄວນເລືອກ

ອັນໜຶ່ງ ພິກຂຸໃດຮູ້ກຳ ອະທິກອນ ແລະເຂົ້າໃຈສະມະຖະ ເປັນຜູ້ບໍ່ກຳໜັດ
ບໍ່ຂັດເຄືອງແລະບໍ່ຫຼົງ ບໍ່ລຳອຽງຍ້ອນຢ້ານ ຍ້ອນຫຼົງ
ສະຫຼາດໃນສັນຍັດ ສະຫຼາດໃນການພິນິດ ເປັນຜູ້ໄດ້ພັກພວກ
ມີຄວາມລະອາຍ ມີກຳຂາວ ມີຄວາມເຄົາລົບ
ພິກຂຸຜູ້ເຊັ່ນນັ້ນ ໆ ແລ ພຣະຜູ້ມີພຣະພາກເຈົ້າຕັດວ່າຄວນເລືອກ

**ຈູລະສັງຄາມ ຈົບ**

## ຫົວຂໍ້ປະຈຳເລື່ອງ

ພິກຂຸຜູ້ເຂົ້າສັງຄາມເພິ່ງມີຈິດຢຳເກງຖາມ ໜັກໃນສົງ
ບໍ່ໜັກໃນບຸກຄົນ ສູດເພື່ອປະໂຫຍດແກ່ການທຽບຄຽງ
ວິໄນເພື່ອອະນຸເຄາະ ຫົວຂໍ້ຕາມທີ່ກ່າວນີ້ມີອຸດເທດແນວດຽວກັນ
ທ່ານຈັດໄວ້ໃນຈູລະສັງຄາມແລ

໑. ກ່າວໃຫ້ໂອກາດຜູ້ອື່ນ

໒. ໂຈດຕາມອາບັດ ໃນທຳແລະວິໄນອັນສົມຄວນ

໓. ປັບຕາມອາບັດ ໃນທຳແລະວິໄນອັນສົມຄວນ

໔. ຊີ້ແຈ່ງຕາມຄວາມເຫັນ

ອຸບາລີ ພິກຂຸປະກອບດ້ວຍອົງ ໔ ນີ້ແລ ເມື່ອເວົ້າໃນສົງຍ່ອມເປັນທີ່ປາຖະໜາ
ເປັນທີ່ພໍໃຈ ແລະເປັນທີ່ພໍໃຈຂອງຊົນທັງຫຼາຍ

## ອານິສົງໃນການຮຽນວິໄນ

[໔໔໓] ທ່ານພຣະອຸບາລີທູນຖາມ : ຂ້າແຕ່ພຣະອົງຜູ້ຈະເລີນ ໃນການຮຽນວິໄນ ມີອານິສົງທໍ່ໃດ?ນໍແລ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອຸບາລີ ໃນການຮຽນວິໄນ ມີອານິສົງ ໕ ປະການນີ້ ໕ ປະການ ອັນໃດແດ່ ຄື

໑. ກອງສິນເປັນອັນຕົນຄຸ້ມຄອງຮັກສາໄວ້ດ້ວຍດີ
໒. ເປັນບ່ອນເພິ່ງພິງຂອງຜູ້ຖືກຄວາມສົງໄສຄອບງຳ
໓. ເປັນຜູ້ກ້າເວົ້າໃນທ່າມກາງສົງ
໔. ຂົ່ມຂ້າເສິກດ້ວຍດີດ້ວຍສະຫະທຳ
໕. ເປັນຜູ້ປະຕິບັດເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ

ອຸບາລີ ໃນການຮຽນວິໄນ ມີອານິສົງ ໕ ປະການນີ້ແລ

**ນັບປະຕິປັດສຳພະນະວັກທີ ໔ ຈົບ**

## ຫົວຂໍ້ປະຈຳວັກ

ຕ້ອງອາບັດ ໑ ອາບັດໃດ ໑ ກ່າວຕິຕຽນ ໑ ອະລັດຊີ ໑
ສົງຄາມ ໑ ມີຄວາມຄິດມືດມົນ ໑ ອວດອ້າງ ໑ ຂົ່ມຂູ່ ໑ ຮຽນວິໄນ ໑

**ພຣະບັນຍັດຄູ່ທີ ໑ ຈົບ**

# ມະຫາສົງຄາມ

## ວ່າດ້ວຍພິກຂຸຜູ້ເຂົ້າສູ່ມຫາສົງຄາມ

## ໑. ໂວຫຣັນເຕນະຊານິຕັບພາທິ

## ວ່າດ້ວຍຂໍ້ປະຕິບັດທີ່ພິກຂຸຜູ້ກ່າວເພິ່ງຮູ້ ເປັນຕົ້ນ

[໔໔໗] ອັນພິກຂຸຜູ້ເຂົ້າສົງຄາມ ເມື່ອກ່າວໃນສົງເພິ່ງຮູ້ວັດຖຸ ເພິ່ງຮູ້ວິບັດ ເພິ່ງຮູ້ອາບັດ ເພິ່ງຮູ້ນິທານ ເພິ່ງຮູ້ອາການ ເພິ່ງຮູ້ຄຳຕົ້ນແລະຄຳຫຼັງ ເພິ່ງຮູ້ສິ່ງທີ່ເຮັດແລ້ວແລະຍັງບໍ່ໄດ້ເຮັດ

ເພິ່ງຮູ້ກຳ ເພິ່ງຮູ້ອະທິກອນ ເພິ່ງຮູ້ສະມະຖະ ບໍ່ເພິ່ງລຳອຽງຍ້ອນຮັກ ບໍ່ເພິ່ງລຳອຽງຍ້ອນຊັງ ບໍ່ເພິ່ງລຳອຽງຍ້ອນຫຼົງ ບໍ່ເພິ່ງລຳອຽງຍ້ອນຢ້ານ ເພິ່ງຊີ້ແຈ່ງໃນຖານະທີ່ຄວນຊີ້ແຈ່ງ ເພິ່ງພິຈາລະນາໃນຖານະທີ່ຄວນພິຈາລະນາ ເພິ່ງເພ່ງເລັງໃນຖານະທີ່ຄວນເພ່ງເລັງ ເພິ່ງເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ ບໍ່ເພິ່ງດູໝິ່ນຝ່າຍອື່ນດ້ວຍເຂົ້າໃຈວ່າເຮົາໄດ້ພວກແລ້ວ ບໍ່ເພິ່ງດູໝິ່ນຜູ້ມີສຸຕະໜ້ອຍດ້ວຍເຂົ້າໃຈວ່າເຮົາມີສຸຕະຫຼາຍ ບໍ່ເພິ່ງດູໝິ່ນພິກຂຸຜູ້ອ່ອນກວ່າດ້ວຍເຂົ້າໃຈວ່າເຮົາເປັນຜູ້ແກ່ກວ່າ ບໍ່ເພິ່ງເວົ້າເລື້ອງທີ່ຍັງມາບໍ່ເຖິງ ບໍ່ເພິ່ງໃຫ້ເລື້ອງທີ່ມາເຖິງແລ້ວເສື່ອມໄປຈາກພຣະທຳວິໄນ ອະທິກອນນັ້ນຈະລະງັບດ້ວຍທຳໃດ ດ້ວຍວິໄນໃດ ດ້ວຍສັດຖຸສາດໃດ ເພິ່ງໃຫ້ອະທິກອນນັ້ນລະງັບດ້ວຍວິທີນັ້ນ

## ວ່າດ້ວຍການຮູ້ວັດຖຸ

[໓໕໙] ຄຳວ່າ ເພິ່ງຮູ້ວັດຖຸ ນັ້ນ ຄື ເພິ່ງຮູ້ວັດຖຸແຫ່ງປາຣາຊິກ ໗ ສິກຂາບົດ ເພິ່ງຮູ້ວັດຖຸແຫ່ງສັງຄາທິເສດ ໔໓ ສິກຂາບົດ ເພິ່ງຮູ້ວັດຖຸແຫ່ງອະນິຍະຕະ ໔ ສິກຂາບົດ ເພິ່ງຮູ້ວັດຖຸແຫ່ງນິດສັກຄີ ໔໔ ສິກຂາບົດ ເພິ່ງຮູ້ວັດຖຸແຫ່ງປາຈິດຕີ ໑໗໗ ສິກຂາບົດ ເພິ່ງຮູ້ວັດຖຸແຫ່ງປະຕິເທສະນີຍະ ໑໔ ສິກຂາບົດ ເພິ່ງຮູ້ວັດຖຸແຫ່ງທຸກກົດ ເພິ່ງຮູ້ວັດຖຸແຫ່ງທຸບພາສິດ

## ວ່າດ້ວຍການຮູ້ວິບັດ

[໓໗໐] ຄຳວ່າ ເພິ່ງຮູ້ວິບັດ ນັ້ນ ຄື ເພິ່ງຮູ້ສີລະວິບັດ ເພິ່ງຮູ້ອາຈາຣະວິບັດ ເພິ່ງຮູ້ທິດຖິວິບັດ ເພິ່ງຮູ້ອາຊີວະວິບັດ

## ວ່າດ້ວຍການຮູ້ອາບັດ

[໓໗໑] ຄຳວ່າ ເພິ່ງຮູ້ອາບັດ ນັ້ນ ຄື ເພິ່ງຮູ້ອາບັດປາຣາຊິກ ເພິ່ງຮູ້ອາບັດສັງຄາທິເສດ ເພິ່ງຮູ້ອາບັດຖຸນລັດໄຈ ເພິ່ງຮູ້ອາບັດປາຈິດຕີ ເພິ່ງຮູ້ອາບັດປະຕິເທສະນີຍະ ເພິ່ງຮູ້ອາບັດທຸກກົດ ເພິ່ງຮູ້ອາບັດທຸບພາສິດ

## ວ່າດ້ວຍການຮູ້ນິທານ

[໓໗໔] ຄຳວ່າ ເພິ່ງຮູ້ນິທານ ນັ້ນ ຄື ເພິ່ງຮູ້ນິທານແຫ່ງປາຣາຊິກ ໗ ສິກຂາບົດ ເພິ່ງຮູ້ນິທານແຫ່ງສັງຄາທິເສດ ໔໓ ສິກຂາບົດ ເພິ່ງຮູ້ນິທານແຫ່ງອະນິຍະຕະ ໔ ສິກຂາບົດ ເພິ່ງຮູ້ນິທາ

ນແຫ່ງນິດສັກຄີ ໔໘ ສິກຂາບົດ ເພິ່ງຮູ້ນິທານແຫ່ງປາຈິດຕີ ໑໗໗ ສິກຂາບົດ ເພິ່ງຮູ້ນິທານແຫ່ງ ປະຕິເທສະນີຍະ ໑໔ ສິກຂາບົດ ເພິ່ງຮູ້ນິທານແຫ່ງທຸກກົດ ເພິ່ງຮູ້ນິທານແຫ່ງທຸບພາສິດ

## ວ່າດ້ວຍການຮູ້ອາການ

[໓໗໓] ຄໍາວ່າ ເພິ່ງຮູ້ອາການ ນັ້ນ ຄື ເພິ່ງຮູ້ສົງໂດຍອາການ ເພິ່ງຮູ້ຄະນະໂດຍອາການ ເພິ່ງຮູ້ບຸກຄົນໂດຍອາການ ເພິ່ງຮູ້ໂຈດໂດຍອາການ ເພິ່ງຮູ້ຈໍາເລີຍໂດຍອາການ

ຂໍ້ວ່າ ເພິ່ງຮູ້ສົງໂດຍອາການ ນັ້ນ ຄື ເພິ່ງຮູ້ສົງໂດຍອາການແນວນີ້ວ່າ ສົງໝູ່ນີ້ຈະ ສາມາດລະງັບອະທິກອນນີ້ໄດ້ໂດຍທໍາ ໂດຍວິໄນ ໂດຍສັດຖຸສາດ ບໍນໍ

ຂໍ້ວ່າ ເພິ່ງຮູ້ຄະນະໂດຍອາການ ນັ້ນ ຄື ເພິ່ງຮູ້ຄະນະໂດຍອາການແນວນີ້ວ່າ ຄະນະນີ້ ຈະສາມາດລະງັບອະທິກອນນີ້ໄດ້ໂດຍທໍາ ໂດຍວິໄນ ໂດຍສັດຖຸສາດ ບໍນໍ

ຂໍ້ວ່າ ເພິ່ງຮູ້ບຸກຄົນໂດຍອາການ ນັ້ນ ຄື ເພິ່ງຮູ້ບຸກຄົນໂດຍອາການແນວນີ້ວ່າ ບຸກຄົນນີ້ ຈະສາມາດລະງັບອະທິກອນນີ້ໄດ້ໂດຍທໍາ ໂດຍວິໄນ ໂດຍສັດຖຸສາດ ບໍນໍ

ຂໍ້ວ່າ ເພິ່ງຮູ້ໂຈດໂດຍອາການ ນັ້ນ ຄື ເພິ່ງຮູ້ໂຈດໂດຍອາການແນວນີ້ວ່າ ທ່ານຜູ້ນີ້ຈະ ຕັ້ງຢູ່ໃນທໍາ ໕ ປະການ ແລ້ວໂຈດຜູ້ອື່ນ ບໍນໍ

ຂໍ້ວ່າ ເພິ່ງຮູ້ຈໍາເລີຍໂດຍອາການ ນັ້ນ ຄື ເພິ່ງຮູ້ຈໍາເລີຍໂດຍອາການແນວນີ້ວ່າ ທ່ານຜູ້ນີ້ ຈະຕັ້ງຢູ່ໃນທໍາ ໔ ຂໍ້ ຄື ໃຫ້ການຕາມຈິງແລະບໍ່ໂກດ ບໍນໍ

## ວ່າດ້ວຍການຮູ້ຄໍາຕົ້ນແລະຄໍາຫຼັງ

[໓໗໔] ຄໍາວ່າ ເພິ່ງຮູ້ຄໍາຕົ້ນແລະຄໍາຫຼັງ ນັ້ນ ຄື ເພິ່ງຮູ້ຄໍາຕົ້ນແລະຄໍາຫຼັງແນວນີ້ວ່າ ທ່ານ ຜູ້ນີ້ຍ້າຍວັດຖຸຈາກວັດຖຸ ຍ້າຍວິບັດຈາກວິບັດ ຍ້າຍອາບັດຈາກອາບັດ ປະຕິເສດແລ້ວກັບປະຕິ ຍານ ປະຕິຍານແລ້ວກັບປະຕິເສດ ຫຼືສັບເລື້ອງອື່ນດ້ວຍເລື້ອງອື່ນ ບໍນໍ

## ວ່າດ້ວຍການຮູ້ສິ່ງທີ່ເຮັດແລ້ວແລະຍັງບໍ່ໄດ້ເຮັດ

[໓໗໕] ຄໍາວ່າ ເພິ່ງຮູ້ສິ່ງທີ່ເຮັດແລ້ວແລະຍັງບໍ່ໄດ້ເຮັດ ນັ້ນ ຄື ເພິ່ງຮູ້ເມຖຸນທໍາ ເພິ່ງຮູ້ຂໍ້ ອະນຸໂລມແກ່ເມຖຸນທໍາ ເພິ່ງຮູ້ບຸບພະພາກແຫ່ງເມຖຸນທໍາ

ຂໍ້ວ່າ ເພິ່ງຮູ້ເມຖຸນທໍາ ນັ້ນ ຄື ເພິ່ງຮູ້ກິດທີ່ກະທໍາກັນສອງຕໍ່ສອງ

ຂໍ້ວ່າ ເພິ່ງຮູ້ຂໍ້ອະນຸໂລມແກ່ເມຖຸນທໍາ ນັ້ນ ຄື (ເພິ່ງຮູ້ເລື້ອງ) ພິກຂຸອົມອົງຄະຊາດຂອງ ພິກຂຸອື່ນດ້ວຍປາກຂອງຕົນ

ຂໍ້ວ່າ ເພິ່ງຮູ້ບຸບພະພາກແຫ່ງເມຖຸນທຳ ນັ້ນ ຄື ເພິ່ງຮູ້ສີບໍ່ແມ່ນສີ໑ ການຖືກຕ້ອງກາຍວາຈາຊົ່ວຫຍາບ ການປົນເປີຄວາມຕ້ອງການຂອງຕົນ ການໃຊ້ຄຳຊັກຊວນ໒

## ວ່າດ້ວຍການຮູ້ກຳ

[໓໗໖] ຄຳວ່າ ເພິ່ງຮູ້ກຳ ນັ້ນ ຄື ເພິ່ງຮູ້ກຳ ໑໖ ຢ່າງ ຄື ອະປະໂລກະນະກຳ ໔ ຍັດຕິກຳ ໔ ຍັດຕິທຸຕິຍະກຳ ໔ ຍັດຕິຈະຕຸດຖະກຳ ໔

## ວ່າດ້ວຍການຮູ້ອະທິກອນ

[໓໗໗] ຄຳວ່າ ເພິ່ງຮູ້ອະທິກອນ ນັ້ນ ຄື ເພິ່ງຮູ້ອະທິກອນ ໔ ຄື (໑) ວິວາທາທິກອນ (໒) ອະນຸວາທາທິກອນ (໓) ອາປັດຕາທິກອນ (໔) ກິດຈາທິກອນ

## ວ່າດ້ວຍການຮູ້ສະມະຖະ

[໓໗໘] ຄຳວ່າ ເພິ່ງຮູ້ສະມະຖະ ນັ້ນ ຄື ເພິ່ງຮູ້ສະມະຖະ ໗ ຄື (໑) ສຳມຸຂາວິໄນ (໒) ເຍພຸຍຍະສິກາ (໓) ສະຕິວິໄນ (໔) ອະມູລະຫະວິໄນ (໕) ປະຕິນຍາຕະກະຣະນະ (໖) ຕັດສະປາປິຍະສິກາ (໗) ຕິນະວັດຖາຣະກະ

## ໒. ອະຄະຕິອະຄັນຕັບພະ

## ວ່າດ້ວຍພິກຂຸບໍ່ເພິ່ງລຳອຽງ

## ບໍ່ລຳອຽງຍ້ອນຮັກ

[໓໗໙] ຄຳວ່າ ບໍ່ເພິ່ງລຳອຽງຍ້ອນຮັກ ນັ້ນ ຄື ພິກຂຸຜູ້ລຳອຽງຍ້ອນຮັກ ແນວໃດຈຶ່ງຊື່ວ່າລຳອຽງຍ້ອນຮັກ ພິກຂຸລາງອົງໃນທຳວິໄນນີ້ ຄິດວ່າ ທ່ານຜູ້ນີ້ເປັນອຸປັດຊາ ເປັນອາຈານ ເປັນສັດທິວິຫາຣິກ ເປັນອັນເຕວາສິກ ເປັນຜູ້ຮ່ວມອຸປັດຊາ ເປັນຜູ້ຮ່ວມອາຈານ ເປັນຜູ້ເຄີຍເຫັນກັນມາ ເປັນຜູ້ເຄີຍຮ່ວມຄົບກັນມາ ຫຼືເປັນຍາດສາໂລຫິດຂອງເຮົາ ດັ່ງນີ້ແລ້ວ ເພື່ອອະນຸເຄາະຜູ້ນັ້ນ ເພື່ອຕາມອາຮັກຂາທ່ານຜູ້ນັ້ນ ຈຶ່ງ

໑. ສະແດງອະທຳວ່າ ເປັນທຳ

໒. ສະແດງທຳວ່າ ເປັນອະທຳ

໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ ເປັນວິໄນ
໔. ສະແດງວິໄນວ່າ ເປັນສິ່ງທີ່ບໍ່ແມ່ນວິໄນ
໕. ສະແດງສິ່ງທີ່ພຣະຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ຕັດໄວ້ວ່າ ພຣະຕະຖາຄົດໄດ້ພາສິດໄວ້ ໄດ້ຕັດໄວ້
໖. ສະແດງສິ່ງທີ່ພຣະຕະຖາຄົດໄດ້ພາສິດໄວ້ ໄດ້ຕັດໄວ້ວ່າ ພຣະຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ຕັດໄວ້
໗. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ພຣະຕະຖາຄົດບໍ່ໄດ້ຊົງປະພຶດມາວ່າ ພຣະຕະຖາຄົດໄດ້ ຊົງປະພຶດມາ
໘. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ພຣະຕະຖາຄົດໄດ້ຊົງປະພຶດມາວ່າ ພຣະຕະຖາຄົດບໍ່ໄດ້ ຊົງປະພຶດມາ
໙. ສະແດງສິ່ງທີ່ພຣະຕະຖາຄົດບໍ່ໄດ້ຊົງບັນຍັດໄວ້ວ່າ ພຣະຕະຖາຄົດໄດ້ຊົງບັນຍັດ
໑໐. ສະແດງສິ່ງທີ່ພຣະຕະຖາຄົດໄດ້ຊົງບັນຍັດໄວ້ວ່າ ພຣະຕະຖາຄົດບໍ່ໄດ້ຊົງບັນຍັດໄວ້
໑໑. ສະແດງອະນາບັດວ່າ ເປັນອາບັດ
໑໒. ສະແດງອາບັດວ່າ ເປັນອະນາບັດ
໑໓. ສະແດງອາບັດເບົາວ່າ ເປັນອາບັດໜັກ
໑໔. ສະແດງອາບັດໜັກວ່າ ເປັນອາບັດເບົາ
໑໕. ສະແດງອາບັດທີ່ມີສ່ວນເຫຼືອວ່າ ເປັນອາບັດທີ່ບໍ່ມີສ່ວນເຫຼືອ
໑໖. ສະແດງອາບັດທີ່ບໍ່ມີສ່ວນເຫຼືອວ່າ ເປັນອາບັດທີ່ມີສ່ວນເຫຼືອ
໑໗. ສະແດງອາບັດຊົ່ວຫຍາບວ່າ ເປັນອາບັດບໍ່ຊົ່ວຫຍາບ
໑໘. ສະແດງອາບັດບໍ່ຊົ່ວຫຍາບວ່າ ເປັນອາບັດຊົ່ວຫຍາບ

ພິກຂຸຜູ້ລຳອຽງຍ້ອນຮັກດ້ວຍວັດຖຸ ໑໘ ຢ່າງນີ້ ຍ່ອມປະຕິບັດເພື່ອບໍ່ເກື້ອກູນແກ່ຊົນທັງຫຼາຍ ເພື່ອຄວາມບໍ່ເປັນສຸກແກ່ຊົນທັງຫຼາຍ ເພື່ອຄວາມພິນາດແກ່ຊົນທັງຫຼາຍ ເພື່ອຄວາມບໍ່ເກື້ອກູນ ເພື່ອຄວາມທຸກແກ່ເທວະດາແລະມະນຸດທັງຫຼາຍ ພິກຂຸຜູ້ລຳອຽງຍ້ອນຮັກດ້ວຍວັດຖຸ ໑໘ ຢ່າງນີ້ ຍ່ອມບໍລິຫານຕົນໃຫ້ເປັນຜູ້ຖືກຂຸດ ຖືກກຳຈັດ ເປັນຜູ້ປະກອບດ້ວຍໂທດ ອັນວິນຍູຊົນເພິ່ງຕຳໜິ ແລະຍ່ອມປະສົບສິ່ງບໍ່ແມ່ນບຸນຫຼວງຫຼາຍ ພິກຂຸຜູ້ລຳອຽງຍ້ອນຮັກ ຍ່ອມລຳອຽງຍ້ອນຮັກແນວນີ້

## ວ່າດ້ວຍບໍ່ລຳອຽງຍ້ອນຊັງ

[໓໗໐] ຄຳວ່າ ບໍ່ເພິ່ງລຳອຽງຍ້ອນຊັງ ນັ້ນ ຄື ພິກຂຸຜູ້ລຳອຽງຍ້ອນຊັງ ແນວໃດຈຶ່ງຊື່ວ່າລຳອຽງຍ້ອນຊັງ ພິກຂຸລາງອົງໃນພຣະທຳວິໄນນີ້ ຜູກອາຄາດວ່າ

໑. ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໒. ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໓. ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໔. ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ບໍ່ພໍໃຈຂອງເຮົາ
໕. ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ບໍ່ພໍໃຈຂອງເຮົາ
໖. ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ບໍ່ພໍໃຈຂອງເຮົາ
໗. ຜູ້ນີ້ໄດ້ເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກ ບໍ່ເປັນທີ່ບໍ່ພໍໃຈຂອງເຮົາ
໘. ຜູ້ນີ້ກຳລັງເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກ ບໍ່ເປັນທີ່ບໍ່ພໍໃຈຂອງເຮົາ
໙. ຜູ້ນີ້ຈັກເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກ ບໍ່ເປັນທີ່ບໍ່ພໍໃຈຂອງເຮົາ

ພິກຂຸອາຄາດ ປອງຮ້າຍ ຂຸ່ນເຄືອງ ຖືກຄວາມໂກດຄອບງຳດ້ວຍວັດຖຸອາຄາດ ໙ ຢ່າງນີ້ ຍ່ອມສະແດງອະທຳວ່າເປັນທຳ ສະແດງທຳວ່າເປັນອະທຳ ຯລຯ ສະແດງອາບັດຊົ່ວຫຍາບວ່າຕ້ອງອາບັດບໍ່ຊົ່ວຫຍາບ ສະແດງອາບັດບໍ່ຊົ່ວຫຍາບວ່າຕ້ອງອາບັດຊົ່ວຫຍາບ

ພິກຂຸຜູ້ລຳອຽງຍ້ອນຊັງດ້ວຍວັດຖຸ ໑໘ ຢ່າງນີ້ ຍ່ອມປະຕິບັດເພື່ອບໍ່ເກື້ອກູນແກ່ຊົນທັງຫຼາຍ ເພື່ອຄວາມບໍ່ເປັນສຸກແກ່ຊົນທັງຫຼາຍ ເພື່ອຄວາມພິນາດແກ່ຊົນທັງຫຼາຍ ເພື່ອຄວາມບໍ່ເກື້ອກູນ ເພື່ອຄວາມທຸກແກ່ເທວະດາແລະມະນຸດທັງຫຼາຍ ພິກຂຸຜູ້ລຳອຽງຍ້ອນຊັງດ້ວຍວັດຖຸ ໑໘ ຢ່າງນີ້ ຍ່ອມບໍລິຫານຕົນໃຫ້ເປັນຜູ້ຖືກຂຸດ ຖືກກຳຈັດ ເປັນຜູ້ປະກອບດ້ວຍໂທດ ອັນວິນຍູຊົນເພິ່ງຕຳໜິ ແລະຍ່ອມປະສົບສິ່ງບໍ່ແມ່ນບຸນຫຼວງຫຼາຍ ພິກຂຸຜູ້ລຳອຽງຍ້ອນຊັງ ຍ່ອມລຳອຽງຍ້ອນຊັງແນວນີ້

## ບໍ່ລຳອຽງຍ້ອນຫຼົງ

[໓໗໑] ຄຳວ່າ ບໍ່ເພິ່ງລຳອຽງຍ້ອນຫຼົງ ນັ້ນ ຄື ພິກຂຸຜູ້ລຳອຽງຍ້ອນຫຼົງ ແນວໃດຈຶ່ງຊື່ວ່າລຳອຽງຍ້ອນຫຼົງ ພິກຂຸເປັນຜູ້ກຳໜັດຍ່ອມລຳອຽງດ້ວຍອຳນາດຄວາມກຳໜັດ ເປັນຜູ້ຂຸ່ນເຄືອງຍ່ອມລຳອຽງດ້ວຍອຳນາດຄວາມຂຸ່ນເຄືອງ ເປັນຜູ້ຫຼົງຍ່ອມລຳອຽງດ້ວຍອຳນາດຄວາມຫຼົງ ເປັນຜູ້ຖືກທິດຖິລູບຄຳຍ່ອມລຳອຽງດ້ວຍອຳນາດທິດຖິ ພິກຂຸເປັນຜູ້ຫຼົງງົມງວາຍ ອັນຄວາມຫຼົງຄອບງຳຍ່ອມສະແດງອະທຳວ່າເປັນທຳ ສະແດງທຳວ່າເປັນອະທຳ ຯລຯ ສະແດງອາບັດຊົ່ວຫຍາບ ວ່າ

ເປັນອາບັດບໍ່ຊົ່ວຫຍາບ ສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ ພິກຂຸຜູ້ລຳອຽງຍ້ອນຫຼົງດ້ວຍວັດຖຸ ໑໘ ຢ່າງນີ້ ຍ່ອມປະຕິບັດເພື່ອບໍ່ເກື້ອກູນແກ່ຊົນທັງຫຼາຍ ເພື່ອຄວາມບໍ່ເປັນສຸກແກ່ຊົນທັງຫຼາຍ ເພື່ອຄວາມພິນາດແກ່ຊົນທັງຫຼາຍ ເພື່ອຄວາມບໍ່ເກື້ອກູນ ເພື່ອຄວາມທຸກແກ່ເທວະດາແລະມະນຸດທັງຫຼາຍ

ພິກຂຸຜູ້ລຳອຽງຍ້ອນຫຼົງດ້ວຍວັດຖຸ ໑໘ ຢ່າງນີ້ ຍ່ອມບໍລິຫານຕົນໃຫ້ເປັນຜູ້ຖືກຂຸດ ຖືກກຳຈັດ ເປັນຜູ້ປະກອບດ້ວຍໂທດ ອັນວິນຍູຊົນເພິ່ງຕຳໜິ ແລະຍ່ອມປະສົບສິ່ງບໍ່ແມ່ນບຸນຫຼວງຫຼາຍ ພິກຂຸຜູ້ລຳອຽງຍ້ອນຫຼົງ ຍ່ອມລຳອຽງຍ້ອນຫຼົງແນວນີ້

## ບໍ່ລຳອຽງຍ້ອນຢ້ານ

[໓໘໔] ຄຳວ່າ ບໍ່ເພິ່ງລຳອຽງຍ້ອນຢ້ານ ນັ້ນ ຄື ພິກຂຸຜູ້ລຳອຽງຍ້ອນຢ້ານ ແນວໃດຈຶ່ງຊື່ວ່າລຳອຽງຍ້ອນຢ້ານ ພິກຂຸລາງອົງໃນທຳວິໄນນີ້ ຄິດວ່າ ຜູ້ນີ້ອາໄສຄວາມປະພຶດບໍ່ຮຽບຮ້ອຍອາໄສຄວາມຢຶດຖື ອາໄສພັກພວກມີກຳລັງ ເປັນຜູ້ດຸຮ້າຍຫຍາບຄາຍ ຈັກເຮັດອັນຕະລາຍແກ່ຊີວິດ ຫຼືອັນຕະລາຍແກ່ພົມມະຈັນ ດັ່ງນີ້ ຈຶ່ງຢ້ານໄພຈາກຜູ້ນັ້ນ ຍ່ອມສະແດງອະທຳວ່າເປັນທຳສະແດງທຳວ່າເປັນອະທຳ ຯລຯ ສະແດງອາບັດຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ ສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ

ພິກຂຸຜູ້ລຳອຽງຍ້ອນຢ້ານດ້ວຍວັດຖຸ ໑໘ ຢ່າງນີ້ ຍ່ອມປະຕິບັດເພື່ອບໍ່ເກື້ອກູນແກ່ຊົນທັງຫຼາຍ ເພື່ອຄວາມບໍ່ເປັນສຸກແກ່ຊົນທັງຫຼາຍ ເພື່ອຄວາມພິນາດແກ່ຊົນທັງຫຼາຍ ເພື່ອຄວາມບໍ່ເກື້ອກູນ ເພື່ອຄວາມທຸກແກ່ເທວະດາແລະມະນຸດທັງຫຼາຍ ພິກຂຸຜູ້ລຳອຽງຍ້ອນຢ້ານດ້ວຍວັດຖຸ ໑໘ ຢ່າງນີ້ ຍ່ອມບໍລິຫານຕົນໃຫ້ເປັນຜູ້ຖືກຂຸດ ຖືກກຳຈັດ ເປັນຜູ້ປະກອບດ້ວຍໂທດ ອັນວິນຍູຊົນເພິ່ງຕຳໜິແລະຍ່ອມປະສົບສິ່ງບໍ່ແມ່ນບຸນຫຼວງຫຼາຍ ພິກຂຸຜູ້ລຳອຽງຍ້ອນຢ້ານ ຍ່ອມລຳອຽງຍ້ອນຢ້ານແນວນີ້

## ນິຄົມຄາຖາ

ຜູ້ໃດປະພຶດລ່ວງທຳຍ້ອນຮັກ ຍ້ອນຊັງ
ຍ້ອນຢ້ານ ຍ້ອນຫຼົງ ຍົດຂອງຜູ້ນັ້ນ ຍ່ອມເສື່ອມ
ຄືດວງຈັນໃນມື້ຂ້າງແຮມ ສັນນັ້ນ

## ໓. ອະຄະຕິອະກະມະນະ

## ວ່າດ້ວຍການບໍ່ລຳອຽງ

## ບໍ່ລຳອຽງຍ້ອນຮັກ

[໓໗໓] ຖາມ : ແນວໃດຊື່ວ່າ ບໍ່ລຳອຽງຍ້ອນຮັກ

ຕອບ : ພິກຂຸເມື່ອສະແດງອະທຳວ່າເປັນອະທຳ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງທຳວ່າເປັນທຳ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງສິ່ງບໍ່ແມ່ນວິໄນວ່າບໍ່ແມ່ນວິໄນ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງວິໄນວ່າເປັນວິໄນ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງສິ່ງທີ່ພຣະຕະຖາຄົດບໍ່ໄດ້ພາສິດໄວ້ບໍ່ໄດ້ຕັດໄວ້ວ່າ ພຣະຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ຕັດໄວ້ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງສິ່ງທີ່ພຣະຕະຖາຄົດໄດ້ພາສິດໄວ້ໄດ້ຕັດໄວ້ວ່າ ພຣະຕະຖາຄົດໄດ້ພາສິດໄວ້ ໄດ້ຕັດໄວ້ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງຈະຣິຍາຂໍ້ວັດປະຕິບັດທີ່ພຣະຕະຖາຄົດບໍ່ໄດ້ຊົງປະພຶດວ່າ ພຣະຕະຖາຄົດບໍ່ໄດ້ຊົງປະພຶດມາ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງຈະຣິຍາຂໍ້ວັດປະຕິບັດທີ່ພຣະຕະຖາຄົດໄດ້ຊົງປະພຶດວ່າ ພຣະຕະຖາຄົດໄດ້ຊົງປະພຶດມາ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງສິ່ງທີ່ພຣະຕະຖາຄົດບໍ່ໄດ້ຊົງບັນຍັດໄວ້ວ່າ ພຣະຕະຖາຄົດບໍ່ໄດ້ຊົງບັນຍັດໄວ້ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງສິ່ງທີ່ພຣະຕະຖາຄົດໄດ້ຊົງບັນຍັດໄວ້ວ່າ ພຣະຕະຖາຄົດໄດ້ຊົງບັນຍັດໄວ້ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງອະນາບັດວ່າເປັນອະນາບັດ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງອາບັດວ່າເປັນອາບັດ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງອາບັດເບົາວ່າເປັນອາບັດເບົາ ຊື່ວ່າບໍ່ລຳອຽງຍ້ອນຮັກ

ສະແດງອາບັດໜັກວ່າເປັນອາບັດໜັກ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງອາບັດທີ່ມີສ່ວນເຫຼືອວ່າເປັນອາບັດມີສ່ວນເຫຼືອ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງອາບັດບໍ່ມີສ່ວນເຫຼືອວ່າເປັນອາບັດບໍ່ມີສ່ວນເຫຼືອ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງອາບັດຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ ຊື່ວ່າບໍ່ລຳອຽງຍ້ອນຮັກ

ເມື່ອສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ ຊື່ວ່າບໍ່ລຳອຽງຍ້ອນຮັກ

ພິກຂຸຊື່ວ່າບໍ່ລຳອຽງຍ້ອນຮັກ ດ້ວຍອາການແນວນີ້

## ບໍ່ລຳອຽງຍ້ອນຊັງ

[໓໗໔] ຖາມ : ແນວໃດຊື່ວ່າ ບໍ່ລຳອຽງຍ້ອນຊັງ

ຕອບ : ພິກຂຸເມື່ອສະແດງອະທຳວ່າເປັນອະທຳ ຊື່ວ່າບໍ່ລຳອຽງຍ້ອນຊັງ ເມື່ອສະແດງທຳວ່າເປັນທຳ ຊື່ວ່າບໍ່ລຳອຽງຍ້ອນຊັງ ຯລຯ ເມື່ອສະແດງອາບັດຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ ຊື່ວ່າບໍ່ລຳອຽງຍ້ອນຊັງ ເມື່ອສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ ຊື່ວ່າບໍ່ລຳອຽງຍ້ອນຊັງ ພິກຂຸຊື່ວ່າບໍ່ລຳອຽງຍ້ອນຊັງ ດ້ວຍອາການແນວນີ້

## ບໍ່ລຳອຽງຍ້ອນຫຼົງ

[໓໗໕] ຖາມ : ແນວໃດຊື່ວ່າ ບໍ່ລຳອຽງຍ້ອນຫຼົງ

ຕອບ : ພິກຂຸເມື່ອສະແດງອະທຳວ່າເປັນອະທຳ ຊື່ວ່າບໍ່ລຳອຽງຍ້ອນຫຼົງ ເມື່ອສະແດງທຳວ່າເປັນທຳ ຊື່ວ່າບໍ່ລຳອຽງຍ້ອນຫຼົງ ຯລຯ ເມື່ອສະແດງອາບັດຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ ຊື່ວ່າບໍ່ລຳອຽງຍ້ອນຫຼົງ ເມື່ອສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ ຊື່ວ່າບໍ່ລຳອຽງຍ້ອນຫຼົງ ພິກຂຸຊື່ວ່າບໍ່ລຳອຽງຍ້ອນຫຼົງ ດ້ວຍອາການແນວນີ້

## ບໍ່ລຳອຽງຍ້ອນຢ້ານ

[໓໗໕] ຖາມ : ແນວໃດຊື່ວ່າ ບໍ່ລຳອຽງຍ້ອນຢ້ານ

ຕອບ : ພິກຂຸເມື່ອສະແດງອະທຳວ່າເປັນອະທຳ ຊື່ວ່າບໍ່ລຳອຽງຍ້ອນຢ້ານ ເມື່ອສະແດງທຳວ່າເປັນທຳ ຊື່ວ່າບໍ່ລຳອຽງຍ້ອນຢ້ານ ຯລຯ ເມື່ອສະແດງອາບັດຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ ຊື່ວ່າບໍ່ລຳອຽງຍ້ອນຢ້ານ ເມື່ອສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ ຊື່ວ່າບໍ່ລຳອຽງຍ້ອນຢ້ານ ພິກຂຸຊື່ວ່າບໍ່ລຳອຽງຍ້ອນຢ້ານ ດ້ວຍອາການແນວນີ້

## ນິຄົມຄາຖາ

ຜູ້ໃດບໍ່ປະພຶດລ່ວງທຳຍ້ອນຮັກ ຍ້ອນຊັງ ຍ້ອນຢ້ານ ຍ້ອນຫຼົງ ຍົດຂອງຜູ້ນັ້ນຍ່ອມເຕັມປ່ຽມ ຄືດວງຈັນໃນມື້ຂ້າງຂຶ້ນ ສັນນັ້ນ

## ໔. ສັນຍາປະນິຍາທິ

## ວ່າດ້ວຍການຊີ້ແຈ່ງ ເປັນຕົ້ນ

[໓໗໗] ຖາມ : ແນວໃດຊື່ວ່າ ຊີ້ແຈ່ງໃນຖານະທີ່ຄວນຊີ້ແຈ່ງ

ຕອບ : ພິກຂຸເມື່ອສະແດງອະທຳວ່າເປັນອະທຳ ຊື່ວ່າຊີ້ແຈ່ງໃນຖານະທີ່ຄວນຊີ້ແຈ່ງ

ເມື່ອສະແດງທຳວ່າເປັນທຳ ຊື່ວ່າຊີ້ແຈ່ງໃນຖານະທີ່ຄວນຊີ້ແຈ່ງ ຯລຯ

ເມື່ອສະແດງອາບັດຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ ຊື່ວ່າຊີ້ແຈ່ງໃນຖານະທີ່ຄວນຊີ້ແຈ່ງ

ເມື່ອສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ ຊື່ວ່າຊີ້ແຈ່ງໃນຖານະທີ່ຄວນຊີ້ແຈ່ງ

ພິກຂຸຊື່ວ່າຊີ້ແຈ່ງໃນຖານະທີ່ຄວນຊີ້ແຈ່ງ ດ້ວຍອາການແນວນີ້

## ວ່າດ້ວຍການພິຈາລະນາ

[໓໗໘] ຖາມ : ແນວໃດຊື່ວ່າ ພິຈາລະນາໃນຖານະທີ່ຄວນພິຈາລະນາ

ຕອບ : ພິກຂຸເມື່ອສະແດງອະທຳວ່າເປັນອະທຳ ຊື່ວ່າພິຈາລະນາໃນຖານະທີ່ຄວນພິຈາລະນາ

ເມື່ອສະແດງທຳວ່າເປັນທຳ ຊື່ວ່າພິຈາລະນາໃນຖານະທີ່ຄວນພິຈາລະນາ ຯລຯ

ເມື່ອສະແດງອາບັດຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ ຊື່ວ່າພິຈາລະນາໃນຖານະທີ່ຄວນພິຈາລະນາ

ເມື່ອສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ ຊື່ວ່າພິຈາລະນາໃນຖານະທີ່ຄວນພິຈາລະນາ

ພິກຂຸຊື່ວ່າພິຈາລະນາໃນຖານະທີ່ຄວນພິຈາລະນາ ດ້ວຍອາການແນວນີ້

## ວ່າດ້ວຍການເພ່ງເລັງ

[໓໗໙] ຖາມ : ແນວໃດຊື່ວ່າ ເພ່ງເລັງໃນຖານະທີ່ຄວນເພ່ງເລັງ

ຕອບ : ພິກຂຸເມື່ອສະແດງອະທຳວ່າເປັນອະທຳ ຊື່ວ່າເພ່ງເລັງໃນຖານະທີ່ຄວນເພ່ງເລັງ

ເມື່ອສະແດງທຳວ່າເປັນທຳ ຊື່ວ່າເພ່ງເລັງໃນຖານະທີ່ຄວນເພ່ງເລັງ ຯລຯ

ເມື່ອສະແດງອາບັດຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ ຊື່ວ່າເພ່ງເລັງໃນຖານະທີ່ຄວນເພ່ງເລັງ

ເມື່ອສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ ຊື່ວ່າເພ່ງເລັງໃນຖານະທີ່ຄວນເພ່ງເລັງ

ພິກຂຸຊື່ວ່າເພ່ງເລັງໃນຖານະທີ່ຄວນເພ່ງເລັງ ດ້ວຍອາການແບບນີ້

## ວ່າດ້ວຍການເຫຼື້ອມໃສ

[໓໙໐] ຖາມ : ແນວໃດຊື່ວ່າ ເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ

ຕອບ : ພິກຂຸເມື່ອສະແດງອະທຳວ່າເປັນອະທຳ ຊື່ວ່າເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ

ເມື່ອສະແດງທຳວ່າເປັນທຳ ຊື່ວ່າເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ ຯລຯ

ເມື່ອສະແດງອາບັດຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ ຊື່ວ່າເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ

ເມື່ອສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ ຊື່ວ່າເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ

ພິກຂຸຊື່ວ່າເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ ດ້ວຍອາການແບບນີ້

## ໕. ປະນະປັກຂາທິອະວະຊານະນະ

## ວ່າດ້ວຍການດູໝິ່ນຝ່າຍອື່ນ ເປັນຕົ້ນ

[໓໙໑] ຖາມ : ແນວໃດຊື່ວ່າ ດູໝິ່ນຝ່າຍອື່ນດ້ວຍເຂົ້າໃຈວ່າ ເຮົາໄດ້ພວກແລ້ວ

ຕອບ : ພິກຂຸລາງອົງໃນພຣະທຳວິໄນນີ້ ໄດ້ພວກ ໄດ້ບໍລິວານແລ້ວ ມີພວກ ມີຍາດ ຈຶ່ງຄິດວ່າ ຜູ້ນີ້ບໍ່ໄດ້ພວກ ບໍ່ໄດ້ບໍລິວານ ບໍ່ມີພວກ ບໍ່ມີຍາດ ດັ່ງນີ້ ຈຶ່ງດູໝິ່ນພິກຂຸນັ້ນ

ຍ່ອມສະແດງອະທຳວ່າເປັນທຳ ສະແດງທຳວ່າເປັນອະທຳ ຯລຯ ສະແດງອາບັດຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ ສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ

ພິກຂຸຊື່ວ່າດູໝິ່ນຝ່າຍອື່ນດ້ວຍເຂົ້າໃຈວ່າ ເຮົາໄດ້ພວກແລ້ວ ດ້ວຍອາການແບບນີ້

## ວ່າດ້ວຍດູໝິ່ນພິກຂຸມີສຸຕະໜ້ອຍ

[໓໙໒] ຖາມ : ແນວໃດຊື່ວ່າ ດູໝິ່ນຜູ້ມີສຸຕະໜ້ອຍດ້ວຍເຂົ້າໃຈວ່າ ເຮົາມີສຸຕະຫຼາຍ

ຕອບ : ພິກຂຸລາງອົງໃນພຣະທຳວິໄນນີ້ ເປັນຜູ້ມີສຸຕະຫຼາຍ ຊົງຈຳສຸຕະ ສັ່ງສົມສຸຕະ ດູໝິ່ນພິກຂຸນັ້ນວ່າ ທ່ານຜູ້ນີ້ມີສຸຕະໜ້ອຍ ມີອາຄົມນ້ອຍ ຊົງຈຳໄວ້ໄດ້ໜ້ອຍ ຍ່ອມສະແດງອະທຳ

ວ່າເປັນທຳ ສະແດງທຳວ່າເປັນອະທຳ ຯລຯ ສະແດງອາບັດຊົ່ວຫຍາບວ່າເປັນອາບັດ ບໍ່ຊົ່ວຫຍາບ ສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ

ພິກຂຸຊື່ວ່າດູໝິ່ນຜູ້ມີສຸຕະໜ້ອຍດ້ວຍເຂົ້າໃຈວ່າ ເຮົາມີສຸຕະຫຼາຍ ດ້ວຍອາການແນວນີ້

## ວ່າດ້ວຍດູໝິ່ນພິກຂຸຜູ້ອ່ອນພັນສາກວ່າ

[໖໙໓] ຖາມ : ແນວໃດຊື່ວ່າ ດູໝິ່ນພິກຂຸຜູ້ອ່ອນກວ່າດ້ວຍເຂົ້າໃຈວ່າ ເຮົາເປັນຜູ້ແກ່ກວ່າ

ຕອບ : ພິກຂຸລາງອົງໃນພຣະທຳວິໄນນີ້ ເປັນເຖຣະຮູ້ຣາຕີ ບວດດົນ ດູໝິ່ນພິກຂຸນັ້ນວ່າ ທ່ານຜູ້ນີ້ເປັນຜູ້ອ່ອນກວ່າ ບໍ່ມີຊື່ສຽງ ມີສຸຕະໜ້ອຍ ບໍ່ຮູ້ສິ່ງທີ່ເຮັດໄປແລ້ວ ຄຳເວົ້າຂອງຜູ້ນີ້ຈັກເປັນຄຳເວົ້າທີ່ເຮັດບໍ່ໄດ້ ດັ່ງນີ້ ຍ່ອມສະແດງອະທຳວ່າເປັນທຳ ສະແດງທຳວ່າເປັນອະທຳ ຯລຯ ສະແດງອາບັດຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ ສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ

ພິກຂຸຊື່ວ່າດູໝິ່ນພິກຂຸຜູ້ອ່ອນກວ່າດ້ວຍເຂົ້າໃຈວ່າ ເຮົາເປັນຜູ້ແກ່ກວ່າ ດ້ວຍອາການແນວນີ້

## ວ່າດ້ວຍບໍ່ເພິ່ງເວົ້າເລື້ອງທີ່ຍັງມາບໍ່ເຖິງ

[໖໙໔] ຄຳວ່າ ບໍ່ເພິ່ງເວົ້າເລື້ອງທີ່ຍັງມາບໍ່ເຖິງ ນັ້ນ ຄື ບໍ່ນຳຄຳເວົ້າທີ່ບໍ່ເຂົ້າບັນຫາມາ

ຄຳວ່າ ບໍ່ເພິ່ງໃຫ້ເລື້ອງທີ່ມາເຖິງແລ້ວເສື່ອມໄປຈາກພຣະທຳວິໄນນັ້ນ ຄື ບໍ່ເພິ່ງເຮັດປະໂຫຍດທີ່ສົງປະຊຸມກັນແລ້ວໃຫ້ເສື່ອມໄປຈາກພຣະທຳ ຈາກພຣະວິໄນ

## ວ່າດ້ວຍທຳວິໄນສັດຖຸສາດ

[໖໙໕] ຄຳວ່າ ດ້ວຍທຳໃດ ຄື ດ້ວຍເລື້ອງຈິງ

ຄຳວ່າ ດ້ວຍວິໄນໃດ ຄື ໂຈດແລ້ວໃຫ້ຈຳເລີຍໃຫ້ການ

ຄຳວ່າ ດ້ວຍສັດຖຸສາດໃດ ຄື ດ້ວຍຍັດຕິສຳປະທາ ດ້ວຍອະນຸສາວະນະສຳປະທາ ອະທິກອນນັ້ນ ຍ່ອມລະງັບດ້ວຍທຳໃດ ດ້ວຍວິໄນໃດ ດ້ວຍສັດຖຸສາດໃດ ເພິ່ງໃຫ້ອະທິກອນນັ້ນລະງັບດ້ວຍວິທີນັ້ນ

## ໗. ອະນຸວິດຊະກັດສະອະນຸໂຍຄະ

## ວ່າດ້ວຍຂໍ້ຊັກຖາມຂອງພິກຂຸຜູ້ວິນິດໄສອະທິກອນ

[໓໙໗] ອັນພິກຂຸຜູ້ວິນິດໄສອະທິກອນເພິ່ງຖາມໂຈດວ່າ ອາວຸໂສ ຂໍ້ທີ່ທ່ານງົດປະວາຣະນາແກ່ພິກຂຸອົງນີ້ນັ້ນ ທ່ານງົດຍ້ອນເລື້ອງອັນໃດ? ທ່ານງົດດ້ວຍສີລະວິບັດ ທ່ານງົດດ້ວຍອາຈາຣະວິບັດ ຫຼືທ່ານງົດດ້ວຍທິດຖິວິບັດ

ຖ້າໂຈດນັ້ນຕອບແນວນີ້ວ່າ ຂ້າພະເຈົ້າງົດດ້ວຍສີລະວິບັດ ງົດດ້ວຍອາຈາຣະວິບັດ ຫຼືງົດດ້ວຍທິດຖິວິບັດ

ພິກຂຸຜູ້ວິນິດໄສອະທິກອນນັ້ນ ເພິ່ງຊັກຖາມໂຈດແນວນີ້ວ່າ ທ່ານຮູ້ສີລະວິບັດ ຮູ້ອາຈາຣະວິບັດ ຮູ້ທິດຖິວິບັດບໍ

ຖ້າໂຈດນັ້ນຕອບແນວນີ້ວ່າ ອາວຸໂສ ຂ້າພະເຈົ້າຮູ້ສີລະວິບັດ ຮູ້ອາຈາຣະວິບັດ ຮູ້ທິດຖິວິບັດ

ພິກຂຸຜູ້ວິນິດໄສອະທິກອນ ເພິ່ງຊັກຖາມໂຈດແນວນີ້ວ່າ ອາວຸໂສ ກໍສີລະວິບັດເປັນແນວໃດ? ອາຈາຣະວິບັດເປັນແນວໃດ? ທິດຖິວິບັດເປັນແນວໃດ?

ຖ້າໂຈດນັ້ນຕອບແນວນີ້ວ່າ ປາຣາຊິກ ໔ ສັງຄາທິເສດ ໑໓ ນີ້ຈັດເປັນສີລະວິບັດ ຖຸນລັດໄຈ ປາຈິດຕິ ປະຕິເທສະນີຍະ ທຸກກົດ ທຸບພາສິດ ນີ້ຈັດເປັນອາຈາຣະວິບັດ ມິດສາທິດຖິ ອັນຕະຄາຫິກະທິດຖິ ນີ້ຈັດເປັນທິດຖິວິບັດ

ພິກຂຸຜູ້ວິນິດໄສອະທິກອນ ເພິ່ງຊັກຖາມໂຈດແນວນີ້ວ່າ ອາວຸໂສ ຂໍ້ທີ່ທ່ານງົດປະວາຣະນາແກ່ພິກຂຸອົງນີ້ນັ້ນ ທ່ານງົດດ້ວຍເລື້ອງທີ່ໄດ້ເຫັນ ດ້ວຍເລື້ອງທີ່ໄດ້ຍິນ ຫຼືດ້ວຍເລື້ອງທີ່ນຶກສົງໄສ

ຖ້າໂຈດນັ້ນຕອບແນວນີ້ວ່າ ຂ້າພະເຈົ້າງົດດ້ວຍເລື້ອງທີ່ໄດ້ເຫັນ ດ້ວຍເລື້ອງທີ່ໄດ້ຍິນ ຫຼືດ້ວຍເລື້ອງທີ່ນຶກສົງໄສ

ພິກຂຸຜູ້ວິນິດໄສອະທິກອນ ເພິ່ງຊັກຖາມໂຈດແນວນີ້ວ່າ ອາວຸໂສ ຂໍ້ທີ່ທ່ານງົດປະວາຣະນາແກ່ພິກຂຸອົງນີ້ ທ່ານງົດດ້ວຍເລື້ອງທີ່ໄດ້ເຫັນນັ້ນ ທ່ານເຫັນອັນໃດ? ທ່ານເຫັນແນວໃດ ເຫັນເມື່ອໃດ ເຫັນຢູ່ໃສ ທ່ານເຫັນພິກຂຸອົງນີ້ຕ້ອງອາບັດປາຣາຊິກ ທ່ານເຫັນພິກຂຸອົງນີ້ຕ້ອງອາບັດສັງຄາທິເສດ ຖຸນລັດໄຈ ປາຈິດຕິ ປະຕິເທສະນີຍະ ທຸກກົດ ທຸບພາສິດ ຫຼື ອັນໜຶ່ງ ທ່ານຢູ່ທີ່ໃດ ແລະພິກຂຸອົງນີ້ຢູ່ທີ່ໃດ ທ່ານເຮັດຫຍັງຢູ່ ພິກຂຸອົງນີ້ເຮັດຫຍັງຢູ່

ຖ້າໂຈດຕອບແນວນີ້ວ່າ ອາວຸໂສ ຂ້າພະເຈົ້າບໍ່ໄດ້ງົດປະວາຣະນາແກ່ພິກຂຸອົງນີ້ດ້ວຍເລື້ອງທີ່ໄດ້ເຫັນ ແຕ່ຂ້າພະເຈົ້າງົດປະວາຣະນາດ້ວຍເລື້ອງທີ່ໄດ້ຍິນ

ຜູ້ວິນິດໄສອະທິກອນເພິ່ງຊັກຖາມໂຈດແນວນີ້ວ່າ ອາວຸໂສ ຂໍ້ທີ່ທ່ານງົດປະວາຣະນາແກ່ພິກຂຸອົງນີ້ດ້ວຍເລື້ອງທີ່ໄດ້ຍິນນັ້ນ ທ່ານໄດ້ຍິນອັນໃດ? ໄດ້ຍິນແນວໃດ ໄດ້ຍິນເມື່ອໃດ ໄດ້ຍິນຢູ່ໃສ ທ່ານໄດ້ຂ່າວວ່າ ພິກຂຸອົງນີ້ຕ້ອງອາບັດປາຣາຊິກ ຫຼືທ່ານໄດ້ຂ່າວວ່າ ພິກຂຸອົງນີ້ຕ້ອງອາບັດສັງຄາທິເສດ ຖຸນລັດໄຈ ປາຈິດຕີ ປະຕິເທສະນີຍະ ທຸກກົດ ທຸບພາສິດ ຫຼືທ່ານໄດ້ຍິນຈາກພິກຂຸ ຫຼືໄດ້ຍິນຈາກພິກຂຸນີ ສິກຂະມານາ ສາມະເນນ ສາມະເນຣີ ອຸປາສົກ ອຸປາສິກາ ພຣະຣາຊາ ຣາຊະມະຫາອຳໝາດ ເດຍຣະຖີ ສາວົກຂອງເດຍຣະຖີບໍ

ຖ້າໂຈດຕອບແນວນີ້ວ່າ ອາວຸໂສ ຂ້າພະເຈົ້າບໍ່ໄດ້ງົດປະວາຣະນາແກ່ພິກຂຸອົງນີ້ດ້ວຍເລື້ອງທີ່ໄດ້ຍິນ ແຕ່ຂ້າພະເຈົ້າງົດປະວາຣະນາດ້ວຍເລື້ອງທີ່ນຶກສົງໄສຕ່າງຫາກ

ຜູ້ວິນິດໄສອະທິກອນເພິ່ງຊັກຖາມແນວນີ້ວ່າ ອາວຸໂສ ຂໍ້ທີ່ທ່ານງົດປະວາຣະນາແກ່ພິກຂຸອົງນີ້ດ້ວຍເລື້ອງທີ່ນຶກສົງໄສນັ້ນ ທ່ານນຶກສົງໄສອັນໃດ? ນຶກສົງໄສແນວໃດ ນຶກສົງໄສເມື່ອໃດ ນຶກສົງໄສຢູ່ໃສ ທ່ານນຶກສົງໄສວ່າພິກຂຸອົງນີ້ຕ້ອງອາບັດປາຣາຊິກ ຫຼືທ່ານນຶກສົງໄສວ່າ ພິກຂຸອົງນີ້ຕ້ອງອາບັດສັງຄາທິເສດ ຖຸນລັດໄຈ ປາຈິດຕີ ປະຕິເທສະນີຍະ ທຸກກົດ ທຸບພາສິດ ຫຼືທ່ານໄດ້ຍິນຈາກພິກຂຸ ຫຼືໄດ້ຍິນຈາກພິກຂຸນີ ສິກຂະມານາ ສາມະເນນ ສາມະເນຣີ ອຸປາສົກ ອຸປາສິກາ ພຣະຣາຊາ ຣາຊະມະຫາອຳໝາດ ເດຍຣະຖີ ສາວົກຂອງເດຍຣະຖີແລ້ວນຶກສົງໄສບໍ

## ປຽບທຽບອະທິກອນ

[໓໘໗] ເລື້ອງທີ່ໄດ້ເຫັນສົມດ້ວຍເລື້ອງທີ່ໄດ້ເຫັນ
ເລື້ອງທີ່ໄດ້ເຫັນທຽບກັບເລື້ອງທີ່ໄດ້ເຫັນ
ແຕ່ບຸກຄົນນັ້ນບໍ່ຍອມຮັບ ຍ້ອນອາໄສເລື້ອງທີ່ໄດ້ເຫັນ
ບຸກຄົນນັ້ນຖືກສົງໄສວ່າບໍ່ບໍລິສຸດ ເພິ່ງປັບອາບັດຕາມປະຕິຍານ
ເພິ່ງເຮັດປະວາຣະນາກັບບຸກຄົນນັ້ນ

ເລື້ອງທີ່ໄດ້ຍິນສົມດ້ວຍເລື້ອງທີ່ໄດ້ຍິນ ເລື້ອງທີ່ໄດ້ຍິນທຽບກັບເລື້ອງທີ່ໄດ້ຍິນ
ແຕ່ບຸກຄົນນັ້ນບໍ່ຍອມຮັບ ຍ້ອນອາໄສການໄດ້ຍິນ
ບຸກຄົນນັ້ນຖືກສົງໄສວ່າບໍ່ບໍລິສຸດ ເພິ່ງປັບອາບັດຕາມປະຕິຍານ
ເພິ່ງເຮັດປະວາຣະນາກັບບຸກຄົນນັ້ນ

ເລື້ອງທີ່ໄດ້ຮູ້ສົມດ້ວຍເລື້ອງທີ່ໄດ້ຮູ້
ເລື້ອງທີ່ໄດ້ຮູ້ທຽບກັບເລື້ອງທີ່ໄດ້ຮູ້

ແຕ່ບຸກຄົນນັ້ນບໍ່ຍອມຮັບ ຍ້ອນອາໄສການໄດ້ຮູ້
ບຸກຄົນນັ້ນຖືກສົງໄສວ່າບໍ່ບໍລິສຸດ
ເພິ່ງປັບອາບັດຕາມປະຕິຍານ ເພິ່ງເຮັດປະວາຣະນາກັບບຸກຄົນນັ້ນ

## ກ. ປຸດສາວິພາກ
## ວ່າດ້ວຍການຈຳແນກຄຳຖາມ

[໓໙໗] ຄຳວ່າ ທ່ານເຫັນອັນໃດ? ນັ້ນ ຖາມເຖິງອັນໃດ?
ຄຳວ່າ ທ່ານເຫັນວ່າແນວໃດ ນັ້ນ ຖາມເຖິງອັນໃດ?
ຄຳວ່າ ທ່ານເຫັນເມື່ອໃດ ນັ້ນ ຖາມເຖິງອັນໃດ?
ຄຳວ່າ ທ່ານເຫັນຢູ່ໃສ ນັ້ນ ຖາມເຖິງອັນໃດ?

[໓໙໙] ຄຳວ່າ ທ່ານເຫັນອັນໃດ? ນັ້ນ ໄດ້ແກ່ ຖາມເຖິງວັດຖຸ ຖາມເຖິງວິບັດ ຖາມເຖິງອາບັດ ຖາມເຖິງອັດຊາຈານ

ຄຳວ່າ ຖາມເຖິງວັດຖຸ ນັ້ນ ໄດ້ແກ່ ຖາມເຖິງວັດຖຸແຫ່ງປາຣາຊິກ ໗ ຖາມເຖິງວັດຖຸແຫ່ງສັງຄາທິເສດ ໒໓ ຖາມເຖິງວັດຖຸແຫ່ງອະນິຍະຕະ ໒ ຖາມເຖິງວັດຖຸແຫ່ງນິດສັກຄີ ໔໒ ຖາມເຖິງວັດຖຸແຫ່ງປາຈິດຕີ ໑໗໗ ຖາມເຖິງວັດຖຸແຫ່ງປະຕິເທສະນີຍະ ໑໒ ຖາມເຖິງວັດຖຸແຫ່ງທຸກກົດ ຖາມເຖິງວັດຖຸແຫ່ງທຸບພາສິດ

ຄຳວ່າ ຖາມເຖິງວິບັດ ນັ້ນ ໄດ້ແກ່ ຖາມເຖິງສີລະວິບັດ ຖາມເຖິງອາຈາຣະວິບັດ ຖາມເຖິງທິດຖິວິບັດ ຖາມເຖິງອາຊີວະວິບັດ

ຄຳວ່າ ຖາມເຖິງອາບັດ ນັ້ນ ໄດ້ແກ່ ຖາມເຖິງອາບັດປາຣາຊິກ ຖາມເຖິງອາບັດສັງຄາທິເສດ ຖາມເຖິງອາບັດຖຸນລັດໄຈ ຖາມເຖິງອາບັດປາຈິດຕີ ຖາມເຖິງອາບັດປະຕິເທສະນີຍະ ຖາມເຖິງອາບັດທຸກກົດ ຖາມເຖິງອາບັດທຸພິບພາສິດ

ຄຳວ່າ ຖາມເຖິງອັດຊາຈານ ນັ້ນ ໄດ້ແກ່ ຖາມເຖິງກິດທີ່ເຮັດກັນສອງຕໍ່ສອງ

[໔໐໐] ຄຳວ່າ ທ່ານເຫັນວ່າແນວໃດ ນັ້ນ ໄດ້ແກ່ ຖາມເຖິງເພດ ຖາມເຖິງອິລິຍາບົດ ຖາມເຖິງອາການ ຖາມເຖິງປະການອັນແປກ

ຄຳວ່າ ຖາມເຖິງເພດ ນັ້ນ ໝາຍເຖິງ ສູງຫຼືເຕ້ຍ ດຳຫຼືຂາວ

ຄຳວ່າ ຖາມເຖິງອິລິຍາບົດ ນັ້ນ ໝາຍເຖິງ ຍ່າງຫຼືຢືນ ນັ່ງຫຼືນອນ

ຄຳວ່າ ຖາມອາການ ນັ້ນ ໝາຍເຖິງ ເພດຄະລຶຫັດ ເພດເດຍຣະຖີ ຫຼືເພດບັນພະຊິດ

ຄຳວ່າ ຖາມປະການອັນແປກ ນັ້ນ ໝາຍເຖິງ ຍ່າງຫຼືຢືນ ນັ່ງຫຼືນອນ

[໔໐໑] ຄຳວ່າ ທ່ານເຫັນເມື່ອໃດ ນັ້ນ ໄດ້ແກ່ ຖາມເຖິງການ ຖາມເຖິງສະໄໝ ຖາມເຖິງມື້ ຖາມເຖິງລະດູ

ຄຳວ່າ ຖາມເຖິງການ ນັ້ນ ໝາຍເຖິງ ເວລາເຊົ້າ ເວລາທ່ຽງ ຫຼືເວລາຄ່ຳ

ຄຳວ່າ ຖາມເຖິງສະໄໝ ນັ້ນ ໝາຍເຖິງ ສະໄໝເຊົ້າ ສະໄໝທ່ຽງ ຫຼືສະໄໝຄ່ຳ

ຄຳວ່າ ຖາມເຖິງມື້ ນັ້ນ ໝາຍເຖິງ ກ່ອນອາຫານຫຼືຫຼັງອາຫານ ກາງຄືນ ຫຼື ກາງເວັນ ຂ້າງແຮມຫຼືຂ້າງຂຶ້ນ

ຄຳວ່າ ຖາມເຖິງລະດູ ນັ້ນ ໝາຍເຖິງ ລະດູໜາວ ລະດູຮ້ອນ ຫຼືລະດູຝົນ

[໔໐໘] ຄຳວ່າ ທ່ານເຫັນຢູ່ໃສ ນັ້ນ ໄດ້ແກ່ ຖາມເຖິງສະຖານທີ່ ຖາມເຖິງພື້ນທີ່ ຖາມເຖິງໂອກາດ ຖາມເຖິງປະເທດ

ຄຳວ່າ ຖາມເຖິງສະຖານທີ່ ນັ້ນ ໝາຍເຖິງ ພື້ນທີ່ຫຼືແຜ່ນດິນ ທໍຣະນີຫຼືທາງເດີນ

ຄຳວ່າ ຖາມເຖິງພື້ນທີ່ ນັ້ນ ໝາຍເຖິງ ພື້ນທີ່ ແຜ່ນດິນ ພູຫີນ ຫຼືຜາສາດ

ຄຳວ່າ ຖາມເຖິງໂອກາດ ນັ້ນ ໝາຍເຖິງ ໂອກາດດ້ານຕາເວັນອອກຫຼືໂອກາດດ້ານຕາເວັນຕົກ ໂອກາດດ້ານເໜືອຫຼືໂອກາດດ້ານໃຕ້

ຄຳວ່າ ຖາມເຖິງປະເທດ ນັ້ນ ໝາຍເຖິງ ປະເທດດ້ານຕາເວັນອອກຫຼືປະເທດດ້ານຕາເວັນຕົກ ປະເທດດ້ານເໜືອຫຼືປະເທດດ້ານໃຕ້

**ມະຫາສົງຄາມ ຈົບ**

## ຫົວຂໍ້ປະຈຳເລື້ອງ

ວັດຖຸ ນິທານ ອາການ ຄຳຕົ້ນແລະຄຳຫຼັງ
ສິ່ງທີ່ເຮັດແລ້ວແລະສິ່ງທີ່ຍັງບໍ່ໄດ້ເຮັດ ກຳ ອະທິກອນ ສະມະຖະ
ລຳອຽງຍ້ອນຮັກ ລຳອຽງຍ້ອນຊັງ ລຳອຽງຍ້ອນຫຼົງ
ລຳອຽງຍ້ອນຢ້ານ ຊີ້ແຈ່ງໃນຖານະທີ່ຄວນຊີ້ແຈ່ງ
ພິຈາລະນາໃນຖານະທີ່ຄວນພິຈາລະນາ ເພ່ງເລັງໃນຖານະທີ່ຄວນເພ່ງເລັງ
ເຫຼື້ອມໃສໃນຖານະທີ່ຄວນເຫຼື້ອມໃສ

ໄດ້ພັກພວກແລ້ວດູໝິ່ນຝ່າຍອື່ນ ມີສຸຕະແລ້ວດູໝິ່ນຝ່າຍອື່ນ
ແກ່ກວ່າແລ້ວດູໝິ່ນຝ່າຍອື່ນ

ບໍ່ເວົ້າເລື້ອງທີ່ຍັງມາບໍ່ເຖິງ ບໍ່ເພິ່ງໃຫ້ເລື້ອງທີ່ມາເຖິງແລ້ວເສື່ອມ
ອະທິກອນລະງັບດ້ວຍທຳ ດ້ວຍວິໄນ ດ້ວຍສັດຖຸສາດ
ເລື້ອງມະຫາສົງຄາມ

# ກະຖິນະເພທະ

## ວ່າດ້ວຍປະເພດແຫ່ງກະຖິນ

## ໑. ກະຖິນະອັດຖະຕາທິ

## ວ່າດ້ວຍການກະຖິນ ເປັນຕົ້ນ

[໔໐໓] ໃຜບໍ່ໄດ້ການກະຖິນ ໃຜໄດ້ການກະຖິນ ແນວໃດກະຖິນບໍ່ເປັນອັນການ ແນວໃດກະຖິນເປັນອັນການ

### ບໍ່ໄດ້ການກະຖິນ

ຄຳວ່າ ໃຜບໍ່ໄດ້ການກະຖິນ ນັ້ນ ຄື ບຸກຄົນ ໒ ພວກ ໄດ້ແກ່ ພິກຂຸຜູ້ບໍ່ໄດ້ການ ພິກຂຸຜູ້ບໍ່ໄດ້ອະນຸໂມທະນາ ບໍ່ໄດ້ການກະຖິນ ບຸກຄົນ ໒ ພວກນີ້ ບໍ່ໄດ້ການກະຖິນ

### ໄດ້ການກະຖິນ

ຄຳວ່າ ໃຜໄດ້ການກະຖິນ ນັ້ນ ຄື ບຸກຄົນ ໒ ພວກ ໄດ້ແກ່ ພິກຂຸຜູ້ການ ພິກຂຸຜູ້ອະນຸໂມທະນາ ໄດ້ການກະຖິນ ບຸກຄົນ ໒ ພວກນີ້ ໄດ້ການກະຖິນ

### ເຫດກະຖິນບໍ່ເປັນອັນການ

ຄຳວ່າ ແນວໃດກະຖິນບໍ່ເປັນອັນການ ນັ້ນ ໄດ້ແກ່ ກະຖິນບໍ່ເປັນອັນການດ້ວຍອາການ ໒໔ ຢ່າງ ຄື

໑. ກະຖິນບໍ່ເປັນອັນການດ້ວຍອາການພຽງມີຮອຍຂີດ
໒. ກະຖິນບໍ່ເປັນອັນການດ້ວຍອາການພຽງຊັກຜ້າ
໓. ກະຖິນບໍ່ເປັນອັນການດ້ວຍອາການພຽງກະຜ້າ
໔. ກະຖິນບໍ່ເປັນອັນການດ້ວຍອາການພຽງຕັດຜ້າ
໕. ກະຖິນບໍ່ເປັນອັນການດ້ວຍອາການພຽງເນົາຜ້າ
໖. ກະຖິນບໍ່ເປັນອັນການດ້ວຍອາການພຽງຫຍິບຜ້າ
໗. ກະຖິນບໍ່ເປັນອັນການດ້ວຍອາການພຽງເຮັດລູກດຸມ
໘. ກະຖິນບໍ່ເປັນອັນການດ້ວຍອາການພຽງເຮັດຮັງດຸມ

໙. ກະຖິນບໍ່ເປັນອັນການດ້ວຍອາການພຽງຕິດຜ້າອະນຸວາດ
໑໐. ກະຖິນບໍ່ເປັນອັນການດ້ວຍອາການພຽງຕິດຜ້າອະນຸວາດດ້ານໜ້າ
໑໑. ກະຖິນບໍ່ເປັນອັນການດ້ວຍອາການພຽງດາມຜ້າ
໑໒. ກະຖິນບໍ່ເປັນອັນການດ້ວຍອາການພຽງຍ້ອມຜ້າເປັນສີໝົ່ນ
໑໓. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ເຮັດນິມິດໄດ້ມາ
໑໔. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ເວົ້າລຽບຄຽງໄດ້ມາ
໑໕. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ຢືມເຂົາມາ
໑໖. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ເກັບໄວ້ແຮມຄືນ
໑໗. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ເປັນນິດສັກຄີ
໑໘. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ບໍ່ໄດ້ເຮັດກັບປະພິນທຸ
໑໙. ກະຖິນບໍ່ເປັນອັນການດ້ວຍຜ້າເວັ້ນຈາກສັງຄາຕິ
໒໐. ກະຖິນບໍ່ເປັນອັນການດ້ວຍຜ້າເວັ້ນຈາກອຸດຕະຣາສົງ
໒໑. ກະຖິນບໍ່ເປັນອັນການດ້ວຍຜ້າເວັ້ນຈາກອັນຕະຣະວາສົກ
໒໒. ກະຖິນບໍ່ເປັນອັນການເວັ້ນຈາກຈີວອນມີຂັນ ໕ ຫຼືເກີນກວ່າ ໕ ເຊິ່ງຕັດເຮັດໃຫ້ມີມົນທົນສຳເລັດໃນມື້ນັ້ນ
໒໓. ກະຖິນບໍ່ເປັນອັນການຍ້ອນເວັ້ນຈາກບຸກຄົນການ
໒໔. ກະຖິນບໍ່ເປັນອັນການໂດຍຖືກຕ້ອງ ຖ້າພິກຂຸຜູ້ຢູ່ນອກສີມາອະນຸໂມທະນາກະຖິນນັ້ນ

ກະຖິນບໍ່ເປັນອັນການ ແມ່ນດ້ວຍອາການແນວນີ້

## ອະທິບາຍເຫດທີ່ບໍ່ເປັນອັນການບາງຂໍ້

ທີ່ຊື່ວ່າ ເຮັດນິມິດ ຄື ພິກຂຸເຮັດນິມິດວ່າ ເຮົາຈັກການກະຖິນດ້ວຍຜ້າຜືນນີ້

ທີ່ຊື່ວ່າ ເວົ້າລຽບຄຽງ ຄື ພິກຂຸເວົ້າລຽບຄຽງດ້ວຍຄິດວ່າ ເຮົາຈັກໃຫ້ຜ້າກະຖິນເກີດດ້ວຍການເວົ້າລຽບຄຽງນີ້

ຜ້າທີ່ບໍ່ໄດ້ຍົກໃຫ້ ຮຽກວ່າ ຜ້າຢືມເຂົາມາ

ທີ່ຊື່ວ່າ ຜ້າເກັບໄວ້ແຮມຄືນ ມີ ໒ ຢ່າງ ຄື

໑. ຜ້າເຮັດແຮມຄືນ

໒. ຜ້າເກັບໄວ້ແຮມຄືນ

ທີ່ຊື່ວ່າ ຜ້າເປັນນິດສັກຄີ ຄື ເມື່ອພິກຂຸກຳລັງເຮັດຢູ່ ອາຣຸນຂຶ້ນມາ

ກະຖິນບໍ່ເປັນອັນການດ້ວຍອາການ ໒໔ ຢ່າງນີ້

## ເຫຕຸກະຖິນເປັນອັນການ

ຄຳວ່າ ແນວໃດກະຖິນເປັນອັນການ ນັ້ນ ໄດ້ແກ່ ກະຖິນເປັນອັນການດ້ວຍອາການ ໑໗ ຢ່າງ ຄື

໑. ກະຖິນເປັນອັນການດ້ວຍຜ້າໃໝ່
໒. ກະຖິນເປັນອັນການດ້ວຍຜ້າຫຼຸມໃໝ່
໓. ກະຖິນເປັນອັນການດ້ວຍຜ້າເກົ່າ
໔. ກະຖິນເປັນອັນການດ້ວຍຜ້າບັງສຸກຸນ
໕. ກະຖິນເປັນອັນການດ້ວຍຜ້າຕົກຕາມຮ້ານ
໖. ກະຖິນເປັນອັນການດ້ວຍຜ້າທີ່ບໍ່ໄດ້ເຮັດນິມິດໄດ້ມາ
໗. ກະຖິນເປັນອັນການດ້ວຍຜ້າທີ່ບໍ່ໄດ້ເວົ້າລຽບຄຽງໄດ້ມາ
໘. ກະຖິນເປັນອັນການດ້ວຍຜ້າທີ່ບໍ່ໄດ້ຢືມເຂົາມາ
໙. ກະຖິນເປັນອັນການດ້ວຍຜ້າທີ່ບໍ່ໄດ້ເກັບໄວ້ແຮມຄືນ
໑໐. ກະຖິນເປັນອັນການດ້ວຍຜ້າທີ່ບໍ່ເປັນນິດສັກຄີ
໑໑. ກະຖິນເປັນອັນການດ້ວຍຜ້າທີ່ເຮັດກັບປະພິນທຸ
໑໒. ກະຖິນເປັນອັນການດ້ວຍຜ້າສັງຄາຕິ
໑໓. ກະຖິນເປັນອັນການດ້ວຍຜ້າອຸດຕະຣາສົງ
໑໔. ກະຖິນເປັນອັນການດ້ວຍຜ້າອັນຕະຣະວາສົກ
໑໕. ກະຖິນເປັນອັນການດ້ວຍຈີວອນມີຂັນ ໕ ຫຼືເກີນກວ່າ ໕ ທີ່ຕັດດີແລ້ວເຮັດໃຫ້ມີມົນທົນສຳເລັດໃນມື້ນັ້ນ
໑໖. ກະຖິນເປັນອັນການ ຍ້ອນມີບຸກຄົນການ
໑໗. ກະຖິນເປັນອັນການໂດຍຖືກຕ້ອງ ຖ້າພິກຂຸຢູ່ໃນສີມາອະນຸໂມທະນາກະຖິນນັ້ນ

ກະຖິນເປັນອັນການ ແມ່ນດ້ວຍອາການແນວນີ້ ກະຖິນເປັນອັນການ ດ້ວຍອາການ ໑໗ ຢ່າງນີ້

## ທຳທີ່ເກີດພ້ອມກັນ

ຖາມ : ທຳທີ່ໃດ? ຍ່ອມເກີດພ້ອມກັບການ ການກະຖິນ

ຕອບ : ທຳ ໑໕ ຢ່າງ ຍ່ອມເກີດພ້ອມກັບການ ການກະຖິນ ຄື ມາຕິກາ ໘ ປະລິໂພດ ໒ ອານິສົງ ໕

ທຳ ໑໕ ຢ່າງນີ້ ຍ່ອມເກີດພ້ອມກັບການ ການກະຖິນ

## ໔. ກະຖິນອະນັນຕະຣະປັດຈະຍາທິ

## ວ່າດ້ວຍອະນັນຕະຣະປັດໄຈແຫ່ງກະຖິນ ເປັນຕົ້ນ

[໕໐໔] ປະໂຍຄະມີທຳເຫຼົ່າໃດ ເປັນປັດໄຈໂດຍອະນັນຕະຣະປັດໄຈ ໂດຍສະມະນັນຕະຣະ ປັດໄຈ ໂດຍນິດສະຍະປັດໄຈ ໂດຍອຸປະນິດສະຍະປັດໄຈ ໂດຍປຸເຣຊາຕະປັດໄຈ ໂດຍປັດສາຊາຕະ ປັດໄຈ ໂດຍສະຫະຊາຕະປັດໄຈ

ບຸບພະກອນ ຯລຯ ການຖອນຜ້າ ຯລຯ ການອະທິຖານຜ້າ ຯລຯ ການ ການ ຯລຯ ມາຕິກາແລະປະລິໂພດ ຯລຯ

ວັດຖຸມີທຳເຫຼົ່າໃດ ເປັນປັດໄຈໂດຍອະນັນຕະຣະປັດໄຈ ໂດຍສະມະນັນຕະຣະປັດໄຈ ໂດຍນິດສະຍະປັດໄຈ ໂດຍອຸປະນິດສະຍະປັດໄຈ ໂດຍປຸເຣຊາຕະປັດໄຈ ໂດຍປັດສາຊາຕະປັດໄຈ ໂດຍສະຫະຊາຕະປັດໄຈ

## ບຸບພະກອນເປັນປັດໄຈ

ປະໂຍຄະມີບຸບພະກອນເປັນປັດໄຈໂດຍອະນັນຕະຣະປັດໄຈ ໂດຍສະມະນັນຕະຣະປັດໄຈ ໂດຍນິດສະຍະປັດໄຈ ໂດຍອຸປະນິດສະຍະປັດໄຈ ບຸບພະກອນມີປະໂຍຄະເປັນປັດໄຈ ໂດຍປຸເຣຊາຕະປັດໄຈ

ປະໂຍຄະມີບຸບພະກອນເປັນປັດໄຈໂດຍປັດສາຊາຕະປັດໄຈ ທຳ ໑໕ ຢ່າງເປັນປັດໄຈ ໂດຍສະຫະຊາຕະປັດໄຈ

## ການຖອນຜ້າເປັນປັດໄຈ

ບຸບພະກອນມີການຖອນຜ້າເປັນປັດໄຈໂດຍອະນັນຕະຣະປັດໄຈ ໂດຍສະມະນັນຕະຣະປັດໄຈ ໂດຍນິດສະຍະປັດໄຈ ໂດຍອຸປະນິດສະຍະປັດໄຈ ການຖອນຜ້າມີບຸບພະກອນເປັນປັດໄຈ ໂດຍປຸເຣຊາຕະປັດໄຈ ບຸບພະກອນມີການຖອນຜ້າເປັນປັດໄຈໂດຍປັດສາຊາຕະປັດໄຈ ທຳ ໑໕ ຢ່າງເປັນປັດໄຈ ໂດຍສະຫະຊາຕະປັດໄຈ

## ການອະທິຖານຜ້າເປັນປັດໄຈ

ການຖອນຜ້າມີການອະທິຖານຜ້າເປັນປັດໄຈໂດຍອະນັນຕະຣະປັດໄຈ ໂດຍສະມະນັນຕະຣະປັດໄຈ ໂດຍນິດສະຍະປັດໄຈ ໂດຍອຸປະນິດສະຍະປັດໄຈ ການອະທິຖານຜ້າມີການຖອນ

ຜ້າເປັນປັດໄຈ ໂດຍປຸເຣຊາຕະປັດໄຈ ການຖອນຜ້າມີການອະທິຖານຜ້າເປັນປັດໄຈໂດຍປັດສາຊາຕະປັດໄຈ ທຳ ໑໕ ຢ່າງເປັນປັດໄຈ ໂດຍສະຫະຊາຕະປັດໄຈ

## ກາລ ການຜ້າເປັນປັດໄຈ

ການອະທິຖານຜ້າມີກາລ ການເປັນປັດໄຈໂດຍອະນັນຕະຣະປັດໄຈ ໂດຍສະມະນັນຕະຣະປັດໄຈ ໂດຍນິດສະຍະປັດໄຈ ໂດຍອຸປະນິດສະຍະປັດໄຈ ກາລ ການມີການອະທິຖານຜ້າເປັນປັດໄຈ ໂດຍ ປຸເຣຊາຕະປັດໄຈ ການອະທິຖານຜ້າມີກາລ ການເປັນປັດໄຈໂດຍປັດສາຊາຕະປັດໄຈ ທຳ ໑໕ ຢ່າງເປັນປັດໄຈ ໂດຍສະຫະຊາຕະປັດໄຈ

## ມາຕິກາແລະປະລິໂພດເປັນປັດໄຈ

ກາລ ການມີມາຕິກາແລະປະລິໂພດເປັນປັດໄຈໂດຍອະນັນຕະຣະປັດໄຈ ໂດຍສະມະນັນຕະຣະປັດໄຈ ໂດຍນິດສະຍະປັດໄຈ ໂດຍອຸປະນິດສະຍະປັດໄຈ ມາຕິກາແລະປະລິໂພດ ມີກາລ ການເປັນປັດໄຈ ໂດຍ ປຸເຣຊາຕະປັດໄຈ ກາລ ການມີມາຕິກາແລະປະລິໂພດເປັນປັດໄຈໂດຍປັດສາຊາຕະປັດໄຈ ທຳ ໑໕ ຢ່າງເປັນປັດໄຈ ໂດຍສະຫະຊາຕະປັດໄຈ

ວັດຖຸມີຄວາມຫວັງແລະສິ້ນຫວັງເປັນປັດໄຈໂດຍອະນັນຕະຣະປັດໄຈ ໂດຍສະມະນັນຕະຣະປັດໄຈ ໂດຍນິດສະຍະປັດໄຈ ໂດຍອຸປະນິດສະຍະປັດໄຈ ຄວາມຫວັງແລະສິ້ນຫວັງມີວັດຖຸເປັນປັດໄຈ ໂດຍປຸເຣຊາຕະປັດໄຈ ວັດຖຸມີຄວາມຫວັງແລະສິ້ນຫວັງເປັນປັດໄຈໂດຍປັດສາຊາຕະປັດໄຈ ທຳ ໑໕ ຢ່າງເປັນປັດໄຈ ໂດຍສະຫະຊາຕະປັດໄຈ

## ໓. ປຸບພະກະຣະນະນິທານາທິວິພາຄະ

## ວ່າດ້ວຍການຈຳແນກນິທານແຫ່ງບຸບພະກອນ ເປັນຕົ້ນ

[໔໐໕] ຖາມ : ບຸບພະກອນມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ການຖອນຜ້າມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ການອະທິຖານຜ້າມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ການ ການມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ມາຕິກາແລະປະລິໂພດມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ຄວາມຫວັງແລະຄວາມສິ້ນຫວັງມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ຕອບ : ບຸບພະກອນມີປະໂຍຄະເປັນນິທານ ມີປະໂຍຄະເປັນສະມຸໄທ ມີປະໂຍຄະເປັນຊາດ ມີປະໂຍຄະເປັນແດນເກີດກ່ອນ ມີປະໂຍຄະເປັນອົງ ມີປະໂຍຄະເປັນສະມຸດຖານ

ການຖອນຜ້າມີບຸບພະກອນເປັນນິທານ ມີບຸບພະກອນເປັນສະມຸໄທ ມີບຸບພະກອນເປັນຊາດ ມີບຸບພະກອນເປັນແດນເກີດກ່ອນ ມີບຸບພະກອນເປັນອົງ ມີບຸບພະກອນເປັນສະມຸດຖານ

ການອະທິຖານຜ້າມີການຖອນຜ້າເປັນນິທານ ມີການຖອນຜ້າເປັນສະມຸໄທ ມີການຖອນຜ້າເປັນຊາດ ມີການຖອນຜ້າເປັນແດນເກີດກ່ອນ ມີການຖອນຜ້າເປັນອົງ ມີການຖອນຜ້າເປັນສະມຸດຖານ

ການ ການມີການອະທິຖານຜ້າເປັນນິທານ ມີການອະທິຖານຜ້າເປັນສະມຸໄທ ມີການອະທິຖານຜ້າເປັນຊາດ ມີການອະທິຖານຜ້າເປັນແດນເກີດກ່ອນ ມີການອະທິຖານຜ້າເປັນອົງ ມີການອະທິຖານຜ້າເປັນສະມຸດຖານ

ມາຕິກາແລະປະລິໂພດມີການ ການເປັນນິທານ ມີການ ການເປັນສະມຸໄທ ມີການ ການເປັນຊາດ ມີການ ການເປັນແດນເກີດກ່ອນ ມີການ ການເປັນອົງ ມີການ ການເປັນສະມຸດຖານ

ຄວາມຫວັງແລະຄວາມສິ້ນຫວັງມີວັດຖຸເປັນນິທານ ມີວັດຖຸເປັນສະມຸໄທ ມີວັດຖຸເປັນຊາດ ມີວັດຖຸເປັນແດນເກີດກ່ອນ ມີວັດຖຸເປັນອົງ ມີວັດຖຸເປັນສະມຸດຖານ

[໕໐໖] ຖາມ : ປະໂຍຄະມີອັນໃດເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ ບຸບພະກອນ ฯລฯ ການຖອນຜ້າ ฯລฯ ການອະທິຖານຜ້າ ฯລฯ ການ ການ ฯລฯ ມາຕິກາແລະປະລິໂພດ ฯລฯ ວັດຖຸ ฯລฯຄວາມຫວັງແລະຄວາມສິ້ນຫວັງມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອົງ ມີອັນໃດ?ເປັນສະມຸດຖານ

ຕອບ : ປະໂຍຄະມີເຫດເປັນນິທານ ມີເຫດເປັນສະມຸໄທ ມີເຫດເປັນຊາດ ມີເຫດເປັນແດນເກີດກ່ອນ ມີເຫດເປັນອົງ ມີເຫດເປັນສະມຸດຖານບຸບພະກອນ ฯລฯ ການຖອນຜ້າ ฯລฯ ການອະທິຖານຜ້າ ฯລฯ ການ ການ ฯລฯ ມາຕິກາ

ແລະປະລິໂພດ ໆລໆ ວັດຖຸ ໆລໆຄວາມຫວັງແລະຄວາມສິ້ນຫວັງມີເຫດເປັນນິທານ ມີເຫດເປັນສະມຸໄທ ມີເຫດເປັນຊາດ ມີເຫດເປັນແດນເກີດກ່ອນ ມີເຫດເປັນອິງ ມີເຫດເປັນສະມຸດຖານ

[໔໐໗] ຖາມ : ປະໂຍຄະມີອັນໃດເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອິງ ມີອັນໃດ?ເປັນສະມຸດຖານ ບຸບພະກອນ ໆລໆ ການຖອນຜ້າ ໆລໆ ການອະທິຖານຜ້າ ໆລໆ ການການ ໆລໆ ມາຕິກາແລະປະລິໂພດ ໆລໆ ວັດຖຸ ໆລໆ ຄວາມຫວັງແລະຄວາມສິ້ນຫວັງມີອັນໃດ?ເປັນນິທານ ມີອັນໃດ?ເປັນສະມຸໄທ ມີອັນໃດ?ເປັນຊາດ ມີອັນໃດ?ເປັນແດນເກີດກ່ອນ ມີອັນໃດ?ເປັນອິງ ມີອັນໃດ?ເປັນສະມຸດຖານ

ຕອບ : ປະໂຍຄະມີປັດໄຈເປັນນິທານ ມີປັດໄຈເປັນສະມຸໄທ ມີປັດໄຈເປັນຊາດ ມີປັດໄຈເປັນແດນເກີດກ່ອນ ມີປັດໄຈເປັນອິງ ມີປັດໄຈເປັນສະມຸດຖານບຸບພະກອນ ໆລໆ ການຖອນຜ້າ ໆລໆ ການອະທິຖານຜ້າ ໆລໆ ການ ການ ໆລໆ ມາຕິກາແລະປະລິໂພດ ໆລໆ ວັດຖຸ ໆລໆຄວາມຫວັງແລະຄວາມສິ້ນຫວັງມີປັດໄຈເປັນນິທານ ມີປັດໄຈເປັນສະມຸໄທ ມີປັດໄຈເປັນຊາດ ມີປັດໄຈເປັນແດນເກີດກ່ອນ ມີປັດໄຈເປັນອິງ ມີປັດໄຈເປັນສະມຸດຖານ

## ສິງເຄາະທຳ

[໔໐໘] ຖາມ : ບຸບພະກອນສິງເຄາະດ້ວຍທຳທີ່ໃດ?

ຕອບ : ບຸບພະກອນສິງເຄາະດ້ວຍທຳ ໗ ຢ່າງ ຄື

໑. ຊັກຜ້າ
໒. ກະຜ້າ
໓. ຕັດຜ້າ
໔. ມັດຜ້າ
໕. ຫຍິບຜ້າ
໖. ຍ້ອມຜ້າ
໗. ເຮັດກັປປະພິນທຸ

ບຸບພະກອນສິງເຄາະດ້ວຍທຳ ໗ ຢ່າງນີ້

ຖາມ : ການຖອນຜ້າຈັດເຂົ້າທຳທີ່ໃດ?

ຕອບ : ການຖອນຜ້າຈັດເຂົ້າທຳ ໓ ຢ່າງ ຄື

໑. ຜ້າສັງຄາຕິ
໒. ຜ້າອຸດຕະຣາສົງ
໓. ຜ້າອັນຕະຣະວາສົກ

ຖາມ : ການອະທິຖານຜ້າສິງເຄາະດ້ວຍທຳທີ່ໃດ?

ຕອບ : ການອະທິຖານຜ້າສິງເຄາະດ້ວຍທຳ ໓ ຢ່າງ ຄື

໑. ຜ້າສັງຄາຕິ ໒. ຜ້າອຸດຕະຣາສົງ

໓. ຜ້າອັນຕະຣະວາສົກ

ຖາມ : ການ ການສົງເຄາະດ້ວຍທຳທີ່ໃດ?

ຕອບ : ການ ການສົງເຄາະດ້ວຍທຳແນວດຽວ ຄື ເປ່ງວາຈາ

## ມູນເຫດແຫ່ງກະຖິນ ເປັນຕົ້ນ

ຖາມ : ກະຖິນມີມູນເຫດທີ່ໃດ? ມີວັດຖຸທີ່ໃດ? ມີພູມທີ່ໃດ?

ຕອບ : ກະຖິນມີມູນເຫດແນວດຽວ ຄື ສົງ ມີວັດຖຸ ໓ ຄື

໑. ຜ້າສັງຄາຕິ ໒. ຜ້າອຸດຕະຣາສົງ

໓. ຜ້າອັນຕະຣະວາສົກ

## ມີພູມ ໖ ຄື

໑. ຜ້າເຮັດດ້ວຍເປືອກໄມ້ ໒. ຜ້າເຮັດດ້ວຍຝ້າຍ

໓. ຜ້າເຮັດດ້ວຍບໍ່ ໔. ຜ້າເຮັດດ້ວຍຂົນສັດ

໕. ຜ້າເຮັດດ້ວຍປ່ານ ໖. ຜ້າເຮັດດ້ວຍສຳພາຣະໃສ່ກັນ

## ເບື້ອງຕົ້ນແຫ່ງກະຖິນ

ຖາມ : ກະຖິນມີອັນໃດ?ເປັນເບື້ອງຕົ້ນ ມີອັນໃດ?ເປັນທ່າມກາງ ມີອັນໃດ?ເປັນບ່ອນສຸດ

ຕອບ : ກະຖິນມີບຸບພະກອນເປັນເບື້ອງຕົ້ນ ມີການກະທຳເປັນທ່າມກາງ ມີການ ການເປັນບ່ອນສຸດ

## ອົງຂອງພິກຂຸຜູ້ການກະຖິນ

[໔໐໗] ຖາມ : ພິກຂຸປະກອບດ້ວຍອົງທີ່ໃດ?ບໍ່ຄວນການກະຖິນ ພິກຂຸປະກອບດ້ວຍອົງທີ່ໃດ?ຄວນການກະຖິນ

ຕອບ : ພິກຂຸປະກອບດ້ວຍອົງ ໘ ບໍ່ຄວນການກະຖິນ ພິກຂຸປະກອບດ້ວຍອົງ ໘ ຄວນການກະຖິນ

ຖາມ : ພິກຂຸປະກອບດ້ວຍອົງ ໘ ເປັນແນວໃດ? ບໍ່ຄວນການກະຖິນ

ຕອບ :

໑. ພິກຂຸບໍ່ຮູ້ບຸບພະກອນ ໒. ບໍ່ຮູ້ການຖອນຜ້າ

໓. ບໍ່ຮູ້ການອະທິຖານ
໔. ບໍ່ຮູ້ການ ການ
໕. ບໍ່ຮູ້ມາຕິກາ
໖. ບໍ່ຮູ້ປະລິໂພດ
໗. ບໍ່ຮູ້ການເດາະກະຖິນ
໘. ບໍ່ຮູ້ອານິສົງ

ພິກຂຸປະກອບດ້ວຍອົງ ໘ ນີ້ ບໍ່ຄວນການກະຖິນ

ຖາມ : ພິກຂຸປະກອບດ້ວຍອົງ ໘ ເປັນແນວໃດ? ຄວນການກະຖິນ

ຕອບ :

໑. ພິກຂຸຮູ້ບຸບພະກອນ
໒. ຮູ້ການຖອນຜ້າ
໓. ຮູ້ການອະທິຖານ
໔. ຮູ້ການ ການ
໕. ຮູ້ມາຕິກາ
໖. ຮູ້ປະລິໂພດ
໗. ຮູ້ການເດາະກະຖິນ
໘. ຮູ້ອານິສົງ

ພິກຂຸປະກອບດ້ວຍອົງ ໘ ນີ້ ຄວນການກະຖິນ

## ການ ການກະຖິນ

[໔໑໐] ຖາມ : ພິກຂຸພວກໃດການກະຖິນບໍ່ຂຶ້ນ ພິກຂຸພວກໃດການກະຖິນຂຶ້ນ

ຕອບ : ພິກຂຸ ໓ ພວກການກະຖິນບໍ່ຂຶ້ນ ພິກຂຸ ໓ ພວກການກະຖິນຂຶ້ນ

ຖາມ : ພິກຂຸ ໓ ພວກໃດການກະຖິນບໍ່ຂຶ້ນ

ຕອບ :

໑. ພິກຂຸຜູ້ຢູ່ນອກສີມາອະນຸໂມທະນາ
໒. ເມື່ອອະນຸໂມທະນາກັບບໍ່ເປ່ງວາຈາ
໓. ເມື່ອເປ່ງວາຈາກັບບໍ່ຍອມໃຫ້ຜູ້ອື່ນຮູ້

ພິກຂຸ ໓ ພວກນີ້ການກະຖິນບໍ່ຂຶ້ນ

ຖາມ : ພິກຂຸ ໓ ພວກໃດການກະຖິນຂຶ້ນ

ຕອບ :

໑. ພິກຂຸຜູ້ຢູ່ໃນສີມາອະນຸໂມທະນາ
໒. ເມື່ອອະນຸໂມທະນາກໍເປ່ງວາຈາ
໓. ເມື່ອເປ່ງວາຈາກໍໃຫ້ຜູ້ອື່ນຮູ້

ພິກຂຸ ໓ ພວກນີ້ການກະຖິນຂຶ້ນ

## ວັດຖຸວິບັດ ເປັນຕົ້ນ

[໔໑໑] ຖາມ : ການ ການກະຖິນທີ່ໃດ?ບໍ່ຂຶ້ນ ການ ການກະຖິນທີ່ໃດ?ຂຶ້ນ

ຕອບ : ການ ການກະຖິນ ໓ ຢ່າງ ບໍ່ຂຶ້ນ ການ ການກະຖິນ ໓ ຢ່າງ ຂຶ້ນ

ຖາມ : ການ ການກະຖິນ ໓ ແນວໃດ? ບໍ່ຂຶ້ນ

ຕອບ :

໑. ຜ້າວິບັດໂດຍວັດຖຸ

໒. ວິບັດໂດຍການ

໓. ວິບັດໂດຍການກະທຳ

ການ ການກະຖິນ ໓ ຢ່າງນີ້ ບໍ່ຂຶ້ນ

ຖາມ : ການ ການກະຖິນ ໓ ແນວໃດ? ຂຶ້ນ

ຕອບ :

໑. ຜ້າເຖິງພ້ອມດ້ວຍວັດຖຸ

໒. ຜ້າເຖິງພ້ອມດ້ວຍການ

໓. ຜ້າເຖິງພ້ອມດ້ວຍການກະທຳ

ການ ການກະຖິນ ໓ ຢ່າງນີ້ ຂຶ້ນ

## ໔. ກະຖິນາທິຊານິຕັບພະວິພາຄະ

## ວ່າດ້ວຍການຈຳແນກຂໍ້ຄວນຮູ້ມີກະຖິນ ເປັນຕົ້ນ

[໕໑໘] ເພື່ອຮູ້ກະຖິນ ເພື່ອຮູ້ການ ການກະຖິນ ເພື່ອຮູ້ເດືອນທີ່ການກະຖິນ ເພື່ອຮູ້ວິບັດແຫ່ງການ ການກະຖິນ ເພື່ອຮູ້ສົມບັດແຫ່ງການ ການກະຖິນ ເພື່ອຮູ້ການເຮັດນິມິດ ເພື່ອຮູ້ການເວົ້າລຽບຄຽງ

ເພື່ອຮູ້ຜ້າທີ່ຍືມເຂົາມາ ເພື່ອຮູ້ຜ້າທີ່ເກັບໄວ້ແຮມຄືນ ເພື່ອຮູ້ຜ້າທີ່ເປັນນິດສັກຄີ

## ຄວນຮູ້ກະຖິນ ເປັນຕົ້ນ

ຄຳວ່າ ເພື່ອຮູ້ກະຖິນ ນັ້ນ ຄື ການຮິບໂຮມ ການປະຊຸມ ຊື່ ການຕັ້ງຊື່ ການຮຽກຊື່ ພາສາ ພະຍັນຊະນະ ການກ່າວທຳເຫຼົ່ານັ້ນແລ ລວມຮຽກວ່າ ກະຖິນ

ຄຳວ່າ ເພື່ອຮູ້ເດືອນທີ່ການກະຖິນ ນັ້ນ ຄື ຮູ້ຈັກເດືອນສຸດທ້າຍແຫ່ງລະດູຝົນ

ຄຳວ່າ ເພື່ອຮູ້ວິບັດແຫ່ງການ ການກະຖິນ ໄດ້ແກ່ ເພື່ອຮູ້ຈັກວິບັດແຫ່ງການ ການກະຖິນດ້ວຍ ອາການ ໒໔ ຢ່າງ

ຄຳວ່າ ເພື່ອຮູ້ສົມບັດແຫ່ງການ ການກະຖິນ ໄດ້ແກ່ ເພື່ອຮູ້ຈັກສົມບັດແຫ່ງການ ການກະຖິນດ້ວຍອາການ ໑໗ ຢ່າງ

ຄຳວ່າ ເພິ່ງຮູ້ການເຮັດນິມິດ ຄື ເຮັດນິມິດວ່າ ເຮົາຈັກການກະຖິນດ້ວຍຜ້າຜືນນີ້

ຄຳວ່າ ເພິ່ງຮູ້ການເວົ້າລຽບຄຽງ ຄື ທຳການເວົ້າລຽບຄຽງດ້ວຍຄິດວ່າ ເຮົາຈັກໃຫ້ຜ້າກະຖິນເກີດດ້ວຍການເວົ້າລຽບຄຽງນີ້

ຄຳວ່າ ເພິ່ງຮູ້ຜ້າທີ່ຢືມເຂົາມາ ຄື ຮູ້ຜ້າທີ່ບໍ່ໄດ້ຍົກໃຫ້

ຄຳວ່າ ເພິ່ງຮູ້ຜ້າທີ່ເກັບໄວ້ແຮມຄືນ ຄື ເພິ່ງຮູ້ຜ້າທີ່ເກັບໄວ້ແຮມຄືນ ໒ ຢ່າງ ຄື

໑. ເຮັດແຮມຄືນ

໒. ເກັບໄວ້ແຮມຄືນ

ຄຳວ່າ ເພິ່ງຮູ້ຜ້າທີ່ເປັນນິດສັກຄີ ຄື ເມື່ອພິກຂຸກຳລັງຕັດຫຍິບຜ້າຢູ່ ອາຣຸນຂຶ້ນມາ

ຄຳວ່າ ເພິ່ງຮູ້ການ ການກະຖິນ ຄວາມວ່າ ຖ້າຜ້າກະຖິນເກີດຂຶ້ນແກ່ສົງ ສົງຄວນປະຕິບັດແນວໃດ ພິກຂຸຜູ້ການຄວນປະຕິບັດແນວໃດ ພິກຂຸຜູ້ອະນຸໂມທະນາຄວນປະຕິບັດແນວໃດ

## ອະທິບາຍການ ການກະຖິນ

[໔໑໓] ສົງເພິ່ງໃຫ້ຜ້າກະຖິນແກ່ພິກຂຸຜູ້ການກະຖິນ ດ້ວຍຍັດຕິທຸຕິຍະກຳ

ພິກຂຸຜູ້ການກະຖິນນັ້ນ ຄວນຊັກຍ່ອງໃຫ້ສະອາດແລ້ວກະ ຕັດ ຫຍິບ ຍ້ອມ ເຮັດກັບປະພິນທຸ ແລ້ວການກະຖິນໃນມື້ນັ້ນເລີຍ ຖ້າປະສົງຈະການກະຖິນດ້ວຍຜ້າສັງຄາຕິ ຄວນຖອນຜ້າສັງຄາຕິຜືນເກົ່າອອກ ຄວນອະທິຖານຜ້າສັງຄາຕິຜືນໃໝ່ ເປັ່ງວາຈາວ່າ ຂ້າພະເຈົ້າຈະການ ກະຖິນດ້ວຍຜ້າສັງຄາຕິຜືນນີ້ ຖ້າປະສົງຈະການກະຖິນດ້ວຍຜ້າອຸດຕະຣາສົງ ຄວນຖອນຜ້າ ອຸດຕະຣາສົງຜືນເກົ່າອອກ ຄວນອະທິຖານຜ້າອຸດຕະຣາສົງຜືນໃໝ່ ເປັ່ງວາຈາວ່າ ຂ້າພະເຈົ້າຈະການກະຖິນດ້ວຍຜ້າອຸດຕະຣາສົງຜືນນີ້ ຖ້າປະສົງຈະການກະຖິນດ້ວຍຜ້າອັນຕະຣະວາສົກ ຄວນຖອນຜ້າອັນຕະຣະວາສົກຜືນເກົ່າອອກ ຄວນອະທິຖານຜ້າອັນຕະຣະວາສົກຜືນໃໝ່ ເປັ່ງວາຈາວ່າ ຂ້າພະເຈົ້າຈະການກະຖິນດ້ວຍຜ້າອັນຕະຣະວາສົກຜືນນີ້

ພິກຂຸຜູ້ການກະຖິນນັ້ນ ເພິ່ງເຂົ້າໄປຫາສົງ ຫົ່ມຜ້າອຸດຕະຣາສົງບ່ຽງບ່າ ປະຄອງອັນຊະລີ ແລ້ວກ່າວແນວນີ້ວ່າ ທ່ານຜູ້ຈະເລີນ ກະຖິນຂອງສົງການສຳເລັດແລ້ວ ການ ການກະຖິນເປັນທຳ ຂໍທ່ານທັງຫຼາຍອະນຸໂມທະນາເທີ້ນ

ພິກຂຸຜູ້ອະນຸໂມທະນາເຫຼົ່ານັ້ນ ຫົ່ມຜ້າອຸດຕະຣາສົງບ່ຽງບ່າ ປະຄອງອັນຊະລີ ແລ້ວກ່າວແນວນີ້ວ່າ ຜູ້ມີອາຍຸ ກະຖິນຂອງສົງການສຳເລັດແລ້ວ ການ ການກະຖິນເປັນທຳ ເຮົາທັງຫຼາຍອະນຸໂມທະນາ

ພິກຂຸຜູ້ການກະຖິນນັ້ນ ເພິ່ງເຂົ້າໄປຫາພິກຂຸຫຼາຍອົງ ຫົ່ມຜ້າອຸດຕະຣາສົງບ່ຽງບ່າ ປະຄອງອັນຊະລີ ແລ້ວກ່າວແນວນີ້ວ່າ ທ່ານຜູ້ຈະເລີນ ກະຖິນຂອງສົງການສຳເລັດແລ້ວ ການການກະຖິນເປັນທຳ ຂໍທ່ານທັງຫຼາຍອະນຸໂມທະນາເທີ້ນ

ພິກຂຸຜູ້ອະນຸໂມທະນາເຫຼົ່ານັ້ນ ຫົ່ມຜ້າອຸດຕະຣາສົງບ່ຽງບ່າ ປະຄອງອັນຊະລີ ແລ້ວ

ກ່າວແນວນີ້ວ່າ ຜູ້ມີອາຍຸ ກະຖິນຂອງສົງການສຳເລັດແລ້ວ ການ ການກະຖິນເປັນທຳ ເຮົາທັງຫຼາຍອະນຸໂມທະນາ

ພິກຂຸຜູ້ການກະຖິນນັ້ນ ເພິ່ງເຂົ້າໄປຫາພິກຂຸອົງໜຶ່ງ ຫົ່ມຜ້າອຸດຕະຣາສົງບ່ຽງບ່າ ປະຄອງອັນຊະລີ ແລ້ວກ່າວແນວນີ້ວ່າ ທ່ານຜູ້ຈະເລີນ ກະຖິນຂອງສົງການສຳເລັດແລ້ວ ການການກະຖິນເປັນທຳ ຂໍທ່ານອະນຸໂມທະນາເທີ້ນ

ພິກຂຸຜູ້ອະນຸໂມທະນານັ້ນ ຫົ່ມຜ້າອຸດຕະຣາສົງບ່ຽງບ່າ ປະຄອງອັນຊະລີ ແລ້ວກ່າວແນວນີ້ວ່າ ຜູ້ມີອາຍຸ ກະຖິນຂອງສົງການສຳເລັດແລ້ວ ການ ການກະຖິນເປັນທຳ ຂ້າພະເຈົ້າອະນຸໂມທະນາ

## ໕. ປຸກຄະລັດເສວະກະຖິນັດຖານ

## ວ່າດ້ວຍບຸກຄົນການກະຖິນທີ່ນັ້ນ

[໔໑໘] ຖາມ : ສົງການກະຖິນ ຄະນະການກະຖິນ ບຸກຄົນການກະຖິນ ບໍ

ຕອບ : ສົງບໍ່ໄດ້ການກະຖິນ ຄະນະບໍ່ໄດ້ການກະຖິນ ແຕ່ບຸກຄົນການກະຖິນ ຫາກສົງບໍ່ໄດ້ການກະຖິນ ຄະນະບໍ່ໄດ້ການກະຖິນ ແຕ່ບຸກຄົນການກະຖິນ ຈຶ່ງຊື່ວ່າ ສົງບໍ່ໄດ້ການກະຖິນ ຄະນະບໍ່ໄດ້ການກະຖິນ ແຕ່ບຸກຄົນການກະຖິນ

ຖາມ : ສົງສູດປາຕິໂມກ ຄະນະສູດປາຕິໂມກ ບຸກຄົນສູດປາຕິໂມກ ບໍ?

ຕອບ: ສົງບໍ່ໄດ້ສູດປາຕິໂມກ ຄະນະບໍ່ໄດ້ສູດປາຕິໂມກ ແຕ່ບຸກຄົນສູດປາຕິໂມກ ຫາກສົງບໍ່ໄດ້ສູດປາຕິໂມກ ຄະນະບໍ່ໄດ້ສູດປາຕິໂມກ ແຕ່ບຸກຄົນສູດປາຕິໂມກ ຈຶ່ງຊື່ວ່າ ສົງບໍ່ໄດ້ສູດປາຕິໂມກ ຄະນະບໍ່ສູດປາຕິໂມກ ແຕ່ບຸກຄົນສູດປາຕິໂມກ ຍ້ອນຄວາມສາມັກຄີແຫ່ງສົງ ຍ້ອນຄວາມສາມັກຄີແຫ່ງຄະນະ ຍ້ອນບຸກຄົນສູດ ຈຶ່ງຊື່ວ່າ ສົງສູດປາຕິໂມກ ຄະນະສູດປາຕິໂມກ ບຸກຄົນສູດປາຕິໂມກ ສົງຈຶ່ງບໍ່ໄດ້ການກະຖິນ ຄະນະບໍ່ໄດ້ການກະຖິນ ແຕ່ບຸກຄົນການກະຖິນ ດ້ວຍອາການແນວນີ້ແລ ຍ້ອນສົງອະນຸໂມທະນາ ຍ້ອນຄະນະອະນຸໂມທະນາ ຍ້ອນບຸກຄົນການ ຈຶ່ງຊື່ວ່າ ສົງການກະຖິນ ຄະນະການກະຖິນ ບຸກຄົນການກະຖິນ

# ຜ. ປະລິໂພດບັນຫາພະຍາກອນ

## ວ່າດ້ວຍການແກ້ບັນຫາປະລິໂພດ

[໔໑໕] ທ່ານມະຫາກັດສະປະຖາມວ່າ "ການເດາະກະຖິນກຳນົດດ້ວຍການຫຼີກໄປ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍຂ້າພະເຈົ້າຂໍຖາມທ່ານເຖິງການເດາະກະຖິນນັ້ນ ປະລິໂພດແນວໃດ?ຂາດກ່ອນ

ທ່ານພຣະອຸບາລີຕອບວ່າ "ການເດາະກະຖິນກຳນົດດ້ວຍການຫຼີກໄປ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍເມື່ອພິກຂຸຫຼີກໄປດ້ວຍຄິດວ່າ ຈັກຖິ້ມອາວາດນີ້ສາ ປະລິໂພດໃນຈີວອນຂາດກ່ອນ ປະລິໂພດໃນອາວາດຂາດພ້ອມກັບພິກຂຸນັ້ນໄປນອກສີມາ" (໑)

ທ່ານມະຫາກັດສະປະຖາມວ່າ "ການເດາະກະຖິນກຳນົດດ້ວຍເຮັດຈີວອນສຳເລັດ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍຂ້າພະເຈົ້າຂໍຖາມທ່ານເຖິງການເດາະກະຖິນນັ້ນ ປະລິໂພດແນວໃດ?ຂາດກ່ອນ

ທ່ານພຣະອຸບາລີຕອບວ່າ "ການເດາະກະຖິນກຳນົດດ້ວຍເຮັດຈີວອນສຳເລັດ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍເມື່ອພິກຂຸຫຼີກໄປດ້ວຍຄິດວ່າ ຈັກຖິ້ມອາວາດນີ້ສາ ປະລິໂພດໃນອາວາດຂາດກ່ອນ ເມື່ອເຮັດຈີວອນສຳເລັດ ປະລິໂພດໃນຈີວອນຂາດ" (໒)

ທ່ານມະຫາກັດສະປະຖາມວ່າ "ການເດາະກະຖິນກຳນົດດ້ວຍການຕົກລົງໃຈ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍຂ້າພະເຈົ້າຂໍຖາມທ່ານເຖິງການເດາະກະຖິນນັ້ນ ປະລິໂພດແນວໃດ?ຂາດກ່ອນ

ທ່ານພຣະອຸບາລີຕອບວ່າ "ການເດາະກະຖິນກຳນົດດ້ວຍຕົກລົງໃຈ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍເມື່ອພິກຂຸຫຼີກໄປດ້ວຍຄິດວ່າ ຈັກຖິ້ມອາວາດນີ້ສາ ປະລິໂພດທັງ ໒ ຂາດພ້ອມກັນ" (໓)

ທ່ານມະຫາກັດສະປະຖາມວ່າ "ການເດາະກະຖິນກຳນົດດ້ວຍຜ້າເສຍຫາຍ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍຂ້າພະເຈົ້າຂໍຖາມທ່ານເຖິງການເດາະກະຖິນນັ້ນ ປະລິໂພດແນວໃດ?ຂາດກ່ອນ

ທ່ານພຣະອຸບາລີຕອບວ່າ "ການເດາະກະຖິນກຳນົດດ້ວຍຜ້າເສຍຫາຍ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍເມື່ອພິກຂຸຫຼີກໄປດ້ວຍຄິດວ່າ ຈັກຖິ້ມອາວາດນີ້ສາ ປະລິໂພດໃນອາວາດຂາດກ່ອນ ປະລິໂພດໃນຈີວອນຂາດເມື່ອຜ້າເສຍຫາຍ" (໔)

ທ່ານມະຫາກັດສະປະຖາມວ່າ "ການເດາະກະຖິນກຳນົດດ້ວຍໄດ້ຮູ້ຂ່າວ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍຂ້າພະເຈົ້າຂໍຖາມທ່ານເຖິງການເດາະກະຖິນນັ້ນ ປະລິໂພດແນວໃດ?ຂາດກ່ອນ

ທ່ານພຣະອຸບາລີຕອບວ່າ "ການເດາະກະຖິນກຳນົດດ້ວຍໄດ້ຮູ້ຂ່າວ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍເມື່ອພິກຂຸຫຼີກໄປດ້ວຍຄິດວ່າ ຈັກຖິ້ມອາວາດນີ້ສາ ປະລິໂພດໃນຈີວອນຂາດກ່ອນ ປະລິໂພດໃນອາວາດຂາດພ້ອມກັບການໄດ້ຮູ້ຂ່າວຂອງພິກຂຸນັ້ນ" (໕)

ທ່ານມະຫາກັດສະປະຖາມວ່າ "ການເດາະກະຖິນກຳນົດດ້ວຍສິ້ນຫວັງ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍຂ້າພະເຈົ້າຂໍຖາມທ່ານເຖິງການເດາະກະຖິນນັ້ນ ປະລິໂພດແນວໃດ?ຂາດກ່ອນ

ທ່ານພຣະອຸບາລີຕອບວ່າ "ການເດາະກະຖິນກຳນົດດ້ວຍສິ້ນຫວັງ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍເມື່ອພິກຂຸຫຼີກໄປດ້ວຍຄິດວ່າ ຈັກຖິ້ມອາວາດນີ້ສາ ປະລິໂພດໃນອາວາດຂາດກ່ອນ ປະລິໂພດໃນຈີວອນຂາດຕໍ່ເມື່ອສິ້ນຫວັງໃນຜ້ານັ້ນ" (໖)

ທ່ານມະຫາກັດສະປະຖາມວ່າ "ການເດາະກະຖິນກຳນົດດ້ວຍລ່ວງເຂດ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍຂ້າພະເຈົ້າຂໍຖາມທ່ານເຖິງການເດາະກະຖິນນັ້ນ ປະລິໂພດແນວໃດ?ຂາດກ່ອນ

ທ່ານພຣະອຸບາລີຕອບວ່າ "ການເດາະກະຖິນກຳນົດດ້ວຍລ່ວງເຂດ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍເມື່ອພິກຂຸຫຼີກໄປດ້ວຍຄິດວ່າ ຈັກຖິ້ມອາວາດນີ້ສາ ປະລິໂພດໃນຈີວອນຂາດກ່ອນ ປະລິໂພດໃນອາວາດຂາດເມື່ອພິກຂຸນັ້ນໄປນອກສີມາ" (໗)

ທ່ານມະຫາກັດສະປະຖາມວ່າ "ການເດາະກະຖິນກຳນົດດ້ວຍເດາະພ້ອມກັນ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍຂ້າພະເຈົ້າຂໍຖາມທ່ານເຖິງການເດາະກະຖິນນັ້ນ ປະລິໂພດແນວໃດ?ຂາດກ່ອນ

ທ່ານພຣະອຸບາລີຕອບວ່າ "ການເດາະກະຖິນກຳນົດດ້ວຍເດາະພ້ອມກັນ ອັນພຣະຜູ້ມີພຣະພາກເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ ກໍເມື່ອພິກຂຸຫຼີກໄປດ້ວຍຄິດວ່າ ຈັກຖິ້ມອາວາດນີ້ສາ ປະລິໂພດທັງ ໔ ຢ່າງ ຂາດພ້ອມກັນ" (໗)

## ການເດາະກະຖິນ

[໔໑໖] ຖາມ : ການເດາະກະຖິນທີ່ສົງເປັນໃຫຍ່ມີທີ່ໃດ? ການເດາະກະຖິນທີ່ບຸກຄົນເປັນໃຫຍ່ມີທີ່ໃດ? ການເດາະກະຖິນທີ່ສົງບໍ່ເປັນໃຫຍ່ ບຸກຄົນບໍ່ເປັນໃຫຍ່ມີທີ່ໃດ?

ຕອບ : ການເດາະກະຖິນທີ່ສົງເປັນໃຫຍ່ມີແນວດຽວ ຄື ການເດາະໃນລະຫວ່າງ

ການເດາະກະຖິນທີ່ບຸກຄົນເປັນໃຫຍ່ມີ ໔ ຢ່າງ ຄື ການເດາະກະຖິນກຳນົດດ້ວຍການຫຼີກໄປ ການເດາະກະຖິນກຳນົດດ້ວຍເຮັດຈີວອນສຳເລັດ ການເດາະກະຖິນກຳນົດດ້ວຍຕົກລົງໃຈ ການເດາະກະຖິນກຳນົດດ້ວຍລ່ວງເຂດ

ການເດາະກະຖິນທີ່ສົງບໍ່ເປັນໃຫຍ່ ບຸກຄົນບໍ່ເປັນໃຫຍ່ມີ ໔ ຢ່າງ ຄື ການເດາະກະຖິນກຳນົດດ້ວຍຜ້າເສຍຫາຍ ການເດາະກະຖິນກຳນົດດ້ວຍຮູ້ຂ່າວ ການເດາະກະຖິນກຳນົດດ້ວຍສິ້ນຫວັງ ການເດາະກະຖິນກຳນົດດ້ວຍເດາະພ້ອມກັນ

## ການເດາະກະຖິນພາຍໃນສີມາ ເປັນຕົ້ນ

ຖາມ : ການເດາະກະຖິນທີ່ໃດ? ເດາະພາຍໃນສີມາ ການເດາະກະຖິນທີ່ໃດ? ເດາະພາຍ ນອກສີມາ ການເດາະກະຖິນມີທີ່ໃດ? ເດາະພາຍໃນສີມາກໍມີ ເດາະພາຍນອກສີມາກໍມີ

ຕອບ : ການເດາະກະຖິນ ໒ ຢ່າງ ເດາະພາຍໃນສີມາ ຄື

໑. ເດາະໃນລະຫວ່າງ

໒. ເດາະພ້ອມກັນ

ການເດາະກະຖິນ ໓ ຢ່າງ ເດາະພາຍນອກສີມາ ຄື

໑. ເດາະກະຖິນກຳນົດດ້ວຍຫຼີກໄປ

໒. ກຳນົດດ້ວຍໄດ້ຮູ້ຂ່າວ

໓. ກຳນົດດ້ວຍລ່ວງເຂດ

ການເດາະກະຖິນ ໔ ຢ່າງ ເດາະພາຍໃນສີມາກໍມີ ເດາະພາຍນອກສີມາກໍມີ ຄື

໑. ເດາະກະຖິນກຳນົດດ້ວຍເຮັດຈີວອນສຳເລັດ

໒. ກຳນົດດ້ວຍຕົກລົງໃຈເປັນບ່ອນສຸດ

໓. ເດາະກະຖິນກຳນົດດ້ວຍຈີວອນເສຍຫາຍ

໔. ກຳນົດດ້ວຍສິ້ນຫວັງ

ການເດາະກະຖິນເກີດຂຶ້ນພ້ອມກັນ ເປັນຕົ້ນ

ຖາມ : ການເດາະກະຖິນທີ່ໃດ? ເກີດນຳກັນ ດັບນຳກັນ ການເດາະກະຖິນທີ່ໃດ? ເກີດນຳກັນ ດັບຕ່າງກັນ

ຕອບ : ການເດາະກະຖິນ ໒ ຢ່າງ ເກີດນຳກັນ ດັບນຳກັນ ຄື

໑. ເດາະໃນລະຫວ່າງ

໒. ເດາະພ້ອມກັນ

ການເດາະກະຖິນນອກນັ້ນ ເກີດນຳກັນ ດັບຕ່າງກັນ

**ກະຖິນະເພທະ ຈົບ**

## ຫົວຂໍ້ປະຈຳເລື້ອງ

ໃຜບໍ່ໄດ້ການກະຖິນ ໄດ້ການກະຖິນ ແນວໃດກະຖິນບໍ່ເປັນອັນການ
ທຳ ໑໕ ຢ່າງ ເກີດພ້ອມກັບການ ການກະຖິນ

ບຸບພະກອນມີອັນໃດ?ເປັນນິທານ ປະໂຍຄະມີເຫດເປັນນິທານ
ມີປັດໄຈເປັນນິທານ ບຸບພະກອນສົງເຄາະດ້ວຍທຳທີ່ໃດ?
ກະຖິນມີມູນທີ່ໃດ? ກະຖິນມີອັນໃດ?ເປັນເບື້ອງຕົ້ນ
ພິກຂຸຜູ້ປະກອບດ້ວຍອົງ ໗ ຄວນການກະຖິນແລະບໍ່ຄວນການກະຖິນ
ພິກຂຸ ໓ ຈຳພວກການກະຖິນບໍ່ຂຶ້ນແລະການກະຖິນຂຶ້ນ
ການ ການກະຖິນ ໓ ຢ່າງບໍ່ຂຶ້ນ

ເພິ່ງຮູ້ການ ການກະຖິນກັບການສູດ ເພິ່ງຮູ້ປະລິໂພດ
ເພິ່ງຮູ້ການເດາະກະຖິນທີ່ມີສົງເປັນໃຫຍ່
ເພິ່ງຮູ້ການເດາະກະຖິນພາຍໃນສີມາ
ເພິ່ງຮູ້ການເດາະກະຖິນທີ່ເກີດຂຶ້ນນຳກັນທີ່ດັບນຳກັນ

໓. ໂຈດຕາມອາບັດ ໃນທຳແລະວິໄນອັນສົມຄວນ

໔. ປັບຕາມອາບັດ ໃນທຳແລະວິໄນອັນສົມຄວນ

໕. ຊີ້ແຈ່ງຕາມຄວາມເຫັນ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເມື່ອເວົ້າໃນສົງຍ່ອມເປັນທີ່ປາຖະໜາ ເປັນທີ່ພໍໃຈ ແລະເປັນທີ່ພໍໃຈຂອງຊົນທັງຫຼາຍ

## ອານິສົງໃນການຮຽນວິໄນ

[໔໘໓] ທ່ານພຣະອຸບາລີທູນຖາມ : ຂ້າແຕ່ພຣະອົງຜູ້ຈະເລີນ ໃນການຮຽນວິໄນ ມີອານິສົງທໍ່ໃດ?ນໍແລ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອຸບາລີ ໃນການຮຽນວິໄນ ມີອານິສົງ ໕ ປະການນີ້ ໕ ປະການ ອັນໃດແດ່ ຄື

໑. ກອງສິນເປັນອັນຕົນຄຸ້ມຄອງຮັກສາໄວ້ດ້ວຍດີ

໒. ເປັນບ່ອນເພິ່ງພິງຂອງຜູ້ຖືກຄວາມສົງໄສຄອບງໍາ

໓. ເປັນຜູ້ກ້າເວົ້າໃນທ່າມກາງສົງ

໔. ຂົ່ມຂ້າເສິກດ້ວຍດີດ້ວຍສະຫະທໍາ

໕. ເປັນຜູ້ປະຕິບັດເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທໍາ

ອຸບາລີ ໃນການຮຽນວິໄນ ມີອານິສົງ ໕ ປະການນີ້ແລ

**ນັບປະຕິປັດສໍາພະນະວັກທີ ໒ ຈົບ**

## ຫົວຂໍ້ປະຈໍາວັກ

ຕ້ອງອາບັດ ໑ ອາບັດໃດ ໑ ກ່າວຕິຕຽນ ໑ ອະລັດຊີ ໑
ສົງຄາມ ໑ ມີຄວາມຄິດມືດມົນ ໑ ອວດອ້າງ ໑ ຂົ່ມຂູ່ ໑ ຮຽນວິໄນ ໑

**ພຣະບັນຍັດຄູ່ທີ ໑ ຈົບ**

# ອຸປາລິປັນຈະກະ

## ວ່າດ້ວຍເລື້ອງພຣະອຸບາລີ ໕ ໝວດ

### ໑. ອະນິດສິຕະວັກ

### ໝວດວ່າດ້ວຍການບໍ່ຖືນິໄສ

[໔໑໗] ໂດຍສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າພຸດທະເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະຄະຫະບໍດີ ເຂດນະຄອນສາວັດຖີ ຄັ້ງນັ້ນ ທ່ານພຣະອຸບາລີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງ ທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພິກຂຸປະກອບດ້ວຍອົງທໍ່ໃດ?ນໍແລ ຈະເພິ່ງຢູ່ໂດຍບໍ່ຖືນິໄສຕະຫຼອດຊີວິດບໍ່ໄດ້ ຂ້ານ້ອຍ

### ອົງຂອງພິກຂຸຜູ້ຕ້ອງຖືນິໄສ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸປະກອບດ້ວຍອົງ ໕ ຈະເພິ່ງຢູ່ໂດຍບໍ່ຖືນິໄສຕະຫຼອດຊີວິດບໍ່ໄດ້ ອົງ ໕ ຄື

໑. ບໍ່ຮູ້ອຸໂປສົດ
໒. ບໍ່ຮູ້ອຸໂປສົດກຳ
໓. ບໍ່ຮູ້ປາຕິໂມກ
໔. ບໍ່ຮູ້ປາຕິໂມກຂຸດເທດ
໕. ມີພັນສາຢ່ອນ ໕

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ຈະເພິ່ງຢູ່ໂດຍບໍ່ຖືນິໄສຕະຫຼອດຊີວິດບໍ່ໄດ້

### ອົງຂອງພິກຂຸຜູ້ບໍ່ຕ້ອງຖືນິໄສ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ເພິ່ງຢູ່ໂດຍບໍ່ຕ້ອງຖືນິໄສຕະຫຼອດຊີວິດໄດ້ ອົງ ໕ ຄື

໑. ຮູ້ອຸໂປສົດ
໒. ຮູ້ອຸໂປສົດກຳ
໓. ຮູ້ປາຕິໂມກ
໔. ຮູ້ປາຕິໂມກຂຸດເທດ
໕. ມີພັນສາຄົບ ໕ ຫຼືມີພັນສາເກີນ ໕

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິໄສຕະຫຼອດຊີວິດໄດ້

## ອົງຂອງພິກຂຸຜູ້ຕ້ອງຖືນິໄສອີກໄນໜຶ່ງ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ແມ່ນອີກຢ່າງ ຈະເພິ່ງຢູ່ໂດຍບໍ່ຖືນິໄສຕະຫຼອດ ຊີວິດບໍ່ໄດ້ ອົງ ໕ ອັນໃດແດ່ ຄື

໑. ບໍ່ຮູ້ປະວາຣະນາ                ໔. ບໍ່ຮູ້ປະວາຣະນາກຳ

໒. ບໍ່ຮູ້ປາຕິໂມກ                  ໔. ບໍ່ຮູ້ປາຕິໂມກຂຸດເທດ

໕. ມີພັນສາຢ່ອນ ໕

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ຈະເພິ່ງຢູ່ໂດຍບໍ່ຖືນິໄສຕະຫຼອດຊີວິດບໍ່ໄດ້

## ອົງຂອງພິກຂຸຜູ້ບໍ່ຕ້ອງຖືນິໄສ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ເພິ່ງຢູ່ໂດຍບໍ່ຕ້ອງຖືນິໄສຕະຫຼອດຊີວິດໄດ້
ອົງ ໕ ຄື

໑. ຮູ້ປະວາຣະນາ                ໔. ຮູ້ປະວາຣະນາກຳ

໒. ຮູ້ປາຕິໂມກ                  ໔. ຮູ້ປາຕິໂມກຂຸດເທດ

໕. ມີພັນສາຄົບ ໕ ຫຼືມີພັນສາເກີນ ໕

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິໄສຕະຫຼອດຊີວິດໄດ້

## ອົງຂອງພິກຂຸຜູ້ຕ້ອງຖືນິໄສອີກໄນໜຶ່ງ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ແມ່ນອີກຢ່າງ ຈະເພິ່ງຢູ່ໂດຍບໍ່ຖືນິໄສຕະຫຼອດຊີວິດບໍ່ໄດ້ ອົງ ໕ ຄື

໑. ບໍ່ຮູ້ອາບັດແລະອະນາບັດ        ໔. ບໍ່ຮູ້ອາບັດເບົາແລະອາບັດໜັກ

໒. ບໍ່ຮູ້ອາບັດມີສ່ວນເຫຼືອແລະ      ໔. ບໍ່ຮູ້ອາບັດຊົ່ວຫຍາບແລະອາບັດ
ອາບັດບໍ່ມີສ່ວນເຫຼືອບໍ່ຊົ່ວຫຍາບ

໕. ມີພັນສາຢ່ອນ ໕

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ຈະເພິ່ງຢູ່ໂດຍບໍ່ຖືນິໄສຕະຫຼອດຊີວິດບໍ່ໄດ້

## ອົງຂອງພິກຂຸຜູ້ບໍ່ຕ້ອງຖືນິໄສ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ເພິ່ງຢູ່ໂດຍບໍ່ຕ້ອງຖືນິໄສຕະຫຼອດຊີວິດໄດ້ ອົງ ໕ ຄື

໑. ຮູ້ອາບັດແລະອະນາບັດ

໔. ຮູ້ອາບັດເບົາແລະອາບັດໜັກ

໓. ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ມີພັນສາຄົບ ໕ ຫຼືມີພັນສາເກີນ ໕

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເພິ່ງຢູ່ໂດຍບໍ່ຕ້ອງຖືນິໄສຕະຫຼອດຊີວິດໄດ້"

## ພິກຂຸທີ່ບໍ່ເພິ່ງໃຫ້ອຸປະສົມບົດ ເປັນຕົ້ນ

[໔໑໗] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸປະກອບດ້ວຍອົງທີ່ໃດ?ນໍແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸປະກອບດ້ວຍອົງ ໕ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ອົງ ໕ ຄື

໑. ບໍ່ສາມາດປິ່ນປົວເອງຫຼືໃຊ້ໃຫ້ຜູ້ອື່ນປິ່ນປົວອັນເຕວາສິກຫຼືສັດທິວິຫາຣິກຜູ້ເປັນໄຂ້
໒. ບໍ່ສາມາດລະງັບເອງຫຼືໃຊ້ໃຫ້ຜູ້ອື່ນຊ່ອຍລະງັບຄວາມກະສັນ
໓. ບໍ່ສາມາດບັນເທົາເອງຫຼືໃຊ້ໃຫ້ຜູ້ອື່ນຊ່ອຍບັນເທົາຄວາມເບື່ອໜ່າຍທີ່ເກີດຂຶ້ນໂດຍທຳ
໔. ບໍ່ສາມາດແນະນຳໃນອະພິທຳ
໕. ບໍ່ສາມາດແນະນຳໃນອະພິວິໄນ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ

## ພິກຂຸທີ່ເພິ່ງໃຫ້ອຸປະສົມບົດ ເປັນຕົ້ນ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິໄສ ເພິ່ງໃຊ້ສາມະເນນອຸປັດຖາກ ອົງ ໕ ຄື

໑. ສາມາດປິ່ນປົວເອງຫຼືໃຊ້ໃຫ້ຜູ້ອື່ນປິ່ນປົວອັນເຕວາສິກຫຼືສັດທິວິຫາຣິກຜູ້ເປັນໄຂ້
໒. ສາມາດລະງັບເອງຫຼືໃຊ້ໃຫ້ຜູ້ອື່ນຊ່ອຍລະງັບຄວາມກະສັນ
໓. ສາມາດບັນເທົາເອງຫຼືໃຊ້ໃຫ້ຜູ້ອື່ນຊ່ອຍບັນເທົາຄວາມເບື່ອໜ່າຍອັນເກີດຂຶ້ນໂດຍທຳ
໔. ສາມາດແນະນຳໃນອະພິທຳ
໕. ສາມາດແນະນຳໃນອະພິວິໄນ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິໄສ ເພິ່ງໃຊ້ສາມະເນນອຸປັດຖາກ

## ພິກຂຸທີ່ບໍ່ເພິ່ງໃຫ້ອຸປະສົມບົດ ເປັນຕົ້ນ ອີກໄນໜຶ່ງ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ ອົງ ໕ ຄື

໑. ບໍ່ສາມາດເຝິກຝົນອັນເຕວາສິກຫຼືສັດທິວິຫາຣິກໃນອະພິສະມາຈາຣິກາສິກຂາ

໒. ບໍ່ສາມາດແນະນຳໃນອາທິພົມຈາຣິຍະກາສິກຂາ

໓. ບໍ່ສາມາດແນະນຳໃນອະທິສີນ

໔. ບໍ່ສາມາດແນະນຳໃນອະທິຈິດ

໕. ບໍ່ສາມາດແນະນຳໃນອະທິປັນຍາ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ບໍ່ເພິ່ງໃຫ້ອຸປະສົມບົດ ບໍ່ເພິ່ງໃຫ້ນິໄສ ບໍ່ເພິ່ງໃຊ້ສາມະເນນອຸປັດຖາກ

## ພິກຂຸທີ່ເພິ່ງໃຫ້ອຸປະສົມບົດ ເປັນຕົ້ນ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິໄສ ເພິ່ງໃຊ້ສາມະເນນອຸປັດຖາກ ອົງ ໕ ຄື

໑. ສາມາດເຝິກຝົນອັນເຕວາສິກຫຼືສັດທິວິຫາຣິກໃນອະພິສະມາຈາຣິກາສິກຂາ

໒. ສາມາດແນະນຳໃນອາທິພົມຈາຣິຍະກາສິກຂາ

໓. ສາມາດແນະນຳໃນອະທິສີນ

໔. ສາມາດແນະນຳໃນອະທິຈິດ

໕. ສາມາດແນະນຳໃນອະທິປັນຍາ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເພິ່ງໃຫ້ອຸປະສົມບົດ ເພິ່ງໃຫ້ນິໄສ ເພິ່ງໃຊ້ສາມະເນນອຸປັດຖາກ

## ອົງ ໕ ຂອງພິກຂຸຜູ້ຖືກລົງໂທດ

[໔໑໗] ທ່ານພຣະອຸບາລີທູນຖາມວ່າ "ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງທີ່ໃດນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ຄື

໑. ເປັນອະລັດຊີ ໒. ເປັນຄົນໂງ່ຈ້າ

໓. ບໍ່ແມ່ນເປັນປະກະຕັດຕະ ໔. ເປັນມິດສາທິດຖິ

໕. ມີອາຊີວະວິບັດ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ອົງ ໕ ຄື

໑. ເປັນຜູ້ມີສີນວິບັດໃນອະທິສີນ ໒. ເປັນຜູ້ມີອາຈາຣະວິບັດໃນອັດຊາຈານ

໓. ເປັນຜູ້ມີທິດຖິວິບັດໃນອະຕິທິດຖິ ໔. ເປັນມິດສາທິດຖິ

໕. ມີອາຊີວະວິບັດ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ

ອຸບາລີ ສົງເພິ່ງລົງໂທດພິກຂຸປະກອບດ້ວຍອົງ ໕ ແມ່ນອີກຢ່າງ ອົງ ໕ ຄື

໑. ຫຼິ້ນຄະນອງກາຍ ໒. ຫຼິ້ນຄະນອງວາຈາ

໓. ຫຼິ້ນຄະນອງທັງກາຍແລະວາຈາ ໔. ເປັນມິດສາທິດຖິ

໕. ມີອາຊີວະວິບັດ

ອຸບາລີ ສົງເພິ່ງລົງໂທດພິກຂຸປະກອບດ້ວຍອົງ ໕ ນີ້ແລ

ອຸບາລີ ສົງເພິ່ງລົງໂທດພິກຂຸປະກອບດ້ວຍອົງ ໕ ແມ່ນອີກຢ່າງ ອົງ ໕ ຄື

໑. ປະພຶດບໍ່ສົມຄວນທາງກາຍ ໒. ປະພຶດບໍ່ສົມຄວນທາງວາຈາ

໓. ປະພຶດບໍ່ສົມຄວນທັງກາຍ ໔. ເປັນມິດສາທິດຖິແລະທາງວາຈາ

໕. ມີອາຊີວະວິບັດ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ອົງ ໕ ຄື

໑. ທຳລາຍພຣະບັນຍັດທາງກາຍ ໒. ທຳລາຍພຣະບັນຍັດທາງວາຈາ

໓. ທຳລາຍພຣະບັນຍັດທັງທາງກາຍ ໔. ເປັນມິດສາທິດຖິແລະທາງວາຈາ

໕. ມີອາຊີວະວິບັດ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ອົງ ໕ ຄື

໑. ປະກອບມິດສາຊີບທາງກາຍ ໒. ປະກອບມິດສາຊີບທາງວາຈາ

໓. ປະກອບມິດສາຊີບທາງກາຍ ໔. ເປັນມິດສາທິດຖິແລະທາງວາຈາ

໕. ມີອາຊີວະວິບັດ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ອົງ ໕ ຄື

໑. ຕ້ອງອາບັດແລ້ວຖືກລົງໂທດ ໒. ໃຫ້ນິໄສແຕ່ຍັງໃຫ້ອຸປະສົມບົດ

໓. ໃຊ້ສາມະເນນອຸປັດຖາກ ໔. ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ

໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວ ກໍຍັງສັ່ງສອນພິກຂຸນີ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ອົງ ໕ ຄື

໑. ຕ້ອງອາບັດທີ່ເປັນເຫດ

໒. ຕ້ອງອາບັດອື່ນທຳນອງດຽວກັນໃຫ້ຖືກສົງລົງໂທດ

໓. ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ ໔. ຕຳໜິກຳ

໕. ຕຳໜິພິກຂຸຜູ້ເຮັດກຳ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ອົງ ໕ ຄື

໑. ກ່າວຕິຕຽນພຣະພຸດ ໒. ກ່າວຕິຕຽນພຣະທຳ

໓. ກ່າວຕິຕຽນພຣະສົງ ໔. ເປັນມິດສາທິດຖິ

໕. ມີອາຊີວະວິບັດ

ອຸບາລີ ສົງເພິ່ງລົງໂທດພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ”

**ອະນິດສິຕະວັກທີ ໑ ຈົບ**

## ຫົວຂໍ້ປະຈຳວັກ

ບໍ່ຮູ້ອຸໂປສົດ ບໍ່ຮູ້ປະວາຣະນາ ບໍ່ຮູ້ອາບັດ
ບໍ່ສາມາດປິ່ນປົວພິກຂຸໄຂ້ ບໍ່ສາມາດເຝິກໃນອະພິສະມາຈານ
ສົງເພິ່ງລົງໂທດພິກຂຸຜູ້ເປັນອະລັດຊີ ມີສີນວິບັດໃນອະທິສີນ ຫຼິ້ນຄະນອງ
ປະພຶດບໍ່ສົມຄວນ ທຳລາຍພຣະບັນຍັດ ເປັນມິດສາທິດຖິ
ຕ້ອງອາບັດທີ່ເປັນເຫດໃຫ້ຖືກລົງໂທດ ຕຳໜິພຣະພຸດທະເຈົ້າ
ລວມເປັນວັກທີ ໑ ແລ

# ໔. ນັບປະຕິປັດສຳພະນະວັກ

## ໝວດວ່າດ້ວຍການບໍ່ລະງັບກຳ

[໔໘໐] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸປະກອບດ້ວຍອົງທີ່ໃດ?ນໍແລ ສົງບໍ່ຄວນລະງັບກຳ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸປະກອບດ້ວຍອົງ ໕ ສົງບໍ່ຄວນລະງັບກຳ ອົງ ໕ ຄື

໑. ຕ້ອງອາບັດແລ້ວຖືກລົງໂທດ
໒. ໃຫ້ນິໄສແຕ່ຍັງໃຫ້ອຸປະສົມບົດ
໓. ໃຊ້ສາມະເນນອຸປັດຖາກ
໔. ຮັບແຕ່ງຕັ້ງເປັນຜູ້ສັ່ງສອນພິກຂຸນີ
໕. ແມ່ນໄດ້ຮັບແຕ່ງຕັ້ງແລ້ວ ກໍຍັງສັ່ງສອນພິກຂຸນີ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ສົງບໍ່ຄວນລະງັບກຳ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ແມ່ນອີກຢ່າງ ສົງບໍ່ຄວນລະງັບກຳ ອົງ ໕ ຄື

໑. ຕ້ອງອາບັດທີ່ເປັນເຫດ
໒. ຕ້ອງອາບັດອື່ນທຳນອງດຽວກັນໃຫ້ຖືກສົງລົງໂທດ
໓. ຕ້ອງອາບັດທີ່ຊົ່ວຊາມກວ່ານັ້ນ
໔. ຕຳໜິກຳ
໕. ຕຳໜິພິກຂຸຜູ້ເຮັດກຳ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ສົງບໍ່ຄວນລະງັບກຳ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ແມ່ນອີກຢ່າງ ສົງບໍ່ຄວນລະງັບກຳ ອົງ ໕ ຄື

໑. ກ່າວຕິຕຽນພຣະພຸດທະເຈົ້າ
໒. ກ່າວຕິຕຽນພຣະທຳ
໓. ກ່າວຕິຕຽນພຣະສົງ
໔. ເປັນມິດສາທິດຖິ
໕. ມີອາຊີວະວິບັດ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ສົງບໍ່ຄວນລະງັບກຳ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ແມ່ນອີກຢ່າງ ສົງບໍ່ຄວນລະງັບກຳ ອົງ ໕ ຄື

໑. ເປັນອະລັດຊີ
໒. ເປັນຄົນໂງ່ຈ້າ
໓. ບໍ່ແມ່ນເປັນປະກະຕັດຕະ
໔. ກະທຳການຍ່ຳຍີຂໍ້ປະຕິບັດ
໕. ບໍ່ເຮັດຂໍ້ວັດປະຕິບັດແລະສິກຂາໃຫ້ບໍລິບູນ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ສົງບໍ່ຄວນລະງັບກຳ"

## ຄຸນສົມບັດຂອງພິກຂຸຜູ້ເຂົ້າສົງຄາມ

[໔໘໑] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ເຂົ້າສົງຄາມ ເມື່ອເຂົ້າຫາສົງເພິ່ງຕັ້ງທຳທີ່ໃດ?ໄວ້ໃນຕົນ ແລ້ວເຂົ້າຫາສົງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ເຂົ້າສົງຄາມ ເມື່ອເຂົ້າຫາສົງເພິ່ງຕັ້ງທຳ ໕ ປະການໄວ້ໃນຕົນ ແລ້ວເຂົ້າຫາສົງ ທຳ ໕ ປະການ ຄື

ພິກຂຸຜູ້ເຂົ້າສົງຄາມ ເມື່ອເຂົ້າຫາສົງ

໑. ເພິ່ງມີຈິດຢຳເກງ ມີຈິດສະເໝີດ້ວຍຜ້າເຊັດທຸລີ ເຂົ້າຫາສົງ
໒. ເພິ່ງເປັນຜູ້ຮູ້ຈັກບ່ອນນັ່ງ ຮູ້ຈັກການນັ່ງ
໓. ບໍ່ບຽດພິກຂຸຜູ້ເຖຣະ ບໍ່ຫ້າມພິກຂຸຜູ້ອ່ອນກວ່າດ້ວຍອາສະນະ ເພິ່ງນັ່ງອາສະນະຕາມສົມຄວນ
໔. ບໍ່ເພິ່ງເວົ້າເລື່ອງຕ່າງ ໆ ບໍ່ເພິ່ງເວົ້າເດຍຣັດສານກະຖາ
໕. ເພິ່ງກ່າວທຳເອງຫຼືເຊື້ອເຊີນພິກຂຸອົງອື່ນ ບໍ່ເພິ່ງດູໝິ່ນອະຣິຍະດຸດສະນີພາບ

ອຸບາລີ ຖ້າສົງເຮັດກຳທີ່ຄວນພ້ອມພຽງກັນເຮັດ ຫາກພິກຂຸບໍ່ພໍໃຈໃນກຳນັ້ນ

ຈະທຳຄວາມຄິດເຫັນຂັດແຍ່ງກັນກໍໄດ້ ແຕ່ຄວນຄວບຄຸມຄວາມສາມັກຄີໄວ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທ່ານຄິດວ່າ ເຮົາບໍ່ຄວນແຕກຕ່າງຈາກສົງເລີຍ

ອຸບາລີ ພິກຂຸຜູ້ເຂົ້າສູ່ສົງຄາມ ເມື່ອເຂົ້າຫາສົງ ເພິ່ງຕັ້ງທຳ ໕ ປະການນີ້ໄວ້ໃນຕົນ ແລ້ວເຂົ້າຫາສົງ

## ອົງຂອງພິກຂຸຜູ້ເວົ້າໃນສົງ

[໔໘໒] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸປະກອບດ້ວຍອົງທີ່ໃດ?ນໍແລ ເມື່ອ

ເວົ້າໃນສົງຍ່ອມບໍ່ເປັນທີ່ປາຖະໜາ ບໍ່ເປັນທີ່ພໍໃຈ ແລະບໍ່ເປັນທີ່ພໍໃຈຂອງຊົນທັງຫຼາຍຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸປະກອບດ້ວຍອົງ ໕ ເມື່ອເວົ້າໃນສົງ ຍ່ອມບໍ່ເປັນທີ່ປາຖະໜາ ບໍ່ເປັນທີ່ພໍໃຈ ແລະບໍ່ເປັນທີ່ພໍໃຈຂອງຊົນທັງຫຼາຍ ອົງ ໕ ຄື

໑. ເປັນຜູ້ມີຄວາມຄິດມືດມົນ
໒. ກ່າວອ້າງຜູ້ອື່ນ
໓. ບໍ່ສະຫຼາດໃນຄຳເວົ້າທີ່ເຊື່ອມເຖິງກັນ
໔. ບໍ່ໂຈດຕາມອາບັດໃນທຳແລະ ວິໄນອັນສົມຄວນ
໕. ບໍ່ປັບຕາມອາບັດໃນທຳແລະວິໄນອັນສົມຄວນ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເມື່ອເວົ້າໃນສົງຍ່ອມບໍ່ເປັນທີ່ປາຖະໜາ ບໍ່ເປັນທີ່ພໍໃຈ ແລະບໍ່ເປັນທີ່ພໍໃຈຂອງຊົນທັງຫຼາຍ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ເມື່ອເວົ້າໃນສົງຍ່ອມເປັນທີ່ປາຖະໜາ ເປັນທີ່ພໍໃຈ ແລະເປັນທີ່ພໍໃຈຂອງຊົນທັງຫຼາຍ ອົງ ໕ ຄື

໑. ບໍ່ເປັນຜູ້ມີຄວາມຄິດມືດມົນ

໒. ບໍ່ກ່າວອ້າງຜູ້ອື່ນ

໓. ສະຫຼາດໃນຄຳເວົ້າທີ່ເຊື່ອມເຖິງກັນ

໔. ໂຈດຕາມອາບັດໃນທຳແລະວິໄນອັນສົມຄວນ

໕. ປັບຕາມອາບັດໃນທຳແລະວິໄນອັນສົມຄວນ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເມື່ອເວົ້າໃນສົງຍ່ອມເປັນທີ່ປາຖະໜາ ເປັນທີ່ພໍໃຈ ແລະເປັນທີ່ພໍໃຈຂອງຊົນທັງຫຼາຍ

## ອົງຂອງພິກຂຸຜູ້ເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ແມ່ນອີກຢ່າງ ເມື່ອເວົ້າໃນສົງຍ່ອມບໍ່ເປັນທີ່ປາຖະໜາບໍ່ເປັນທີ່ພໍໃຈ ແລະບໍ່ເປັນທີ່ພໍໃຈຂອງຊົນທັງຫຼາຍ ອົງ ໕ ຄື

໑. ເປັນຜູ້ອວດອ້າງ

໒. ເປັນຜູ້ຮຸກຮານ

໓. ຢຶດຖືອະທຳ

໔. ຄ້ານທຳ

໕. ກ່າວຄຳເວົ້າທີ່ຂາດປະໂຫຍດຫຼວງຫຼາຍ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເມື່ອເວົ້າໃນສົງຍ່ອມບໍ່ເປັນທີ່ປາຖະໜາ ບໍ່ເປັນທີ່ພໍໃຈ ແລະບໍ່ເປັນທີ່ພໍໃຈຂອງຊົນທັງຫຼາຍ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ເມື່ອເວົ້າໃນສົງຍ່ອມເປັນທີ່ປາຖະໜາ ເປັນທີ່ພໍໃຈ ແລະເປັນທີ່ພໍໃຈຂອງຊົນທັງຫຼາຍ ອົງ ໕ ຄື

໑. ບໍ່ເປັນຜູ້ອວດອ້າງ

໒. ບໍ່ເປັນຜູ້ຮຸກຮານ

໓. ຢຶດຖືທຳ

໔. ຄ້ານອະທຳ

໕. ບໍ່ກ່າວຄຳເວົ້າທີ່ຂາດປະໂຫຍດຫຼວງຫຼາຍ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເມື່ອເວົ້າໃນສົງຍ່ອມເປັນທີ່ປາຖະໜາ ເປັນທີ່ພໍໃຈ ແລະເປັນທີ່ພໍໃຈຂອງຊົນທັງຫຼາຍ

## ອົງຂອງພິກຂຸຜູ້ເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ແມ່ນອີກຢ່າງ ເມື່ອເວົ້າໃນສົງຍ່ອມບໍ່ເປັນທີ່ປາຖະໜາ ບໍ່ເປັນທີ່ພໍໃຈ ແລະບໍ່ເປັນທີ່ພໍໃຈຂອງຊົນທັງຫຼາຍ ອົງ ໕ ຄື

໑. ກ່າວຂົ່ມຂູ່

໒. ກ່າວບໍ່ໃຫ້ໂອກາດຜູ້ອື່ນ

໓. ບໍ່ໂຈດຕາມອາບັດ ໃນທຳ

໔. ບໍ່ປັບຕາມອາບັດໃນທຳແລະ ແລະວິໄນອັນສົມຄວນວິໄນອັນສົມຄວນ

໕. ບໍ່ຊີ້ແຈ່ງຕາມຄວາມເຫັນ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເມື່ອເວົ້າໃນສົງຍ່ອມບໍ່ເປັນທີ່ປາຖະໜາ ບໍ່ເປັນທີ່ພໍໃຈ ແລະບໍ່ເປັນທີ່ພໍໃຈຂອງຊົນທັງຫຼາຍ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ເມື່ອເວົ້າໃນສົງຍ່ອມເປັນທີ່ປາຖະໜາ ເປັນທີ່ພໍໃຈ ແລະເປັນທີ່ພໍໃຈຂອງຊົນທັງຫຼາຍ ອົງ ໕ ຄື

໑. ບໍ່ກ່າວຂົ່ມຂູ່

໒. ກ່າວໃຫ້ໂອກາດຜູ້ອື່ນ

໓. ໂຈດຕາມອາບັດ ໃນທຳແລະວິໄນອັນສົມຄວນ

໔. ປັບຕາມອາບັດ ໃນທຳແລະວິໄນອັນສົມຄວນ

໕. ຊີ້ແຈ່ງຕາມຄວາມເຫັນ

ອຸບາລີ ພິກຂຸປະກອບດ້ວຍອົງ ໕ ນີ້ແລ ເມື່ອເວົ້າໃນສົງຍ່ອມເປັນທີ່ປາຖະໜາ ເປັນທີ່ພໍໃຈ ແລະເປັນທີ່ພໍໃຈຂອງຊົນທັງຫຼາຍ"

## ອານິສົງໃນການຮຽນວິໄນ

[໔໒໓] ທ່ານພຣະອຸບາລີທູນຖາມວ່າ "ໃນການຮຽນວິໄນ ມີອານິສົງທໍ່ໃດ?ນໍແລ ຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ໃນການຮຽນວິໄນ ມີອານິສົງ ໕ ປະການນີ້ ຄື

໑. ເປັນອັນຄຸ້ມຄອງຮັກສາກອງສິນຂອງຕົນໄວ້ດີແລ້ວ

໒. ຜູ້ທີ່ຖືກຄວາມລັງກຽດຄອບງຳຍ່ອມຫວນຣະນຶກໄດ້

໓. ກ້າເວົ້າໃນທ່າມກາງສົງ

໔. ຂົ່ມດ້ວຍດີເຊິ່ງຂ້າເສິກໂດຍສະຫະທຳ

໕. ເປັນຜູ້ປະຕິບັດເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ

ອຸບາລີ ໃນການຮຽນວິໄນ ມີອານິສົງ ໕ ປະການນີ້ແລ

**ນັບປະຕິປັດສຳພະນະວັກທີ ໒ ຈົບ**

## ຫົວຂໍ້ປະຈຳວັກ

ພິກຂຸຕ້ອງອາບັດທີ່ເປັນເຫດໃຫ້ຖືກລົງໂທດກ່າວຕຳໜິກຳ
ສົງບໍ່ຄວນລະງັບກຳພິກຂຸຜູ້ເປັນອະລັດຊີ
ພິກຂຸຜູ້ເຂົ້າສົງຄາມ ພິກຂຸຜູ້ມີຄວາມຄິດມືດມົນ
ເປັນຜູ້ອວດອ້າງ ກ່າວຂົ່ມຂູ່ ຍ່ອມບໍ່ເປັນທີ່ປາຖະໜາ
ອານິສົງການຮຽນວິໄນ

**ພຣະບັນຍັດຄູ່ທີ ໑ ຈົບ**

## ๓. ໂວຫາຣະວັກ

## ໝວດວ່າດ້ວຍການໃຊ້ໂວຫານ

## ພິກຂຸບໍ່ຄວນເວົ້າໃນສົງ

[๔๘๔] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງທໍ່ໃດ?ນໍແລ ບໍ່ຄວນ ເວົ້າໃນສົງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ๕ ບໍ່ຄວນເວົ້າໃນສົງ ອົງ ๕ ຄື

໑. ບໍ່ຮູ້ອາບັດ
໒. ບໍ່ຮູ້ສະມຸດຖານອາບັດ
໓. ບໍ່ຮູ້ປະໂຍຄະອາບັດ
໔. ບໍ່ຮູ້ຄວາມລະງັບອາບັດ
໕. ບໍ່ສະຫຼາດໃນການວິນິດໄສອາບັດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ๕ ນີ້ແລ ບໍ່ຄວນເວົ້າໃນສົງ

## ພິກຂຸຄວນເວົ້າໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ๕ ຄວນເວົ້າໃນສົງ ອົງ ๕ ຄື

໑. ຮູ້ອາບັດ
໒. ຮູ້ສະມຸດຖານອາບັດ
໓. ຮູ້ປະໂຍຄະອາບັດ

໔. ຮູ້ຄວາມລະງັບອາບັດ

໕. ສະຫຼາດໃນການວິນິດໄສອາບັດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນເວົ້າໃນສົງ

## ພິກຂຸບໍ່ຄວນເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນເວົ້າໃນສົງ ອົງ ໕ ຄື

໑. ບໍ່ຮູ້ອະທິກອນ

໒. ບໍ່ຮູ້ສະມຸດຖານອະທິກອນ

໓. ບໍ່ຮູ້ປະໂຍຄອະທິກອນ

໔. ບໍ່ຮູ້ຄວາມລະງັບອະທິກອນ

໕. ບໍ່ສະຫຼາດໃນການວິນິດໄສອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນເວົ້າໃນສົງ

## ພິກຂຸຄວນເວົ້າໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນເວົ້າໃນສົງ ອົງ ໕ ຄື

໑. ຮູ້ອະທິກອນ

໒. ຮູ້ສະມຸດຖານອະທິກອນ

໓. ຮູ້ປະໂຍຄະອະທິກອນ

໔. ຮູ້ຄວາມລະງັບອະທິກອນ

໕. ສະຫຼາດໃນການວິນິດໄສອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນເວົ້າໃນສົງ

## ພິກຂຸບໍ່ຄວນເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນເວົ້າໃນສົງ ອົງ ໕ ຄື

໑. ກ່າວຂົ່ມຂູ່

໒. ກ່າວບໍ່ໃຫ້ໂອກາດຜູ້ອື່ນ

໓. ບໍ່ໂຈດຕາມອາບັດ ໃນທຳແລະວິໄນອັນສົມຄວນ

໔. ບໍ່ປັບຕາມອາບັດ ໃນທຳແລະວິໄນອັນສົມຄວນ

໕. ບໍ່ຊີ້ແຈ່ງຕາມຄວາມເຫັນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນເວົ້າໃນສົງ

## ພິກຂຸຄວນເວົ້າໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນເວົ້າໃນສົງ ອົງ ໕ ຄື

໑. ບໍ່ກ່າວຂົ່ມຂູ່

໒. ກ່າວໃຫ້ໂອກາດຜູ້ອື່ນ

໓. ໂຈດຕາມອາບັດ ໃນທຳແລະວິໄນອັນສົມຄວນ

໔. ປັບຕາມອາບັດ ໃນທຳແລະວິໄນອັນສົມຄວນ

໕. ຊີ້ແຈ່ງຕາມຄວາມເຫັນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນເວົ້າໃນສົງ

## ພິກຂຸບໍ່ຄວນເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນເວົ້າໃນສົງ ອົງ ໕ ຄື

໑. ບໍ່ຮູ້ອາບັດແລະອະນາບັດ

໒. ບໍ່ຮູ້ອາບັດເບົາແລະອາບັດໜັກ

໓. ບໍ່ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ

໔. ບໍ່ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ

໕. ບໍ່ຮູ້ອາບັດທີ່ເຮັດຄືນໄດ້ແລະເຮັດຄືນບໍ່ໄດ້

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນເວົ້າໃນສົງ

## ພິກຂຸຄວນເວົ້າໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນເວົ້າໃນສົງ ອົງ ໕ ຄື

໑. ຮູ້ອາບັດແລະອະນາບັດ

໒. ຮູ້ອາບັດເບົາແລະອາບັດໜັກ

໓. ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ

໔. ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ

໕. ຮູ້ອາບັດທີ່ເຮັດຄືນໄດ້ແລະເຮັດຄືນບໍ່ໄດ້

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນເວົ້າໃນສົງ

ພິກຂຸບໍ່ຄວນເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນເວົ້າໃນສົງ ອົງ ໕ ຄື

໑. ບໍ່ຮູ້ກຳ

໒. ບໍ່ຮູ້ການເຮັດກຳ

໓. ບໍ່ຮູ້ວັດຖຸຂອງກຳ

໔. ບໍ່ຮູ້ຂໍ້ວັດປະຕິບັດຂອງກຳ

໕. ບໍ່ຮູ້ຄວາມລະງັບກຳ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນເວົ້າໃນສົງ

## ພິກຂຸຄວນເວົ້າໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນເວົ້າໃນສົງ ອົງ ໕ ຄື

໑. ຮູ້ກຳ
໒. ຮູ້ວັດຖຸຂອງກຳ
໓. ຮູ້ຄວາມລະງັບກຳ
໔. ຮູ້ການເຮັດກຳ
໕. ຮູ້ຂໍ້ວັດປະຕິບັດຂອງກຳ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນເວົ້າໃນສົງ

## ພິກຂຸບໍ່ຄວນເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນເວົ້າໃນສົງ ອົງ ໕ ຄື

໑. ບໍ່ຮູ້ວັດຖຸ
໒. ບໍ່ຮູ້ບັນຍັດ
໓. ບໍ່ຮູ້ຄຳເວົ້າອັນກ່ຽວເນື່ອງກັນ
໔. ບໍ່ຮູ້ນິທານ
໕. ບໍ່ຮູ້ບົດທີ່ຕົກຫຼົ່ນໃນພາຍຫຼັງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນເວົ້າໃນສົງ

## ພິກຂຸຄວນເວົ້າໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນເວົ້າໃນສົງ ອົງ ໕ ຄື

໑. ຮູ້ວັດຖຸ
໒. ຮູ້ບັນຍັດ
໓. ຮູ້ຄຳເວົ້າອັນກ່ຽວເນື່ອງກັນ
໔. ຮູ້ນິທານ
໕. ຮູ້ບົດທີ່ຕົກຫຼົ່ນໃນພາຍຫຼັງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນເວົ້າໃນສົງ

## ພິກຂຸບໍ່ຄວນເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນເວົ້າໃນສົງ ອົງ ໕ ຄື

໑. ລຳອຽງຍ້ອນຮັກ
໒. ລຳອຽງຍ້ອນຫຼົງ
໓. ເປັນອະລັດຊີ
໔. ລຳອຽງຍ້ອນຊັງ
໕. ລຳອຽງຍ້ອນຢ້ານ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນເວົ້າໃນສົງ

## ພິກຂຸຄວນເວົ້າໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນເວົ້າໃນສົງ ອົງ ໕ ຄື
໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ເປັນລັດຊີ
ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນເວົ້າໃນສົງ

## ພິກຂຸບໍ່ຄວນເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນເວົ້າໃນສົງ ອົງ ໕ ຄື
໑. ລຳອຽງຍ້ອນຮັກ
໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ
໔. ລຳອຽງຍ້ອນຢ້ານ
໕. ບໍ່ສະຫຼາດໃນພຣະວິໄນ
ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນເວົ້າໃນສົງ

## ພິກຂຸຄວນເວົ້າໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນເວົ້າໃນສົງ ອົງ ໕ ຄື
໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ສະຫຼາດໃນພຣະວິໄນ
ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນເວົ້າໃນສົງ

## ພິກຂຸບໍ່ຄວນເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນເວົ້າໃນສົງ ອົງ ໕ ຄື
໑. ບໍ່ຮູ້ຍັດຕິ
໒. ບໍ່ຮູ້ການເຮັດຍັດຕິ
໓. ບໍ່ຮູ້ອະນຸສາວະນາແຫ່ງຍັດຕິ
໔. ບໍ່ຮູ້ສະມະຖະແຫ່ງຍັດຕິ
໕. ບໍ່ຮູ້ຄວາມລະງັບແຫ່ງຍັດຕິ
ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນເວົ້າໃນສົງ

## ພິກຂຸຄວນເວົ້າໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນເວົ້າໃນສົງ ອົງ ໕ ຄື

໑. ຮູ້ຍັດຕິ
໒. ຮູ້ການເຮັດຍັດຕິ
໓. ຮູ້ອະນຸສາວະນາແຫ່ງຍັດຕິ
໔. ຮູ້ສະມະຖະແຫ່ງຍັດຕິ
໕. ຮູ້ຄວາມລະງັບແຫ່ງຍັດຕິ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນເວົ້າໃນສົງ

## ພິກຂຸບໍ່ຄວນເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນເວົ້າໃນສົງ ອົງ ໕ ຄື

໑. ບໍ່ຮູ້ພຣະສູດ
໒. ບໍ່ຮູ້ຂໍ້ອະນຸໂລມພຣະສູດ
໓. ບໍ່ຮູ້ພຣະວິໄນ
໔. ບໍ່ຮູ້ຂໍ້ອະນຸໂລມພຣະວິໄນ
໕. ບໍ່ສະຫຼາດໃນຖານະອັນຄວນແລະຖານະອັນບໍ່ຄວນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນເວົ້າໃນສົງ

## ພິກຂຸຄວນເວົ້າໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນເວົ້າໃນສົງ ອົງ ໕ ຄື

໑. ຮູ້ພຣະສູດ
໒. ຮູ້ຂໍ້ອະນຸໂລມພຣະສູດ
໓. ຮູ້ພຣະວິໄນ
໔. ຮູ້ຂໍ້ອະນຸໂລມພຣະວິໄນ
໕. ສະຫຼາດໃນຖານະອັນຄວນແລະຖານະອັນບໍ່ຄວນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນເວົ້າໃນສົງ

## ພິກຂຸບໍ່ຄວນເວົ້າໃນສົງ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນເວົ້າໃນສົງ ອົງ ໕ ຄື

໑. ບໍ່ຮູ້ພຣະທຳ
໒. ບໍ່ຮູ້ຂໍ້ອະນຸໂລມພຣະທຳ
໓. ບໍ່ຮູ້ພຣະວິໄນ
໔. ບໍ່ຮູ້ຂໍ້ອະນຸໂລມພຣະວິໄນ
໕. ບໍ່ສະຫຼາດໃນຄຳຕົ້ນແລະຄຳຫຼັງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນເວົ້າໃນສົງ

## ພິກຂຸຄວນເວົ້າໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນເວົ້າໃນສົງ ອົງ ໕ ຄື

໑. ຮູ້ພຣະທຳ
໒. ຮູ້ພຣະວິໄນ
໓. ຮູ້ຂໍ້ອະນຸໂລມພຣະທຳ
໔. ຮູ້ຂໍ້ອະນຸໂລມພຣະວິໄນ
໕. ສະຫຼາດໃນຄຳຕົ້ນແລະຄຳຫຼັງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນເວົ້າໃນສົງ"

**ໂວຫາຣະວັກທີ ໒ ຈົບ**

## ຫົວຂໍ້ປະຈຳວັກ

ພິກຂຸບໍ່ຮູ້ອາບັດ ບໍ່ຮູ້ອະທິກອນ ກ່າວຂົ່ມຂູ່ ບໍ່ຄວນເວົ້າໃນສົງ
ພິກຂຸຮູ້ອາບັດ ກຳ ວັດຖຸ ຄວນເວົ້າໃນສົງ
ພິກຂຸເປັນອະລັດຊີ ບໍ່ສະຫຼາດໃນຍັດຕິ ບໍ່ຮູ້ພຣະສູດ
ບໍ່ຮູ້ພຣະທຳບໍ່ຄວນເວົ້າໃນສົງ
ຈັດເປັນວັກທີ ໒ ແລ

# ໔. ທິດຖາວິກຳມະວັກ

## ໝວດວ່າດ້ວຍການເປີດເຜີຍຄວາມເຫັນ

### ຄວາມເຫັນທີ່ບໍ່ຖືກຕ້ອງຕາມທຳ

[໔໒໕] ທ່ານພຣະອຸບາລີທູນຖາມວ່າ "ການເປີດເຜີຍຄວາມເຫັນທີ່ບໍ່ຖືກຕ້ອງຕາມທຳມີທີ່ໃດ? ນໍແລ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ການເປີດເຜີຍຄວາມເຫັນທີ່ບໍ່ຖືກຕ້ອງຕາມທຳມີ ໕ ຢ່າງ ຄື

໑. ການເປີດເຜີຍຄວາມເຫັນໃນອະນາບັດ

໒. ການເປີດເຜີຍຄວາມເຫັນໃນອາບັດທີ່ເປັນອະເທສະນາຄາມິນີ

໓. ການເປີດເຜີຍຄວາມເຫັນໃນອາບັດທີ່ສະແດງແລ້ວ

໔. ການເປີດເຜີຍຄວາມເຫັນພ້ອມກັນ ໔-໕ ອົງ

໕. ການເປີດເຜີຍຄວາມເຫັນດ້ວຍນຶກໃນໃຈ

ອຸບາລີ ການເປີດເຜີຍຄວາມເຫັນ ໕ ຢ່າງນີ້ແລ ທີ່ບໍ່ຖືກຕ້ອງຕາມທຳ

### ຄວາມເຫັນທີ່ຊອບທຳ

ອຸບາລີ ການເປີດເຜີຍຄວາມເຫັນທີ່ຊອບທຳມີ ໕ ຢ່າງ ຄື

໑. ການເປີດເຜີຍຄວາມເຫັນໃນອາບັດ

໒. ການເປີດເຜີຍຄວາມເຫັນໃນອາບັດທີ່ເປັນເທສະນາຄາມິນີ

໓. ການເປີດເຜີຍຄວາມເຫັນໃນອາບັດທີ່ຍັງບໍ່ໄດ້ສະແດງ

໔. ການບໍ່ເປີດເຜີຍຄວາມເຫັນພ້ອມກັນ ໔-໕ ອົງ

໕. ການບໍ່ເປີດເຜີຍຄວາມເຫັນດ້ວຍນຶກໃນໃຈ

ອຸບາລີ ການເປີດເຜີຍຄວາມເຫັນ ໕ ຢ່າງນີ້ແລ ທີ່ຊອບທຳ

### ຄວາມເຫັນທີ່ບໍ່ຖືກຕ້ອງຕາມທຳ ອີກໄນໜຶ່ງ

ອຸບາລີ ການເປີດເຜີຍຄວາມເຫັນທີ່ບໍ່ຖືກຕ້ອງຕາມທຳແມ່ນອື່ນອີກ ໕ ຢ່າງ ຄື

໑. ການເປີດເຜີຍຄວາມເຫັນໃນສຳນັກພິກຂຸນານາສັງວາດ

໒. ການເປີດເຜີຍຄວາມເຫັນໃນສຳນັກພິກຂຸຜູ້ຢູ່ໃນສີມາຕ່າງກັນ

໓. ການເປີດເຜີຍຄວາມເຫັນໃນສຳນັກພິກຂຸບໍ່ແມ່ນປະກະຕັດຕະ

໔. ການເປີດເຜີຍຄວາມເຫັນພ້ອມກັນ ໔-໕ ອົງ

໕. ການເປີດເຜີຍຄວາມເຫັນດ້ວຍນຶກໃນໃຈ

ອຸບາລີ ການເປີດເຜີຍຄວາມເຫັນ ໕ ຢ່າງນີ້ແລ ທີ່ບໍ່ຖືກຕ້ອງຕາມທຳ

## ຄວາມເຫັນທີ່ຊອບທຳ

ອຸບາລີ ການເປີດເຜີຍຄວາມເຫັນທີ່ຊອບທຳນີ້ມີ ໕ ຢ່າງ ຄື

໑. ການເປີດເຜີຍຄວາມເຫັນໃນສຳນັກພິກຂຸສະມານະສັງວາດ

໒. ການເປີດເຜີຍຄວາມເຫັນໃນສຳນັກພິກຂຸຜູ້ຢູ່ໃນສີມາດຽວກັນ

໓. ການເປີດເຜີຍຄວາມເຫັນໃນສຳນັກພິກຂຸຜູ້ເປັນປະກະຕັດຕະ

໔. ການບໍ່ເປີດເຜີຍຄວາມເຫັນພ້ອມກັນ ໔-໕ ອົງ

໕. ການບໍ່ເປີດເຜີຍຄວາມເຫັນດ້ວຍນຶກໃນໃຈ

ອຸບາລີ ການເປີດເຜີຍຄວາມເຫັນ ໕ ຢ່າງນີ້ແລ ທີ່ຊອບທຳ”

## ການຮັບປະເຄນທີ່ໃຊ້ບໍ່ໄດ້

[໔໒໓] ທ່ານພຣະອຸບາລີທູນຖາມວ່າ “ການຮັບປະເຄນທີ່ບໍ່ຖືກຕ້ອງ ມີທໍ່ໃດ?ນໍແລ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ອຸບາລີ ການຮັບປະເຄນທີ່ໃຊ້ບໍ່ໄດ້ມີ ໕ ຢ່າງ ຄື

໑. ຂອງເຂົາໃຫ້ດ້ວຍກາຍ ບໍ່ຮັບປະເຄນດ້ວຍກາຍ

໒. ຂອງເຂົາໃຫ້ດ້ວຍກາຍ ບໍ່ຮັບປະເຄນດ້ວຍຂອງເນື່ອງດ້ວຍກາຍ

໓. ຂອງເຂົາໃຫ້ດ້ວຍຂອງເນື່ອງດ້ວຍກາຍ ບໍ່ຮັບປະເຄນດ້ວຍກາຍ

໔. ຂອງເຂົາໃຫ້ດ້ວຍຂອງເນື່ອງດ້ວຍກາຍ ບໍ່ຮັບປະເຄນດ້ວຍຂອງເນື່ອງດ້ວຍກາຍ

໕. ຂອງເຂົາໃຫ້ດ້ວຍການໂຍນໃຫ້ ບໍ່ຮັບປະເຄນດ້ວຍກາຍຫຼືດ້ວຍຂອງເນື່ອງດ້ວຍກາຍ

ອຸບາລີ ການຮັບປະເຄນ ໕ ຢ່າງນີ້ແລ ໃຊ້ບໍ່ໄດ້

## ການຮັບປະເຄນທີ່ໃຊ້ໄດ້

ອຸບາລີ ການຮັບປະເຄນທີ່ໃຊ້ໄດ້ນີ້ມີ ໕ ຢ່າງ ຄື

໑. ຂອງເຂົາໃຫ້ດ້ວຍກາຍ ຮັບປະເຄນດ້ວຍກາຍ

໒. ຂອງເຂົາໃຫ້ດ້ວຍກາຍ ຮັບປະເຄນດ້ວຍຂອງເນື່ອງດ້ວຍກາຍ

໓. ຂອງເຂົາໃຫ້ດ້ວຍຂອງເນື່ອງດ້ວຍກາຍ ຮັບປະເຄນດ້ວຍກາຍ

໔. ຂອງເຂົາໃຫ້ດ້ວຍຂອງເນື່ອງດ້ວຍກາຍຮັບປະເຄນດ້ວຍຂອງເນື່ອງດ້ວຍກາຍ

໕. ຂອງເຂົາໃຫ້ດ້ວຍການໂຍນໃຫ້ ຮັບປະເຄນດ້ວຍກາຍຫຼືດ້ວຍຂອງເນື່ອງດ້ວຍກາຍ

ອຸບາລີ ການຮັບປະເຄນ ໕ ຢ່າງນີ້ແລ ໃຊ້ໄດ້"

## ຂອງທີ່ບໍ່ເປັນເດືອນ

[໔໘໗] ທ່ານພຣະອຸບາລີທູນຖາມວ່າ "ຂອງທີ່ບໍ່ເປັນເດືອນມີທໍ່ໃດ?ນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ຂອງທີ່ບໍ່ເປັນເດືອນມີ ໕ ຢ່າງ ຄື

໑. ຂອງທີ່ພິກຂຸຍັງບໍ່ໄດ້ເຮັດໃຫ້ເປັນ

໒. ຂອງທີ່ພິກຂຸຍັງບໍ່ໄດ້ຮັບປະເຄນກັບປິຍະ

໓. ຂອງທີ່ພິກຂຸຍັງບໍ່ໄດ້ຍົກຂຶ້ນສົ່ງໃຫ້

໔. ຂອງທີ່ຢູ່ນອກຫັດຖະບາດ

໕. ຂອງທີ່ພິກຂຸຍັງບໍ່ໄດ້ກ່າວວ່າ ທັງໝົດນັ້ນພໍແລ້ວ

ອຸບາລີ ຂອງທີ່ບໍ່ເປັນເດືອນນີ້ມີ ໕ ຢ່າງແລ

## ຂອງທີ່ເປັນເດືອນ

ອຸບາລີ ຂອງທີ່ເປັນເດືອນມີ ໕ ຢ່າງ ຄື

໑. ຂອງທີ່ພິກຂຸເຮັດໃຫ້ເປັນກັບປິຍະແລ້ວ

໒. ຂອງທີ່ພິກຂຸຮັບປະເຄນແລ້ວ

໓. ຂອງທີ່ພິກຂຸຍົກຂຶ້ນສົ່ງໃຫ້ແລ້ວ

໔. ຂອງທີ່ຢູ່ໃນຫັດຖະບາດ

໕. ຂອງທີ່ພິກຂຸກ່າວວ່າ ທັງໝົດນັ້ນພໍແລ້ວ

ອຸບາລີ ຂອງທີ່ເປັນເດືອນນີ້ມີ ໕ ຢ່າງແລ"

## ການຫ້າມພັດ

[໔໘໘] ທ່ານພຣະອຸບາລີທູນຖາມວ່າ "ການຫ້າມພັດຍ່ອມຜາກົດດ້ວຍອາການທໍ່ໃດ? ນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີການຫ້າມພັດຍ່ອມຜາກົດດ້ວຍອາການ ໕ ຢ່າງ ຄື

໑. ພິກຂຸກຳລັງສັນ

໒. ທາຍົກນຳໂພຊະນະມາຖວາຍ

໓. ທາຍົກຢູ່ໃນຫັດຖະບາດ ໔. ທາຍົກນ້ອມຂອງຖວາຍ

໕. ພິກຂຸບອກຫ້າມ

ອຸບາລີ ການຫ້າມພັດຍ່ອມຜາກົດດ້ວຍອາການ ໕ ຢ່າງນີ້ແລ"

## ປະຕິນຍາຕະກະຣະນະທີ່ບໍ່ຖືກຕ້ອງຕາມທຳ

[໔໘໙] ທ່ານພຣະອຸບາລີທູນຖາມວ່າ "ປະຕິນຍາຕະກະຣະນະທີ່ບໍ່ຖືກຕ້ອງຕາມທຳມີທໍ່ໃດນໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ປະຕິນຍາຕະກະຣະນະທີ່ບໍ່ຖືກຕ້ອງຕາມທຳນີ້ມີ ໕ ຢ່າງ ຄື

໑. ພິກຂຸຕ້ອງອາບັດປາຣາຊິກ ຖືກໂຈດດ້ວຍອາບັດປາຣາຊິກ ແຕ່ປະຕິຍານວ່າຕ້ອງອາບັດສັງຄາທິເສດ ສົງປັບອາບັດສັງຄາທິເສດພິກຂຸນັ້ນ ຊື່ວ່າ ປະຕິນຍາຕະກະຣະນະບໍ່ຊອບທຳ

໒. ພິກຂຸຕ້ອງອາບັດປາຣາຊິກ ຖືກໂຈດດ້ວຍອາບັດປາຣາຊິກ ແຕ່ປະຕິຍານວ່າຕ້ອງອາບັດປາຈິດຕີ ສົງປັບອາບັດປາຈິດຕີພິກຂຸນັ້ນ ຊື່ວ່າປະຕິນຍາຕະກະຣະນະບໍ່ຊອບທຳ

໓. ພິກຂຸຕ້ອງອາບັດປະຕິເທສະນີຍະ ຖືກໂຈດດ້ວຍອາບັດປະຕິເທສະນີຍະ ແຕ່ປະຕິຍານວ່າຕ້ອງອາບັດທຸກກົດ ສົງປັບອາບັດທຸກກົດພິກຂຸນັ້ນ ຊື່ວ່າ ປະຕິນຍາຕະກະຣະນະບໍ່ຊອບທຳ

໔. ພິກຂຸຕ້ອງອາບັດສັງຄາທິເສດ ປາຈິດຕີ ປະຕິເທສະນີຍະ ທຸກກົດ ຖືກ ໂຈດດ້ວຍອາບັດທຸກກົດ ແຕ່ປະຕິຍານວ່າຕ້ອງອາບັດປາຣາຊິກ ສົງປັບອາບັດປາຣາຊິກພິກຂຸນັ້ນ ຊື່ວ່າປະຕິນຍາຕະກະຣະນະບໍ່ຊອບທຳ

໕. ພິກຂຸຕ້ອງອາບັດທຸກກົດ ຖືກໂຈດດ້ວຍອາບັດທຸກກົດ ແຕ່ປະຕິຍານວ່າ ຕ້ອງອາບັດສັງຄາທິເສດ ປາຈິດຕີ ປະຕິເທສະນີຍະ ສົງປັບອາບັດ ປະຕິເທສະນີຍະພິກຂຸນັ້ນ ຊື່ວ່າປະຕິນຍາຕະກະຣະນະບໍ່ຊອບທຳ

ອຸບາລີ ປະຕິນຍາຕະກະຣະນະ ໕ ຢ່າງນີ້ແລ ບໍ່ຊອບທຳ

## ປະຕິນຍາຕະກະຣະນະທີ່ຊອບທຳ

ອຸບາລີ ປະຕິນຍາຕະກະຣະນະທີ່ຊອບທຳນີ້ມີ ໕ ຢ່າງ ຄື

໑. ພິກຂຸຕ້ອງອາບັດປາຣາຊິກ ຖືກໂຈດດ້ວຍອາບັດປາຣາຊິກ ປະຕິຍານວ່າຕ້ອງອາບັດປາຣາຊິກ ສົງປັບອາບັດປາຣາຊິກພິກຂຸນັ້ນ ຊື່ວ່າປະຕິນຍາຕະກະຣະນະທີ່ຊອບທຳ

໒. ພິກຂຸຕ້ອງອາບັດສັງຄາທິເສດ ຖືກໂຈດດ້ວຍອາບັດສັງຄາທິເສດ ປະຕິຍານວ່າຕ້ອງອາບັດສັງຄາທິເສດ ສົງປັບອາບັດສັງຄາທິເສດພິກຂຸນັ້ນ ຊື່ວ່າ ປະຕິນຍາຕະກະຣະນະທີ່ຊອບທຳ

໓. ພິກຂຸຕ້ອງອາບັດປາຈິດຕີ ຖືກໂຈດດ້ວຍອາບັດປາຈິດຕີ ປະຕິຍານວ່າຕ້ອງອາບັດປາຈິດຕີ ສົງປັບອາບັດປາຈິດຕີພິກຂຸນັ້ນ ຊື່ວ່າປະຕິນຍາຕະກະຣະນະທີ່ຊອບທຳ

໔. ພິກຂຸຕ້ອງອາບັດປະຕິເທສະນີຍະ ຖືກໂຈດດ້ວຍອາບັດປະຕິເທສະນີຍະ ປະຕິຍານວ່າຕ້ອງອາບັດປະຕິເທສະນີຍະ ສົງປັບອາບັດປະຕິເທສະນີຍະ ພິກຂຸນັ້ນ ຊື່ວ່າປະຕິນຍາຕະກະຣະນະທີ່ຊອບທຳ

໕. ພິກຂຸຕ້ອງອາບັດທຸກກົດ ຖືກໂຈດດ້ວຍອາບັດທຸກກົດ ປະຕິຍານວ່າຕ້ອງອາບັດທຸກກົດ ສົງປັບອາບັດທຸກກົດພິກຂຸນັ້ນ ຊື່ວ່າປະຕິນຍາຕະກະຣະນະທີ່ຊອບທຳ

ອຸບາລີ ປະຕິນຍາຕະກະຣະນະ ໕ ຢ່າງນີ້ແລ ທີ່ຊອບທຳ

## ບໍ່ຄວນເຮັດໂອກາດ

[໔໓໐] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງທີ່ໃດ?ນໍແລ ຂໍໃຫ້ເຮັດໂອກາດ ສົງບໍ່ຄວນເຮັດໂອກາດ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຂໍໃຫ້ເຮັດໂອກາດ ສົງບໍ່ຄວນເຮັດໂອກາດ ອົງ ໕ ຄື

໑. ເປັນອະລັດຊີ

໒. ເປັນຄົນໂງ່ຈ້າ

໓. ບໍ່ແມ່ນປະກະຕັດຕະ

໔. ເປັນຜູ້ກ່າວປະສົງຈະໃຫ້ເຄື່ອນຈາກສາດສະໜາ

໕. ບໍ່ເປັນຜູ້ກ່າວປະສົງຈະໃຫ້ອອກຈາກອາບັດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຂໍໃຫ້ເຮັດໂອກາດ ສົງບໍ່ຄວນເຮັດໂອກາດ

## ຄວນເຮັດໂອກາດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຂໍໃຫ້ເຮັດໂອກາດ ສົງຄວນເຮັດໂອກາດ ອົງ ໕ ຄື

໑. ເປັນລັດຊີ

໒. ເປັນບັນດິດ

໓. ເປັນປະກະຕັດຕະ

໔. ເປັນຜູ້ກ່າວປະສົງຈະໃຫ້ອອກຈາກອາບັດ

໕. ບໍ່ເປັນຜູ້ກ່າວປະສົງຈະໃຫ້ເຄື່ອນຈາກສາດສະໜາ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຂໍໃຫ້ເຮັດໂອກາດ ສົງຄວນເຮັດໂອກາດ"

## ບໍ່ຄວນສົນທະນາວິໄນ

[໔໓໑] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸທັງຫຼາຍບໍ່ຄວນສົນທະນາວິໄນກັບພິກຂຸຜູ້ປະກອບດ້ວຍອົງທີ່ໃດ?ນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸທັງຫຼາຍບໍ່ຄວນສົນທະນາວິໄນກັບຜູ້ປະກອບ ດ້ວຍອົງ ໕ ອົງ ໕ ຄື

໑. ບໍ່ຮູ້ວັດຖຸ

໒. ບໍ່ຮູ້ນິທານ

໓. ບໍ່ຮູ້ພຣະບັນຍັດ

໔. ບໍ່ຮູ້ບົດທີ່ຕົກຫຼົ່ນໃນພາຍຫຼັງ

໕. ບໍ່ຮູ້ຄຳເວົ້າອັນກ່ຽວເນື່ອງກັນ

ອຸບາລີ ພິກຂຸທັງຫຼາຍບໍ່ຄວນສົນທະນາວິໄນກັບພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ

## ຄວນສົນທະນາວິໄນ

ອຸບາລີ ພິກຂຸທັງຫຼາຍຄວນສົນທະນາວິໄນກັບພິກຂຸຜູ້ປະກອບດ້ວຍອົງ ໕ ອົງ ໕ ຄື

໑. ຮູ້ວັດຖຸ

໒. ຮູ້ນິທານ

໓. ຮູ້ບັນຍັດ

໔. ຮູ້ບົດທີ່ຕົກຫຼົ່ນໃນພາຍຫຼັງ

໕. ຮູ້ຄຳເວົ້າອັນກ່ຽວເນື່ອງກັນ

ອຸບາລີ ພິກຂຸທັງຫຼາຍຄວນສົນທະນາວິໄນກັບພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ"

## ເຫດທີ່ຖາມບັນຫາ ໕ ຢ່າງ

[໔໓໒] ທ່ານພຣະອຸບາລີທູນຖາມວ່າ "ການຖາມບັນຫາມີທີ່ໃດ?ນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ການຖາມບັນຫານີ້ມີ ໕ ຢ່າງ ຄື

໑. ພິກຂຸຖາມບັນຫາຍ້ອນຄວາມເປັນຜູ້ໂງ່ຈ້າ ງົມງວາຍ

໒. ເປັນຜູ້ປາຖະໜາຊົ່ວຊາມ ຖືກຄວາມຢາກຄອບງຳ ຈຶ່ງຖາມບັນຫາ

໓. ຖາມບັນຫາຍ້ອນດູໝິ່ນ

໔. ເປັນຜູ້ບໍ່ປະສົງຈະຮູ້ຈຶ່ງຖາມບັນຫາ

໕. ຖາມບັນຫາດ້ວຍຄຳນຶງວ່າ ຖ້າເຮົາຖາມບັນຫາແລ້ວ ພິກຂຸຈັກພະຍາກອນໄດ້ຖືກຕ້ອງ ການພະຍາກອນດັ່ງນີ້ນັ້ນເປັນສິ່ງດີ ແຕ່ຖ້າເຮົາຖາມບັນຫາແລ້ວທ່ານຈັກພະຍາກອນບໍ່ຖືກຕ້ອງ ເຮົາກໍຈັກພະຍາກອນແກ່ທ່ານຢ່າງຖືກຕ້ອງ

ອຸບາລີ ການຖາມບັນຫາມີ ໕ ຢ່າງນີ້ແລ"

## ການອວດອ້າງມັກຜົນ

[໔໓໓] ທ່ານພຣະອຸບາລີທູນຖາມວ່າ "ການອວດອ້າງມັກຜົນມີທີ່ໃດ?ນໍແລ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ການອວດອ້າງມັກຜົນມີ ໕ ຢ່າງ ຄື

໑. ພິກຂຸອວດອ້າງມັກຜົນຍ້ອນຄວາມເປັນຜູ້ໂງ່ຈ້າ ງົມງວາຍ

໒. ເປັນຜູ້ປາຖະໜາຊົ່ວຊາມ ຖືກຄວາມຢາກຄອບງຳ ຈຶ່ງອວດອ້າງມັກຜົນ

໓. ອວດອ້າງມັກຜົນຍ້ອນວິກົນຈະລິດ ມີຈິດຟຸ້ງຊ່ານ

໔. ອວດອ້າງມັກຜົນຍ້ອນສຳຄັນວ່າໄດ້ບັນລຸ

໕. ອວດອ້າງມັກຜົນທີ່ເປັນຈິງ

ອຸບາລີ ການອວດອ້າງມັກຜົນມີ ໕ ຢ່າງນີ້ແລ"

## ວິສຸດທິ

[໔໓໔] ທ່ານພຣະອຸບາລີທູນຖາມວ່າ "ວິສຸດທິມີທີ່ໃດ?ນໍແລ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ວິສຸດທິນີ້ມີ ໕ ແບບ ຄື

໑. ຍົກນິທານຂຶ້ນສະແດງຈົບແລ້ວ ເພິ່ງສູດອຸດເທດທີ່ເຫຼືອດ້ວຍສຸຕະບົດ ນີ້ຈັດເປັນວິສຸດທິແບບທີ ໑

໒. ຍົກນິທານຂຶ້ນສະແດງ ຍົກປາຣາຊິກ ໔ ຂຶ້ນສະແດງຈົບແລ້ວເພິ່ງສູດອຸດເທດທີ່ເຫຼືອດ້ວຍສຸຕະບົດ ນີ້ເປັນວິສຸດທິແບບທີ ໒

໓. ຍົກນິທານຂຶ້ນສະແດງ ຍົກປາຣາຊິກ ໔ ຂຶ້ນສະແດງ ຍົກສັງຄາທິເສດ ໑໓ ຂຶ້ນສະແດງຈົບແລ້ວ ເພິ່ງສູດອຸດເທດທີ່ເຫຼືອດ້ວຍສຸຕະບົດ ນີ້ເປັນວິສຸດທິແບບທີ ໓

໔. ຍົກນິທານຂຶ້ນສະແດງ ຍົກປາຣາຊິກ ໔ ຂຶ້ນສະແດງ ຍົກສັງຄາທິເສດ ໑໓ ຂຶ້ນສະແດງ ຍົກອະນິຍະຕະ ໒ ຂຶ້ນສະແດງຈົບແລ້ວ ເພິ່ງສູດອຸດເທດທີ່ເຫຼືອດ້ວຍສຸຕະບົດ ນີ້ເປັນວິສຸດທິແບບທີ ໔

໕. ຍົກຂຶ້ນສະແດງໂດຍພິດສະດານທັງໝົດ ເປັນວິສຸດທິແບບທີ ໕

ອຸບາລີ ວິສຸດທິມີ ໕ ແບບນີ້ແລ"

## ໂພຊະນະ ໕

[໔໓໕] ທ່ານພຣະອຸບາລີທູນຖາມວ່າ "ໂພຊະນະມີທີ່ໃດ?ນໍແລ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ໂພຊະນະນີ້ມີ ໕ ຢ່າງ ຄື

໑. ເຂົ້າສຸກ
໒. ເຂົ້າໜົມແຫ້ງ
໓. ເຂົ້າໜົມສົດ
໔. ປາ
໕. ຊີ້ນ

ອຸບາລີ ໂພຊະນະມີ ໕ ຢ່າງນີ້ແລ"

**ທິດຖາວິກຳມະວັກທີ ໔ ຈົບ**

## ຫົວຂໍ້ປະຈຳວັກ

ການເປີດເຜີຍຄວາມເຫັນໃນອະນາບັດ ການເປີດເຜີຍຄວາມເຫັນໃນອາບັດ
ການຮັບປະເຄນ ຂອງທີ່ເປັນເງື່ອນ ການຫ້າມພັດ ປະຕິນຍາຕະກະຣະນະ
ການຂໍໂອກາດ ການສົນທະນາ ການຖາມບັນຫາ
ການອວດອ້າງມັກຜົນ ວິສຸດທິ ໂພຊະນະ

## ໕. ອັດຕາທານະວັກ

## ໝວດວ່າດ້ວຍການຮັບໜ້າທີ່ເປັນໂຈດ

## ຄຸນສົມບັດທີ່ຜູ້ໂຈດເພິ່ງພິຈາລະນາ

[໔໓໖] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາຄຸນສົມບັດພາຍໃນຕົນທີ່ໃດ? ຈຶ່ງຈະໂຈດຜູ້ອື່ນໄດ້ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາຄຸນສົມບັດພາຍໃນຕົນ ໕ ຢ່າງແລ້ວຈຶ່ງຈະໂຈດຜູ້ອື່ນ ທຳ ໕ ຢ່າງ ຄື

໑. ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ວ່າ ເຮົາມີຄວາມປະພຶດທາງກາຍບໍລິສຸດບໍນໍ ເຮົາປະກອບດ້ວຍຄວາມປະພຶດ ທາງກາຍທີ່ບໍລິສຸດ ບໍ່ເສຍຫາຍ ບໍ່ບົກຜ່ອງ ຄຸນສົມບັດຂໍ້ນີ້ເຮົາມີຢູ່ບໍ່ມີນໍ ຖ້າພິກຂຸບໍ່ແມ່ນຜູ້ມີຄວາມປະພຶດທາງກາຍບໍລິສຸດ ປະກອບດ້ວຍຄວາມປະພຶດທາງກາຍທີ່ບໍລິສຸດ ບໍ່ເສຍຫາຍ ບໍ່ບົກຜ່ອງ ພິກຂຸຜູ້ໂຈດນັ້ນຍ່ອມຖືກຕອບໂຕ້ວ່າ ເຊີນ

ທ່ານຕັ້ງໃຈຮູ້ຄວາມປະພຶດ ທາງກາຍສາກ່ອນເທີ້ນ ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ແນວນີ້

໔. ອັນໜຶ່ງ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ ເຮົາມີຄວາມປະພຶດທາງວາຈາບໍລິສຸດບໍ່ນໍ ເຮົາປະກອບດ້ວຍຄວາມປະພຶດທາງວາຈາບໍລິສຸດ ບໍ່ເສຍຫາຍ ບໍ່ບົກຜ່ອງ ຄຸນສົມບັດ ຂໍ້ນີ້ເຮົາມີບໍ່ມີນໍ ຖ້າພິກຂຸບໍ່ແມ່ນຜູ້ມີຄວາມປະພຶດທາງວາຈາບໍລິສຸດ ປະກອບດ້ວຍຄວາມປະພຶດທາງວາຈາບໍລິສຸດ ບໍ່ເສຍຫາຍ ບໍ່ບົກຜ່ອງ ພິກຂຸຜູ້ໂຈດນັ້ນຍ່ອມຖືກຕອບໂຕ້ວ່າ ເຊີນທ່ານຕັ້ງໃຈຮູ້ ຄວາມປະພຶດທາງວາຈາສາກ່ອນເທີ້ນ ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບ ໂຕ້ແນວນີ້

໓. ອັນໜຶ່ງ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ ເຮົາມີເມດຕາຈິດ ບໍ່ອາຄາດພະຍາບາດເພື່ອນພົມມະຈາຣີບໍ່ນໍ ຄຸນສົມບັດ ຂໍ້ນີ້ເຮົາມີບໍ່ມີນໍ ຖ້າພິກຂຸບໍ່ແມ່ນຜູ້ມີເມດຕາຈິດ ບໍ່ອາຄາດ ພະຍາບາດເພື່ອນພົມມະຈາຣີ ພິກຂຸຜູ້ໂຈດນັ້ນຍ່ອມຖືກຕອບໂຕ້ວ່າ ເຊີນ ທ່ານມີເມດຕາຈິດໃນເພື່ອນພົມມະຈາຣີສາກ່ອນເທີ້ນ ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ແນວນີ້

໔. ອັນໜຶ່ງ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ ເຮົາເປັນພະຫູສູດ ຊົງສຸຕະ ມີການສັ່ງສົມສຸຕະບໍ່ນໍ ເຮົາໄດ້ສະດັບຫຼາຍ ຊົງຈຳໄດ້ແມ່ນຍຳ ຄ່ອງປາກ ຂຶ້ນໃຈ ຮູ້ແຈ້ງດ້ວຍປັນຍາເຊິ່ງທຳງາມເບື້ອງຕົ້ນ ງາມທ່າມກາງ ງາມໃນບ່ອນສຸດ ປະກາດພົມມະຈັນ ພ້ອມທັງອັດຖະ ພ້ອມທັງພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນບໍ່ນໍ ຄຸນສົມບັດຂໍ້ນີ້ເຮົາມີບໍ່ມີນໍ ຖ້າພິກຂຸບໍ່ໄດ້ເປັນພະຫູສູດ ຊົງສຸຕະ ມີການສັ່ງສົມສຸຕະ ໄດ້ສະດັບຫຼາຍ ຊົງຈຳໄດ້ແມ່ນຍຳ ຄ່ອງປາກ ຂຶ້ນໃຈ ຮູ້ແຈ້ງດ້ວຍປັນຍາເຊິ່ງທຳງາມເບື້ອງຕົ້ນ ງາມທ່າມກາງ ງາມໃນບ່ອນສຸດ ປະກາດພົມມະຈັນ ພ້ອມທັງອັດຖະ ພ້ອມທັງພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ວ່າ ເຊີນທ່ານສຶກສາພຣະປະຣິຍັດສາກ່ອນເທີ້ນ ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ແນວນີ້

໕. ອັນໜຶ່ງ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ ເຮົາຊົງຈຳປາຕິໂມກທັງສອງໄດ້ແມ່ນຍຳໂດຍພິດສະດານ ຈຳແນກຖືກຕ້ອງ ຈັດລະບຽບຖືກຕ້ອງ ວິນິດໄສຖືກຕ້ອງໂດຍສຸດຕະໂດຍອະນຸພະຍັນຊະນະບໍ່ນໍ ຄຸນສົມບັດຂໍ້ນີ້ເຮົາມີບໍ່ມີນໍ ຖ້າພິກຂຸບໍ່ແມ່ນຜູ້ຊົງຈຳປາຕິໂມກທັງສອງໄດ້ແມ່ນຍຳໂດຍພິດສະດານ ຈຳແນກຖືກຕ້ອງ ຈັດລະບຽບຖືກຕ້ອງ ວິນິດໄສຖືກຕ້ອງໂດຍສຸດຕະໂດຍອະນຸພະຍັນຊະນະ(ຕາມຂໍ້ ຕາມອັກສອນ) ພິກຂຸ ຜູ້ໂຈດນັ້ນ

ຍ່ອມຈະຖືກຕອບໂຕ້ວ່າ ເຊີນທ່ານສຶກສາພຣະວິໄນໃຫ້ຊ່ຽວຊານ ສາກ່ອນ
ເທີ້ນ ພິກຂຸຜູ້ໂຈດນັ້ນຍ່ອມຈະຖືກຕອບໂຕ້ແນວນີ້

ອຸບາລີ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາຄຸນສົມບັດພາຍໃນຕົນ ໕ ຢ່າງ ນີ້ ຈຶ່ງໂຈດຜູ້ອື່ນ

## ຄຸນສົມບັດທີ່ໂຈດເພິ່ງຕັ້ງໄວ້ໃນຕົນ

[໔໓໗] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງຕັ້ງຄຸນສົມບັດທີ່ໃດ?ໄວ້ໃນຕົນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ເພິ່ງຕັ້ງຄຸນສົມບັດ ໕ ຢ່າງໄວ້ໃນຕົນ ຄຸນສົມບັດ ໕ ຢ່າງ ຄື

໑. ເຮົາຈັກໂຈດໂດຍການທີ່ຄວນ ຈັກບໍ່ໂຈດໂດຍການບໍ່ຄວນ

໒. ເຮົາຈັກໂຈດດ້ວຍເລື້ອງຈິງ ຈັກບໍ່ໂຈດດ້ວຍເລື້ອງບໍ່ຈິງ

໓. ເຮົາຈັກໂຈດດ້ວຍຄຳສຸພາບ ຈັກບໍ່ໂຈດດ້ວຍຄຳຫຍາບ

໔. ເຮົາຈັກໂຈດດ້ວຍເລື້ອງທີ່ເປັນປະໂຫຍດ ຈັກບໍ່ໂຈດດ້ວຍເລື້ອງທີ່ບໍ່ເປັນປະໂຫຍດ

໕. ເຮົາຈັກມີເມດຕາຈິດໂຈດ ຈັກບໍ່ມຸ້ງຮ້າຍໂຈດ

ອຸບາລີ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ຄວນຕັ້ງຄຸນສົມບັດ ໕ ປະການນີ້ໄວ້ໃນຕົນຈຶ່ງໂຈດຜູ້ອື່ນ"

## ໂຈດຄວນໃຝ່ໃຈເຖິງທຳ

[໔໓໘] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ໂຈດປະສົງຈະໂຈດ ຜູ້ອື່ນຄວນໃຝ່ໃຈທຳທີ່ໃດ?ໄວ້ໃນຕົນແລ້ວໂຈດຜູ້ອື່ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ຄວນໃຝ່ໃຈທຳ ໕ ຢ່າງ ໄວ້ໃນຕົນແລ້ວໂຈດຜູ້ອື່ນ ທຳ ໕ ຢ່າງ ຄື

໑. ມີຄວາມກາຣຸນ

໒. ມຸ້ງປະໂຫຍດ

໓. ມີຄວາມອີດູ

໔. ມຸ້ງອອກຈາກອາບັດ

໕. ຢຶດພຣະວິໄນໄວ້ເປັນແນວທາງ

ອຸບາລີ ພິກຂຸຜູ້ໂຈດປະສົງຈະໂຈດຜູ້ອື່ນ ຄວນໃຝ່ໃຈທຳ ໕ ຢ່າງນີ້ໄວ້ໃນຕົນແລ້ວ ໂຈດຜູ້ອື່ນ"

## ອົງຂອງພິກຂຸຜູ້ບໍ່ຄວນໃຫ້ເຮັດໂອກາດ

[໔໓໙] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງທີ່ໃດ?ນໍແລ ຂໍໃຫ້ເຮັດໂອກາດ ສົງບໍ່ຄວນເຮັດໂອກາດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຂໍໃຫ້ເຮັດໂອກາດ ສົງບໍ່ຄວນເຮັດໂອກາດ ອົງ ໕ ຄື

໑. ເປັນຜູ້ມີຄວາມປະພຶດທາງກາຍບໍ່ບໍລິສຸດ
໒. ເປັນຜູ້ມີຄວາມປະພຶດທາງວາຈາບໍ່ບໍລິສຸດ
໓. ເປັນຜູ້ມີອາຊີວະບໍ່ບໍລິສຸດ
໔. ເປັນຜູ້ໂງ່ຈ້າ ບໍ່ສະຫຼາດ
໕. ຖືກຊັກຖາມ ບໍ່ອາດຕອບຂໍ້ຊັກຖາມ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຂໍໃຫ້ເຮັດໂອກາດ ສົງບໍ່ຄວນເຮັດໂອກາດ

## ອົງຂອງພິກຂຸຜູ້ຄວນໃຫ້ເຮັດໂອກາດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຂໍໃຫ້ເຮັດໂອກາດ ສົງຄວນເຮັດໂອກາດ ອົງ ໕ ຄື

໑. ເປັນຜູ້ມີຄວາມປະພຶດທາງກາຍບໍລິສຸດ
໒. ເປັນຜູ້ມີຄວາມປະພຶດທາງວາຈາບໍລິສຸດ
໓. ເປັນຜູ້ມີອາຊີວະບໍລິສຸດ
໔. ເປັນບັນດິດ ສະຫຼາດ
໕. ຖືກຊັກຖາມເຂົ້າ ອາດຕອບຂໍ້ຊັກຖາມ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຂໍໃຫ້ເຮັດໂອກາດ ສົງຄວນເຮັດໂອກາດ"

## ອົງແຫ່ງອະທິກອນທີ່ຕົນເພິ່ງຮັບ

[໔໔໐] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະສົງຈະຮັບອະທິກອນ ເພິ່ງຮັບອະທິກອນປະກອບດ້ວຍອົງທີ່ໃດ? ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະສົງຈະຮັບອະທິກອນ ເພິ່ງຮັບອະທິກອນປະກອບດ້ວຍອົງ ໕ ຄື

໑. ພິກຂຸຜູ້ປະສົງຈະຮັບອະທິກອນ ເພິ່ງພິຈາລະນາແນວນີ້ວ່າ ຂໍ້ທີ່ເຮົາປະສົງຈະຮັບອະທິກອນນີ້ ເຖິງເວລາທີ່ຈະຮັບອະທິກອນນີ້ບໍ່ເຖິງນໍ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ ຍັງບໍ່ແມ່ນເວລາທີ່ຈະຮັບອະທິກະຣະນະນີ້ ຍັງບໍ່ເຖິງເວລາ ກໍບໍ່ຄວນຮັບອະທິກອນນັ້ນ

໔. ອັນໜຶ່ງ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ ເຖິງເວລາທີ່ຈະຮັບອະທິກອນນີ້ ບໍ່ແມ່ນຍັງບໍ່ເຖິງເວລາ ພິກຂຸນັ້ນເພິ່ງພິຈາລະນາຍິ່ງຂຶ້ນອີກວ່າ ຂໍ້ທີ່ເຮົາປະສົງຈະຮັບອະທິກອນນີ້ ອະທິກອນທີ່ເຮົາຈະຮັບນີ້ເປັນເລື້ອງແມ່ນຈິງແທ້ບໍ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ ອະທິກອນທີ່ຈະຮັບນີ້ບໍ່ຈິງ ບໍ່ແມ່ນເລື້ອງຈິງ ກໍບໍ່ຄວນຮັບອະທິກອນນັ້ນ

໖. ອັນໜຶ່ງ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ ອະທິກອນນີ້ເປັນເລື້ອງຈິງ ບໍ່ແມ່ນເລື້ອງບໍ່ຈິງ ພິກຂຸນັ້ນເພິ່ງພິຈາລະນາຍິ່ງຂຶ້ນອີກວ່າ ຂໍ້ທີ່ເຮົາປະສົງຈະຮັບອະທິກອນນີ້ ອະທິກອນນີ້ມີປະໂຫຍດບໍ່ມີ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ ອະທິກອນນີ້ບໍ່ປະກອບດ້ວຍປະໂຫຍດ ບໍ່ແມ່ນປະກອບດ້ວຍປະໂຫຍດ ກໍບໍ່ຄວນຮັບອະທິກອນນັ້ນ

໔. ອັນໜຶ່ງ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ ອະທິກອນນີ້ປະກອບດ້ວຍປະໂຫຍດ ບໍ່ແມ່ນບໍ່ປະກອບດ້ວຍປະໂຫຍດ ພິກຂຸນັ້ນເພິ່ງພິຈາລະນາຍິ່ງຂຶ້ນອີກວ່າ ເຮົາເມື່ອຮັບອະທິກອນນີ້ຈະໄດ້ພິກຂຸຜູ້ເຄີຍພົບເຫັນ ເຄີຍຄົບຫາກັນມາເປັນພວກໂດຍຖືກຕ້ອງຕາມທຳ ໂດຍຖືກຕ້ອງດ້ວຍວິໄນບໍ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ ເຮົາເມື່ອຮັບອະທິກອນນີ້ໄວ້ເຮົາຈະບໍ່ໄດ້ພິກຂຸຜູ້ເຄີຍພົບເຫັນເຄີຍຄົບຫາກັນມາເປັນພວກໂດຍຖືກຕ້ອງຕາມທຳ ໂດຍຖືກຕ້ອງດ້ວຍວິໄນ ກໍບໍ່ຄວນຮັບອະທິກອນນັ້ນ

໕. ອັນໜຶ່ງ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ ເຮົາເມື່ອຮັບອະທິກອນນີ້ໄວ້ ເຮົາຈະໄດ້ພິກຂຸຜູ້ເຄີຍພົບເຫັນເຄີຍຄົບຫາກັນມາເປັນພວກໂດຍຖືກຕ້ອງຕາມທຳໂດຍຖືກຕ້ອງດ້ວຍວິໄນ ພິກຂຸນັ້ນເພິ່ງພິຈາລະນາຍິ່ງຂຶ້ນອີກວ່າ ເຮົາເມື່ອຮັບອະທິກອນນີ້ໄວ້ ອະທິກອນນັ້ນຈະເປັນເຫດໃຫ້ສົງໝາງໃຈ ຜິດຖຽງແກ່ງແຍ່ງວິວາດ ສົງແຕກກັນ ສົງຮ້າວຮານ ສົງແບ່ງແຍກ ສົງເປັນຕ່າງ ໆ ກັນບໍ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ ເຮົາເມື່ອຮັບອະທິກອນນີ້ໄວ້ ອະທິກອນນັ້ນຈະເປັນເຫດໃຫ້ສົງໝາງໃຈ ຜິດຖຽງແກ່ງແຍ່ງ ວິວາດກັນ ສົງແຕກກັນ ສົງຮ້າວຮານ ສົງແບ່ງແຍກ ສົງເປັນຕ່າງ ໆ ກັນ ກໍບໍ່ຄວນຮັບອະທິກອນນັ້ນ

ອັນໜຶ່ງ ຖ້າພິກຂຸພິຈາລະນາຮູ້ແນວນີ້ວ່າ ເຮົາເມື່ອຮັບອະທິກອນນີ້ໄວ້ ອະທິກອນນັ້ນຈະບໍ່ເປັນເຫດໃຫ້ສົງໝາງໃຈ ຜິດຖຽງແກ່ງແຍ່ງ ວິວາດ ສົງແຕກກັນ ສົງຮ້າວຮານ ສົງແບ່ງແຍກ ສົງເປັນຕ່າງ ໆ ກັນ ຄວນຮັບອະທິກອນນັ້ນ

ອຸບາລີ ອະທິກອນເຊິ່ງປະກອບດ້ວຍອົງ ໕ ທີ່ພິກຂຸຮັບແລ້ວຈັກບໍ່ກະທຳໃຫ້ເດືອດຮ້ອນໃນພາຍຫຼັງ ດ້ວຍປະການດັ່ງນີ້"

## ອົງຂອງພິກຂຸຜູ້ມີອຸປະກາຣະຫຼາຍ

[໔໔໑] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງເທົ່າໃດ?ນໍແລ ເປັນຜູ້ມີອຸປະກາຣະຫຼາຍແກ່ພວກພິກຂຸກໍ່ອະທິກອນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ເປັນຜູ້ມີອຸປະກາຣະຫຼາຍແກ່ພວກພິກຂຸກໍ່ອະທິກອນ ອົງ ໕ ຄື

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນຢູ່ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ທຳເຫຼົ່ານັ້ນໃດທີ່ງາມໃນເບື້ອງຕົ້ນ ງາມໃນທ່າມກາງ ແລະງາມໃນບ່ອນສຸດ ຍ່ອມສັນເສີນພົມມະຈັນພ້ອມ ທັງອັດຖະພ້ອມທັງພະຍັນຊະນະ ທຳທັງຫຼາຍປານນີ້ ຍ່ອມເປັນອັນທ່ານສະດັບຫຼາຍຊົງໄວ້ ສັ່ງສົມດ້ວຍວາຈາເຂົ້າໄປເພ່ງດ້ວຍໃຈ ປະຈັກແຈ້ງດີ ແລ້ວດ້ວຍທິດຖິ

໓. ຈຳປາຕິໂມກທັງ ໒ ໂດຍພິດສະດານໄດ້ດີ ຈຳແນກໄດ້ດີ ວ້ອງໄວດີ ວິນິດໄສໂດຍສຸດຕະ ໂດຍອະນຸພະຍັນຊະນະໄດ້ດີ

໔. ເປັນຜູ້ຕັ້ງໝັ້ນໃນພຣະວິໄນ ບໍ່ຄອນແຄນ

໕. ເປັນຜູ້ອາດຊີ້ແຈ່ງໃຫ້ຄູ່ຕໍ່ສູ້ໃນອະທິກອນຍິນຍອມເຂົ້າໃຈ ເພ່ງ ເຫັນເຫຼື້ອມໃສ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ເປັນຜູ້ມີອຸປະກາຣະຫຼາຍແກ່ພິກຂຸພວກກໍ່ອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ເປັນຜູ້ມີອຸປະກາຣະຫຼາຍແກ່ພວກພິກຂຸກໍ່ອະທິກອນ ອົງ ໕ ຄື

໑. ເປັນຜູ້ມີຄວາມປະພຶດທາງກາຍບໍລິສຸດ

໒. ເປັນຜູ້ມີຄວາມປະພຶດທາງວາຈາບໍລິສຸດ

໓. ເປັນຜູ້ມີອາຊີວະບໍລິສຸດ

໔. ເປັນບັນດິດ ສະຫຼາດ

໕. ຖືກຊັກຖາມ ອາດໃຫ້ຄຳຕອບຂໍ້ຊັກຖາມ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ເປັນຜູ້ມີອຸປະກາຣະຫຼາຍແກ່ພວກພິກຂຸກໍ່ອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ເປັນຜູ້ມີອຸປະກາຣະຫຼາຍແກ່ພວກພິກຂຸກໍ່ອະທິກອນ ອົງ ໕ ຄື

໑. ຮູ້ວັດຖຸ

໒. ຮູ້ນິທານ

໓. ຮູ້ພຣະບັນຍັດ

໔. ຮູ້ບົດທີ່ຕົກຫຼົ່ນໃນພາຍຫຼັງ

໕. ຮູ້ຄຳເວົ້າອັນກ່ຽວເນື່ອງກັນໄດ້

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ເປັນຜູ້ມີອຸປະກາຣະຫຼາຍແກ່ພວກພິກຂຸກໍ່ອະທິກອນ"

## ອົງຂອງພິກຂຸຜູ້ບໍ່ຄວນຊັກຖາມ

[໔໔໘] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງທໍ່ໃດ?ນໍແລ ບໍ່ຄວນຊັກຖາມ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ບໍ່ຄວນຊັກຖາມອົງ ໕ ຄື

໑. ບໍ່ຮູ້ພຣະສູດ

໒. ບໍ່ຮູ້ຂໍ້ອະນຸໂລມພຣະສູດ

໓. ບໍ່ຮູ້ພຣະວິໄນ

໔. ບໍ່ຮູ້ຂໍ້ອະນຸໂລມພຣະວິໄນ

໕. ບໍ່ສະຫຼາດໃນຖານະອັນຄວນແລະຖານະອັນບໍ່ຄວນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນຊັກຖາມ

## ອົງຂອງພິກຂຸຜູ້ຄວນຊັກຖາມ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນຊັກຖາມ ອົງ ໕ ຄື

໑. ຮູ້ພຣະສູດ

໒. ຮູ້ຂໍ້ອະນຸໂລມພຣະສູດ

໓. ຮູ້ພຣະວິໄນ

໔. ຮູ້ຂໍ້ອະນຸໂລມພຣະວິໄນ

໕. ສະຫຼາດໃນຖານະອັນຄວນແລະຖານະອັນບໍ່ຄວນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນຊັກຖາມ

## ອົງຂອງພິກຂຸຜູ້ບໍ່ຄວນຊັກຖາມ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນຊັກຖາມ ອົງ ໕ ຄື

໑. ບໍ່ຮູ້ພຣະທຳ

໒. ບໍ່ຮູ້ຂໍ້ອະນຸໂລມພຣະທຳ

໓. ບໍ່ຮູ້ພຣະວິໄນ

໔. ບໍ່ຮູ້ຂໍ້ອະນຸໂລມພຣະວິໄນ

໕. ບໍ່ສະຫຼາດໃນຄຳຕົ້ນແລະຄຳຫຼັງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນຊັກຖາມ

## ອົງຂອງພິກຂຸຜູ້ຄວນຊັກຖາມ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນຊັກຖາມ ອົງ ໕ ຄື

໑. ຮູ້ພຣະທຳ
໒. ຮູ້ຂໍ້ອະນຸໂລມພຣະທຳ
໓. ຮູ້ພຣະວິໄນ
໔. ຮູ້ຂໍ້ອະນຸໂລມພຣະວິໄນ
໕. ສະຫຼາດໃນຄຳຕົ້ນແລະຄຳຫຼັງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນຊັກຖາມ

## ອົງຂອງພິກຂຸຜູ້ບໍ່ຄວນຊັກຖາມ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນຊັກຖາມ ອົງ ໕ ຄື

໑. ບໍ່ຮູ້ວັດຖຸ
໒. ບໍ່ຮູ້ນິທານ
໓. ບໍ່ຮູ້ພຣະບັນຍັດ
໔. ບໍ່ຮູ້ບົດທີ່ຕົກຫຼົ່ນໃນພາຍຫຼັງ
໕. ບໍ່ຮູ້ຄຳເວົ້າອັນກ່ຽວເນື່ອງກັນໄດ້

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນຊັກຖາມ

## ອົງຂອງພິກຂຸຜູ້ຄວນຊັກຖາມ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນຊັກຖາມ ອົງ ໕ ຄື

໑. ຮູ້ວັດຖຸ
໒. ຮູ້ນິທານ
໓. ຮູ້ບັນຍັດ
໔. ຮູ້ບົດທີ່ຕົກຫຼົ່ນໃນພາຍຫຼັງ
໕. ຮູ້ຄຳເວົ້າອັນກ່ຽວເນື່ອງກັນໄດ້

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນຊັກຖາມ

## ອົງຂອງພິກຂຸຜູ້ບໍ່ຄວນຊັກຖາມ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນຊັກຖາມ ອົງ ໕ ຄື

໑. ບໍ່ຮູ້ອາບັດ
໒. ບໍ່ຮູ້ສະມຸດຖານແຫ່ງອາບັດ
໓. ບໍ່ຮູ້ປະໂຍຄແຫ່ງອາບັດ
໔. ບໍ່ຮູ້ຄວາມລະງັບອາບັດ
໕. ບໍ່ສະຫຼາດໃນການວິນິດໄສອາບັດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນຊັກຖາມ

## ອົງຂອງພິກຂຸຜູ້ຄວນຊັກຖາມ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນຊັກຖາມ ອົງ ໕ ຄື

໑. ຮູ້ອາບັດ
໒. ຮູ້ປະໂຍຄແຫ່ງອາບັດ
໓. ຮູ້ສະມຸດຖານແຫ່ງອາບັດ
໔. ຮູ້ຄວາມລະງັບອາບັດ
໕. ສະຫຼາດໃນການວິນິດໄສອາບັດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນຊັກຖາມ

## ອົງຂອງພິກຂຸຜູ້ບໍ່ຄວນຊັກຖາມ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຄວນຊັກຖາມ ອົງ ໕ ຄື

໑. ບໍ່ຮູ້ອະທິກອນ
໒. ບໍ່ຮູ້ປະໂຍຄແຫ່ງອະທິກອນ
໓. ບໍ່ຮູ້ສະມຸດຖານແຫ່ງອະທິກອນ
໔. ບໍ່ຮູ້ຄວາມລະງັບອະທິກອນ
໕. ບໍ່ສະຫຼາດໃນການວິນິດໄສອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນຊັກຖາມ

## ອົງຂອງພິກຂຸຜູ້ຄວນຊັກຖາມ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນຊັກຖາມ ອົງ ໕ ຄື

໑. ຮູ້ອະທິກອນ
໒. ຮູ້ປະໂຍຄແຫ່ງອະທິກອນ
໓. ຮູ້ສະມຸດຖານແຫ່ງອະທິກອນ
໔. ຮູ້ຄວາມລະງັບອະທິກອນ
໕. ສະຫຼາດໃນການວິນິດໄສອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນຊັກຖາມ"

**ອັດຕາທານະວັກທີ ໕ ຈົບ**

## ຫົວຂໍ້ປະຈໍາວັກ

ພິກຂຸຜູ້ມີຄວາມປະພຶດທາງກາຍ ວາຈາບໍລິສຸດ
ພິກຂຸຜູ້ກ່າວໂດຍການ ມີຄວາມກາຣຸນ ຄວນເປັນຜູ້ໂຈດ
ການເຮັດໂອກາດ ການຮັບອະທິກອນ ອະທິກອນແລະການຮັບອະທິກອນອີກໄນໜຶ່ງ
ພິກຂຸຜູ້ຮູ້ວັດຖຸ ຮູ້ພຣະສູດ ຮູ້ທໍາ ຮູ້ວັດຖຸອີກໄນໜຶ່ງ ຮູ້ອາບັດ ຮູ້ອະທິກອນ

## ໓. ທຸດົງຄະວັກ

## ໝວດວ່າດ້ວຍທຸດົງ

## ຖືຢູ່ປ່າ ເປັນຕົ້ນ

[໔໔໓] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ຖືຢູ່ປ່າມີທີ່ໃດ?ນໍແລ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ຖືຢູ່ປ່ານີ້ມີ ໕ ຈໍາພວກ ຄື

໑. ຍ້ອນເປັນຜູ້ໂງ່ຈ້າງົມງວາຍ ຈຶ່ງຢູ່ປ່າ
໒. ເປັນຜູ້ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກຄອບງໍາ ຈຶ່ງຢູ່ປ່າ
໓. ຍ້ອນມົວເມົາ ຈິດຟຸ້ງຊ່ານ ຈຶ່ງຢູ່ປ່າ
໔. ຍ້ອນເຂົ້າໃຈວ່າ ພຣະພຸດທະເຈົ້າ ພຣະສາວົກພຣະພຸດທະເຈົ້າສັນເສີນຈຶ່ງຢູ່ປ່າ
໕. ຍ້ອນອາໄສຄວາມມັກໜ້ອຍ ສັນໂດດ ຂັດເກົາ ຄວາມງຽບສະຫງັດແລະຍ້ອນອາໄສວ່າ ການຢູ່ປ່າມີປະໂຫຍດດ້ວຍການປະຕິບັດອັນງາມນີ້ ຈຶ່ງຢູ່ປ່າ

ອຸບາລີ ພິກຂຸຜູ້ຖືຢູ່ປ່າມີ ໕ ຈໍາພວກ ນີ້ແລ

ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ຖືທ່ຽວບິນທະບາດມີທີ່ໃດ?ນໍແລ ຂ້ານ້ອຍ ฯລฯ ພິກຂຸຜູ້ຖືຜ້າບັງສຸກຸນມີທີ່ໃດ?ນໍແລ ຂ້ານ້ອຍ ฯລฯ ພິກຂຸ ຜູ້ຖືຢູ່ເຫງົ້າໄມ້ມີທີ່ໃດ?ນໍແລ ຂ້ານ້ອຍ ฯລฯ ພິກຂຸຜູ້ຖືຢູ່ປ່າຊ້າມີທີ່ໃດ?ນໍແລ ຂ້ານ້ອຍ ฯລฯ ພິກຂຸຜູ້ຖືຢູ່ກາງແຈ້ງມີທີ່ໃດ?ນໍແລ ຂ້ານ້ອຍ ฯລฯ ພິກຂຸຜູ້ຖືຊົງຜ້າ ໓ ຜືນມີທີ່ໃດ?ນໍແລ ຂ້ານ້ອຍ ฯລฯ ພິກຂຸຜູ້ຖືທ່ຽວຕາມແຖວມີທີ່ໃດ?ນໍແລ ຂ້ານ້ອຍ ฯລฯ ພິກຂຸຜູ້ຖືການນັ່ງມີທີ່ໃດ?ນໍແລ ຂ້ານ້ອຍ ฯລฯ ພິກຂຸຜູ້ຖືຢູ່ໃນອາສະນະຕາມທີ່ຈັດໄວ້ມີທີ່ໃດ?ນໍແລ ຂ້ານ້ອຍ ฯລฯ ພິກຂຸຜູ້ຖືນັ່ງສັນອາສະນະແຫ່ງດຽວມີທີ່ໃດ?ນໍແລ ຂ້ານ້ອຍ ฯລฯ ພິກຂຸຜູ້ຖືການຫ້າມພັດທີ່ເຂົານໍາມາຖວາຍເມື່ອພາຍຫຼັງມີທີ່ໃດ?ນໍແລ ຂ້ານ້ອຍ ฯລฯ ພິກຂຸຜູ້ຖືການສັນສະເພາະໃນບາດມີທີ່ໃດ?ນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ຖືການສັນສະເພາະໃນບາດນີ້ມີ ໕ ຈຳພວກ ໕ ຈຳພວກ ຄື

໑. ຍ້ອນເປັນຜູ້ໂງ່ຈ້າ ງົມງວາຍ ຈຶ່ງຖືການສັນສະເພາະໃນບາດ
໒. ເປັນຜູ້ມີຄວາມປາຖະໜາຊົ່ວຊາມ ຖືກຄວາມຢາກຄອບງຳ ຈຶ່ງຖືການສັນສະເພາະໃນບາດ
໓. ຍ້ອນມົວເມົາ ຈິດຟຸ້ງຊ່ານ ຈຶ່ງຖືການສັນສະເພາະໃນບາດ
໔. ຍ້ອນເຂົ້າໃຈວ່າ ພຣະພຸດທະເຈົ້າ ພຣະສາວົກຂອງພຣະພຸດທະເຈົ້າສັນເສີນ ຈຶ່ງຖືການສັນສະເພາະໃນບາດ
໕. ຍ້ອນອາໄສຄວາມມັກໜ້ອຍ ສັນໂດດ ຂັດເກົາ ຄວາມງຽບສະຫງັດແລະຍ້ອນອາໄສວ່າ ການສັນສະເພາະໃນບາດ ມີປະໂຫຍດອັນງາມນີ້ ຈຶ່ງຖື ການສັນສະເພາະໃນບາດ

ອຸບາລີ ພິກຂຸຜູ້ຖືການສັນສະເພາະໃນບາດມີ ໕ ຈຳພວກ ນີ້ແລ

**ທຸດົງຄະວັກທີ ໓ ຈົບ**

## ຫົວຂໍ້ປະຈຳວັກ

ພິກຂຸຖືຢູ່ປ່າ ຖືທ່ຽວບິນທະບາດ ຖືຜ້າບັງສຸກຸນ ຖືຢູ່ເຫງົ້າໄມ້
ຖືຢູ່ປ່າຊ້າ ຖືຢູ່ໃນບ່ອນກາງແຈ້ງ ຖືຊົງຜ້າ ໓ ຜືນ
ຖືທ່ຽວຕາມແຖວ ຖືການນັ່ງ ຖືຢູ່ໃນອາສະນະຕາມທີ່ຈັດໄວ້
ຖືນັ່ງສັນ ອາສະນະແຫ່ງດຽວ ຖືການຫ້າມພັດທີ່ເຂົານຳມາຖວາຍ
ເມື່ອພາຍຫຼັງ ຖືສັນສະເພາະໃນບາດ

## ກ. ມຸສາວາທະວັກ

## ໝວດວ່າດ້ວຍມຸສາວາທະ

[໔໔໔] ທ່ານພຣະອຸບາລີທູນຖາມວ່າ "ມຸສາວາທະມີທໍ່ໃດ?ນໍແລ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ມຸສາວາທະນີ້ມີ ໕ ຢ່າງ ຄື

໑. ມຸສາວາທະທີ່ເຖິງຂັ້ນອາບັດປາຣາຊິກມີຢູ່
໒. ມຸສາວາທະທີ່ເຖິງຂັ້ນອາບັດສັງຄາທິເສດມີຢູ່
໓. ມຸສາວາທະທີ່ເຖິງຂັ້ນອາບັດຖຸນລັດໄຈມີຢູ່
໔. ມຸສາວາທະທີ່ເຖິງຂັ້ນອາບັດປາຈິດຕີມີຢູ່

๕. ມຸສາວາທະທີ່ເຖິງຂັ້ນອາບັດທຸກກົດມີຢູ່

ອຸບາລີ ມຸສາວາທະມີ ๕ ຢ່າງ ນີ້ແລ

## ງົດອຸໂປສົດຫຼືປະວາຣະນາ

[໔໔໕] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງທີ່ໃດ?ນໍແລ ງົດອຸໂປສົດຫຼືປະວາຣະນາໃນທ່າມກາງສົງ ສົງເພິ່ງກ່າວຫ້າມວ່າ ພໍເທີ້ນ ພິກຂຸ ຢ່າຫຸ່ມຖຽງກັນ ຢ່າຜິດຖຽງກັນ ຢ່າແກ່ງແຍ່ງກັນ ຢ່າວິວາດກັນ ດັ່ງນີ້ ແລ້ວຈຶ່ງເຮັດອຸໂປສົດຫຼືປະວາຣະນາ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ๕ ງົດອຸໂປສົດຫຼືປະວາຣະນາໃນທ່າມກາງສົງ ສົງເພິ່ງກ່າວຫ້າມວ່າ ພໍເທີ້ນ ພິກຂຸ ຢ່າຫຸ່ມຖຽງກັນ ຢ່າຜິດຖຽງກັນ ຢ່າແກ່ງແຍ່ງກັນ ຢ່າວິວາດກັນ ດັ່ງນີ້ ແລ້ວເຮັດອຸໂປສົດຫຼືປະວາຣະນາ ອົງ ๕ ຄື

໑. ເປັນອະລັດຊີ
໒. ເປັນຄົນໂງ່ຈ້າ
໓. ບໍ່ແມ່ນເປັນປະກະຕັດຕະ
໔. ເປັນຜູ້ກ່າວປະສົງຈະໃຫ້ເຄື່ອນຈາກສາດສະໜາ
໕. ບໍ່ເປັນຜູ້ກ່າວປະສົງຈະໃຫ້ອອກຈາກອາບັດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ๕ ນີ້ແລ ງົດອຸໂປສົດຫຼືປະວາຣະນາໃນທ່າມກາງສົງ ສົງເພິ່ງກ່າວຫ້າມວ່າ ພໍເທີ້ນ ພິກຂຸ ຢ່າຫຸ່ມຖຽງກັນ ຢ່າຜິດຖຽງກັນ ຢ່າແກ່ງແຍ່ງກັນ ຢ່າວິວາດກັນ ດັ່ງນີ້ ແລ້ວເຮັດອຸໂປສົດຫຼືປະວາຣະນາ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ๕ ແມ່ນອີກຢ່າງ ງົດອຸໂປສົດຫຼືປະວາຣະນາໃນທ່າມກາງສົງ ສົງເພິ່ງກ່າວຫ້າມວ່າ ພໍເທີ້ນ ພິກຂຸ ຢ່າຫຸ່ມຖຽງກັນ ຢ່າຜິດຖຽງກັນ ຢ່າແກ່ງແຍ່ງກັນ ຢ່າວິວາດກັນ ດັ່ງນີ້ ແລ້ວເຮັດອຸໂປສົດຫຼືປະວາຣະນາ ອົງ ๕ ຄື

໑. ເປັນຜູ້ມີຄວາມປະພຶດທາງກາຍບໍ່ບໍລິສຸດ
໒. ເປັນຜູ້ມີຄວາມປະພຶດທາງວາຈາບໍ່ບໍລິສຸດ
໓. ເປັນຜູ້ມີອາຊີວະບໍ່ບໍລິສຸດ
໔. ເປັນຄົນໂງ່ຈ້າ ບໍ່ສະຫຼາດ
໕. ເປັນຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ๕ ນີ້ແລ ງົດອຸໂປສົດຫຼືປະວາຣະນາໃນທ່າມກາງສົງ ສົງເພິ່ງກ່າວຫ້າມວ່າ ພໍເທີ້ນ ພິກຂຸ ຢ່າຫຸ່ມຖຽງກັນ ຢ່າຜິດຖຽງກັນ ຢ່າແກ່ງແຍ່ງກັນ ຢ່າວິວາດກັນ ດັ່ງນີ້ ແລ້ວເຮັດອຸໂປສົດຫຼືປະວາຣະນາ"

## ອົງຂອງພິກຂຸຜູ້ບໍ່ຄວນໃຫ້ຄຳຊັກຖາມ

[໔໔໙] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງທໍ່ໃດ?ນໍແລ ສົງບໍ່ຄວນໃຫ້ຄຳຊັກຖາມ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ສົງບໍ່ຄວນໃຫ້ຄຳຊັກຖາມ ອົງ ໕ ຄື

໑. ບໍ່ຮູ້ອາບັດແລະອະນາບັດ
໒. ບໍ່ຮູ້ອາບັດເບົາແລະອາບັດໜັກ
໓. ບໍ່ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ບໍ່ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ບໍ່ຮູ້ອາບັດທີ່ເຮັດຄືນໄດ້ແລະເຮັດຄືນບໍ່ໄດ້

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງບໍ່ຄວນໃຫ້ຄຳຊັກຖາມ

## ອົງຂອງພິກຂຸຜູ້ຄວນໃຫ້ຄຳຊັກຖາມ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ສົງຄວນໃຫ້ຄຳຊັກຖາມ ອົງ ໕ ຄື

໑. ຮູ້ອາບັດແລະອະນາບັດ
໒. ຮູ້ອາບັດເບົາແລະອາບັດໜັກ
໓. ຮູ້ອາບັດມີສ່ວນເຫຼືອແລະອາບັດບໍ່ມີສ່ວນເຫຼືອ
໔. ຮູ້ອາບັດຊົ່ວຫຍາບແລະອາບັດບໍ່ຊົ່ວຫຍາບ
໕. ຮູ້ອາບັດທີ່ເຮັດຄືນໄດ້ແລະເຮັດຄືນບໍ່ໄດ້

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງຄວນໃຫ້ຄຳຊັກຖາມ"

## ພິກຂຸຕ້ອງອາບັດດ້ວຍອາການ ໕ ຢ່າງ

[໔໔໗] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຕ້ອງອາບັດດ້ວຍອາການທໍ່ໃດ?ນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຕ້ອງອາບັດດ້ວຍອາການ ໕ ຢ່າງ ຄື

໑. ຍ້ອນບໍ່ລະອາຍ
໒. ຍ້ອນບໍ່ຮູ້
໓. ຍ້ອນສົງໄສແລ້ວຂືນເຮັດ
໔. ຍ້ອນສຳຄັນໃນຂອງທີ່ບໍ່ຄວນວ່າຄວນ
໕. ຍ້ອນສຳຄັນໃນຂອງທີ່ຄວນວ່າບໍ່ຄວນ

ອຸບາລີ ພິກຂຸຕ້ອງອາບັດດ້ວຍອາການ ໕ ນີ້ແລ
ອຸບາລີ ພິກຂຸຕ້ອງອາບັດດ້ວຍອາການແມ່ນອື່ນອີກ ໕ ຢ່າງ ຄື

໑. ບໍ່ໄດ້ເຫັນ
໒. ບໍ່ໄດ້ຟັງ
໓. ຫຼັບ
໔. ເຂົ້າໃຈວ່າເປັນເຊັ່ນນັ້ນ
໕. ລືມສະຕິ

ອຸບາລີ ພິກຂຸຕ້ອງອາບັດດ້ວຍອາການ ໕ ນີ້ແລ"

## ເວນ ໕

[໔໔໗] ທ່ານພຣະອຸບາລີທູນຖາມວ່າ "ເວນມີທໍ່ໃດ?ນໍແລ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ເວນນີ້ມີ ໕ ຢ່າງ ຄື

໑. ຂ້າສັດມີຊີວິດ
໒. ຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໃຫ້
໓. ປະພຶດຜິດໃນກາມ
໔. ເວົ້າຕົວະ
໕. ດື່ມນ້ຳເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ

ອຸບາລີ ເວນ ໕ ນີ້ແລ"

## ງົດເວັ້ນເວນ ໕

ທ່ານພຣະອຸບາລີທູນຖາມວ່າ "ເຈຕະນາງົດເວັ້ນຈາກເວນມີທໍ່ໃດ?ນໍແລ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ເຈຕະນາງົດເວັ້ນຈາກເວນນີ້ມີ ໕ ຄື

໑. ເຈຕະນາງົດເວັ້ນຈາກຂ້າສັດມີຊີວິດ
໒. ເຈຕະນາງົດເວັ້ນຈາກຖືເອົາສິ່ງຂອງທີ່ເຈົ້າຂອງບໍ່ໃຫ້
໓. ເຈຕະນາງົດເວັ້ນຈາກປະພຶດຜິດໃນກາມ
໔. ເຈຕະນາງົດເວັ້ນຈາກເວົ້າຕົວະ
໕. ເຈຕະນາງົດເວັ້ນຈາກເຫດເປັນບ່ອນຕັ້ງຄວາມຜະໝາດ ຍ້ອນດື່ມນ້ຳເມົາຄື ສຸຣາແລະເມໄຣ

ອຸບາລີ ເຈຕະນາງົດເວັ້ນຈາກເວນ ໕ ນີ້ແລ"

## ຄວາມເສື່ອມ ໕

[໔໔໘] ທ່ານພຣະອຸບາລີທູນຖາມວ່າ "ຄວາມເສື່ອມມີທໍ່ໃດ?ນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ຄວາມເສື່ອມນີ້ມີ ໕ ຢ່າງ ຄື

໑. ຄວາມເສື່ອມຍາດ

໒. ຄວາມເສື່ອມໂພຄະສົມບັດ

໓. ຄວາມເສື່ອມຄືພະຍາດ

໔. ຄວາມເສື່ອມສິນ

໕. ຄວາມເສື່ອມທິດຖິ

ອຸບາລີ ຄວາມເສື່ອມມີ ໕ ຢ່າງນີ້ແລ"

## ສຳປະທາ ໕

ທ່ານພຣະອຸບາລີທູນຖາມວ່າ "ຄວາມເຖິງພ້ອມມີທີ່ໃດ?ນໍແລ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ຄວາມເຖິງພ້ອມນີ້ມີ ໕ ຢ່າງ ຄື

໑. ຍາຕິສຳປະທາ (ຄວາມເຖິງພ້ອມແຫ່ງຍາດ)

໒. ໂພຄະສຳປະທາ (ຄວາມເຖິງພ້ອມແຫ່ງໂພຄະ)

໓. ອາໂຣຄະຍະສຳປະທາ (ຄວາມເຖິງພ້ອມແຫ່ງຄວາມບໍ່ມີພະຍາດ)

໔. ສີລະສຳປະທາ (ຄວາມເຖິງພ້ອມແຫ່ງສິນ)

໕. ທິດຖິສຳປະທາ (ຄວາມເຖິງພ້ອມແຫ່ງຄວາມເຫັນ)

ອຸບາລີ ຄວາມເຖິງພ້ອມມີ ໕ ຢ່າງນີ້ແລ"

### ມຸສາວາທະວັກທີ ໆ ຈົບ

## ຫົວຂໍ້ປະຈຳວັກ

ການກ່າວມຸສາວາທະ ການກ່າວຫ້າມ ການກ່າວຫ້າມ
ອີກໄນໜຶ່ງ ຄຳຊັກຖາມ ອາບັດ ອາບັດອີກໄນໜຶ່ງ
ເວນ ເຈຕະນາງົດເວັ້ນຈາກເວນ ຄວາມເສື່ອມ ສຳປະທາ

### ຈັດເປັນວັກທີ ໆ

# ๓. ພິກຂຸໂນວາທະວັກ

## ໝວດວ່າດ້ວຍການໃຫ້ໂອວາດພິກຂຸນີ

### ອົງສຳລັບລົງໂທດ

[໔໕໐] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງທີ່ໃດ?ນໍແລ ພິກຂຸນີສົງຝ່າຍດຽວເພິ່ງລົງໂທດໄດ້ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ພິກຂຸນີສົງຝ່າຍດຽວເພິ່ງລົງໂທດ ຄືພິກຂຸນີສົງບໍ່ເພິ່ງໄຫວ້ພິກຂຸນັ້ນ ອົງ ໕ ຄື

໑. ເປີດກາຍສະແດງແກ່ພິກຂຸນີທັງຫຼາຍ
໒. ເປີດຂາອ່ອນສະແດງແກ່ພິກຂຸນີທັງຫຼາຍ
໓. ເປີດອົງຄະຊາດສະແດງແກ່ພິກຂຸນີທັງຫຼາຍ
໔. ເປີດໄຫຼ່ທັງສອງສະແດງແກ່ພິກຂຸນີທັງຫຼາຍ
໕. ຊັກຊວນຄະລືຫັດໃຫ້ມາຄົບຫາຮັກກັບພິກຂຸນີ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ພິກຂຸນີສົງຝ່າຍດຽວເພິ່ງລົງໂທດ ຄືພິກຂຸນີສົງບໍ່ເພິ່ງໄຫວ້ພິກຂຸນັ້ນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ພິກຂຸນີສົງຝ່າຍດຽວເພິ່ງລົງໂທດ ຄື ພິກຂຸນີສົງບໍ່ເພິ່ງໄຫວ້ພິກຂຸນັ້ນ ອົງ ໕ ຄື

໑. ຂົນຂວາຍເພື່ອບໍ່ແມ່ນລາບຂອງພິກຂຸນີທັງຫຼາຍ
໒. ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງພິກຂຸນີທັງຫຼາຍ
໓. ຂົນຂວາຍເພື່ອຄວາມຢູ່ບໍ່ໄດ້ຂອງພິກຂຸນີທັງຫຼາຍ
໔. ດ່າກ່າວໂທດພິກຂຸນີທັງຫຼາຍ
໕. ຍຸຍົງພິກຂຸນີທັງຫຼາຍໃຫ້ແຕກກັນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ພິກຂຸນີສົງຝ່າຍດຽວເພິ່ງລົງໂທດ ຄື ພິກຂຸນີສົງບໍ່ເພິ່ງໄຫວ້ພິກຂຸນັ້ນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ພິກຂຸນີສົງຝ່າຍດຽວເພິ່ງລົງໂທດ ຄື ພິກຂຸນີສົງບໍ່ເພິ່ງໄຫວ້ພິກຂຸນັ້ນ ອົງ ໕ ຄື

໑. ຂົນຂວາຍເພື່ອບໍ່ແມ່ນລາບຂອງພິກຂຸນີທັງຫຼາຍ
໒. ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງພິກຂຸນີທັງຫຼາຍ

๓. ຂົນຂວາຍເພື່ອຄວາມຢູ່ບໍ່ໄດ້ຂອງພິກຂຸນີທັງຫຼາຍ

๔. ດ່າກ່າວໂທດພິກຂຸນີທັງຫຼາຍ

๕. ຊັກຊວນພິກຂຸໃຫ້ມາຄົບຫາຮັກກັບພິກຂຸນີ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ๕ ນີ້ແລ ພິກຂຸນີສົງຝ່າຍດຽວເພິ່ງລົງໂທດ ຄື ພິກຂຸນີສົງບໍ່ເພິ່ງໄຫວ້ພິກຂຸນັ້ນ"

## ອົງສຳລັບລົງໂທດພິກຂຸນີ

[๔๕๑] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸນີປະກອບດ້ວຍອົງທີ່ໃດ?ນໍແລ ສົງເພິ່ງລົງໂທດໄດ້ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸນີປະກອບດ້ວຍອົງ ๕ ສົງເພິ່ງລົງໂທດອົງ ๕ ຄື

๑. ເປີດກາຍສະແດງແກ່ພິກຂຸທັງຫຼາຍ

๒. ເປີດຂາອ່ອນສະແດງແກ່ພິກຂຸທັງຫຼາຍ

๓. ເປີດອົງກຳເນີດສະແດງແກ່ພິກຂຸທັງຫຼາຍ

๔. ເປີດໄຫຼ່ທັງສອງສະແດງແກ່ພິກຂຸທັງຫຼາຍ

๕. ຊັກຊວນສະຕິຄະລິຫັດໃຫ້ມາຄົບຫາຮັກກັບພິກຂຸ

ອຸບາລີ ສົງເພິ່ງລົງໂທດພິກຂຸນີປະກອບດ້ວຍອົງ ๕ ນີ້ແລ

ອຸບາລີ ສົງເພິ່ງລົງໂທດພິກຂຸນີປະກອບດ້ວຍອົງ ๕ ແມ່ນອື່ນອີກ ອົງ ๕ ຄື

๑. ຂົນຂວາຍເພື່ອບໍ່ແມ່ນລາບຂອງພິກຂຸທັງຫຼາຍ

๒. ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງພິກຂຸທັງຫຼາຍ

๓. ຂົນຂວາຍເພື່ອຄວາມຢູ່ບໍ່ໄດ້ຂອງພິກຂຸທັງຫຼາຍ

๔. ດ່າກ່າວໂທດພິກຂຸທັງຫຼາຍ

๕. ຍຸຍົງພິກຂຸທັງຫຼາຍໃຫ້ແຕກກັນ

ອຸບາລີ ສົງເພິ່ງລົງໂທດພິກຂຸນີປະກອບດ້ວຍອົງ ๕ ນີ້ແລ

ອຸບາລີ ສົງເພິ່ງລົງໂທດພິກຂຸນີປະກອບດ້ວຍອົງ ๕ ແມ່ນອື່ນອີກ ຄື

๑. ຂົນຂວາຍເພື່ອບໍ່ແມ່ນລາບຂອງພິກຂຸທັງຫຼາຍ

๒. ຂົນຂວາຍເພື່ອບໍ່ແມ່ນປະໂຫຍດຂອງພິກຂຸທັງຫຼາຍ

๓. ຂົນຂວາຍເພື່ອຄວາມຢູ່ບໍ່ໄດ້ຂອງພິກຂຸທັງຫຼາຍ

๔. ດ່າກ່າວໂທດພິກຂຸທັງຫຼາຍ

๕. ຊັກຊວນພິກຂຸນີໃຫ້ມາຄົບຫາຮັກກັບພິກຂຸ

ອຸບາລີ ສົງເພິ່ງລົງໂທດພິກຂຸນີປະກອບດ້ວຍອົງ ๕ ນີ້ແລ"

# ອົງຂອງພິກຂຸບໍ່ຄວນໃຫ້ໂອວາດ

[໔໕໔] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງທີ່ໃດ?ນໍແລ ບໍ່ຄວນໃຫ້ໂອວາດແກ່ພິກຂຸນີທັງຫຼາຍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ບໍ່ຄວນໃຫ້ໂອວາດແກ່ພິກຂຸນີທັງຫຼາຍ ອົງ ໕ ຄື

໑. ເປັນອະລັດຊີ

໒. ເປັນຄົນໂງ່ຈ້າ

໓. ບໍ່ແມ່ນເປັນປະກະຕັດຕະ

໔. ເປັນຜູ້ກ່າວປະສົງຈະໃຫ້ເຄື່ອນຈາກສາດສະໜາ

໕. ບໍ່ເປັນຜູ້ກ່າວປະສົງຈະໃຫ້ອອກຈາກອາບັດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນໃຫ້ໂອວາດແກ່ພິກຂຸນີທັງຫຼາຍ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຄວນໃຫ້ໂອວາດແກ່ພິກຂຸນີທັງຫຼາຍ ອົງ ໕ ຄື

໑. ເປັນຜູ້ມີຄວາມປະພຶດທາງກາຍບໍ່ບໍລິສຸດ

໒. ເປັນຜູ້ມີຄວາມປະພຶດທາງວາຈາບໍ່ບໍລິສຸດ

໓. ເປັນຜູ້ມີອາຊີວະບໍ່ບໍລິສຸດ

໔. ເປັນຄົນໂງ່ຈ້າ ບໍ່ສະຫຼາດ

໕. ຖືກຊັກຖາມ ບໍ່ອາດຕອບຂໍ້ຊັກຖາມ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນໃຫ້ໂອວາດແກ່ພິກຂຸນີທັງຫຼາຍ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຄວນໃຫ້ໂອວາດແກ່ພິກຂຸນີທັງຫຼາຍ ອົງ ໕ ຄື

໑. ປະພຶດບໍ່ສົມຄວນທາງກາຍ

໒. ປະພຶດບໍ່ສົມຄວນທາງວາຈາ

໓. ປະພຶດບໍ່ສົມຄວນທັງທາງກາຍ

໔. ດ່າກ່າວໂທດພິກຂຸນີທັງຫຼາຍແລະວາຈາ

໕. ເປັນຜູ້ຢູ່ຄຸກຄີກັບພິກຂຸນີທັງຫຼາຍດ້ວຍການຄຸກຄີອັນບໍ່ສົມຄວນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນໃຫ້ໂອວາດແກ່ພິກຂຸນີທັງຫຼາຍ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຄວນໃຫ້ໂອວາດແກ່ພິກຂຸນີທັງຫຼາຍ ອົງ ໕ ຄື

໑. ເປັນອະລັດຊີ

໒. ເປັນຄົນໂງ່ຈ້າ

໓. ບໍ່ແມ່ນເປັນປະກະຕັດຕະ

໔. ເປັນຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ

໕. ເປັນຜູ້ບໍ່ເຮັດສິກຂາໃຫ້ບໍລິບູນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນໃຫ້ໂອວາດແກ່ພິກຂຸນີທັງຫຼາຍ

## ອົງຂອງພິກຂຸຜູ້ບໍ່ຄວນຮັບໃຫ້ໂອວາດ

[໔໕໓] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງທໍ່ໃດ?ນໍແລ ບໍ່ຄວນຮັບໃຫ້ໂອວາດແກ່ພິກຂຸນີທັງຫຼາຍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ບໍ່ຄວນຮັບໃຫ້ໂອວາດແກ່ພິກຂຸນີທັງຫຼາຍ ອົງ ໕ ຄື

໑. ປະພຶດບໍ່ສົມຄວນທາງກາຍ

໒. ປະພຶດບໍ່ສົມຄວນທາງວາຈາ

໓. ປະພຶດບໍ່ສົມຄວນທັງທາງກາຍ

໔. ດ່າກ່າວໂທດພິກຂຸນີທັງຫຼາຍແລະວາຈາ

໕. ເປັນຜູ້ຢູ່ຄຸກຄີກັບພິກຂຸນີທັງຫຼາຍດ້ວຍການຄຸກຄີອັນບໍ່ສົມຄວນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນຮັບໃຫ້ໂອວາດແກ່ພິກຂຸນີທັງຫຼາຍ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຄວນຮັບໃຫ້ໂອວາດແກ່ພິກຂຸນີທັງຫຼາຍ ອົງ ໕ ຄື

໑. ເປັນອະລັດຊີ

໒. ເປັນຄົນໂງ່ຈ້າ

໓. ບໍ່ແມ່ນເປັນປະກະຕັດຕະ

໔. ເປັນຜູ້ກໍາລັງຈະເດີນທາງ

໕. ເປັນໄຂ້

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນຮັບໃຫ້ໂອວາດແກ່ພິກຂຸນີທັງຫຼາຍ

## ອົງຂອງພິກຂຸຜູ້ບໍ່ຄວນສົນທະນາດ້ວຍ

[໔໕໔] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸທັງຫຼາຍບໍ່ຄວນສົນທະນາກັບພິກຂຸຜູ້ປະກອບດ້ວຍອົງທີ່ໃດ?ນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸທັງຫຼາຍບໍ່ຄວນສົນທະນາກັບພິກຂຸຜູ້ປະກອບ ດ້ວຍອົງ ໕ ອົງ ໕ ຄື

໑. ບໍ່ປະກອບດ້ວຍສີນຂັນອັນເປັນອະເສຂະ

໒. ບໍ່ປະກອບດ້ວຍສະມາທິຂັນອັນເປັນອະເສຂະ

໓. ບໍ່ປະກອບດ້ວຍປັນຍາຂັນອັນເປັນອະເສຂະ

໔. ບໍ່ປະກອບດ້ວຍວິມຸດຕິຂັນອັນເປັນອະເສຂະ

໕. ບໍ່ປະກອບດ້ວຍວິມຸດຕິຍານທັດສະນະຂັນອັນເປັນອະເສຂະ

ອຸບາລີ ພິກຂຸທັງຫຼາຍບໍ່ຄວນສົນທະນາກັບພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ"

## ອົງຂອງພິກຂຸຜູ້ຄວນສົນທະນາດ້ວຍ

ທ່ານພຣະອຸບາລີທູນຖາມວ່າ "ພິກຂຸທັງຫຼາຍຄວນສົນທະນາກັບພິກຂຸຜູ້ປະກອບດ້ວຍອົງທີ່ໃດ?ນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸທັງຫຼາຍຄວນສົນທະນາກັບພິກຂຸຜູ້ປະກອບດ້ວຍອົງ ໕ ອົງ ໕ ຄື

໑. ປະກອບດ້ວຍສີນຂັນອັນເປັນອະເສຂະ

໒. ປະກອບດ້ວຍສະມາທິຂັນອັນເປັນອະເສຂະ

໓. ປະກອບດ້ວຍປັນຍາຂັນອັນເປັນອະເສຂະ

໔. ປະກອບດ້ວຍວິມຸດຕິຂັນອັນເປັນອະເສຂະ

໕. ປະກອບດ້ວຍວິມຸດຕິຍານທັດສະນະຂັນອັນເປັນອະເສຂະ

ອຸບາລີ ພິກຂຸທັງຫຼາຍຄວນສົນທະນາກັບພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ

## ອົງຂອງພິກຂຸຜູ້ບໍ່ຄວນສົນທະນາດ້ວຍ ອີກໄນໜຶ່ງ

ອຸບາລີ ພິກຂຸທັງຫຼາຍບໍ່ຄວນສົນທະນາກັບພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ອົງ ໕ ຄື

໑. ບໍ່ເປັນຜູ້ບັນລຸອັດຖະປະຕິສໍາພິທາ (ປັນຍາແຕກສານໃນອັດຖະ)

໒. ບໍ່ເປັນຜູ້ບັນລຸທໍາມະປະຕິສໍາພິທາ (ປັນຍາແຕກສານໃນທໍາ)

໓. ບໍ່ເປັນຜູ້ບັນລຸນິຣຸດຕິປະຕິສຳພິທາ (ປັນຍາແຕກສານໃນນິຣຸກຕິ)
໔. ບໍ່ເປັນຜູ້ບັນລຸປະຕິພານະປະຕິສຳພິທາ (ປັນຍາແຕກສານໃນປະຕິພານ)
໕. ບໍ່ພິຈາລະນາຈິດຕາມທີ່ລຸດພົ້ນແລ້ວ

ອຸບາລີ ພິກຂຸທັງຫຼາຍບໍ່ຄວນສົນທະນາກັບພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ

## ອົງຂອງພິກຂຸຜູ້ຄວນສົນທະນາດ້ວຍ

ອຸບາລີ ພິກຂຸທັງຫຼາຍຄວນສົນທະນາກັບພິກຂຸຜູ້ປະກອບດ້ວຍອົງ ໕ ອົງ ໕ ຄື

໑. ເປັນຜູ້ບັນລຸອັດຖະປະຕິສຳພິທາ
໒. ເປັນຜູ້ບັນລຸທຳມະປະຕິສຳພິທາ
໓. ເປັນຜູ້ບັນລຸນິຣຸດຕິປະຕິສຳພິທາ
໔. ເປັນຜູ້ບັນລຸປະຕິພານະປະຕິສຳພິທາ
໕. ພິຈາລະນາຈິດຕາມທີ່ລຸດພົ້ນແລ້ວ

ອຸບາລີ ພິກຂຸທັງຫຼາຍຄວນສົນທະນາກັບພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ"

**ພິກຂຸໂນວາທະວັກທີ ໗ ຈົບ**

## ຫົວຂໍ້ປະຈຳວັກ

ພິກຂຸນີສົງຝ່າຍດຽວເພິ່ງລົງໂທດ ພິກຂຸນີເພິ່ງລົງໂທດອີກ ໒ ໄນ
ລົງໂທດພິກຂຸນີ ໓ ໄນ ບໍ່ໃຫ້ໂອວາດ
ບໍ່ໃຫ້ໂອວາດອີກ ໒ ໄນ ບໍ່ຮັບໃຫ້ໂອວາດທີ່ຕັດໄວ້ ໒ ໄນ
ພິກຂຸຜູ້ຄວນສົນທະນາທີ່ຕັດໄວ້ ໒ ໄນ

## ໘. ອຸບພາທິກະວັກ

## ໝວດວ່າດ້ວຍອຸບພາທິກະສົມມຸດ

## ບໍ່ແຕ່ງຕັ້ງດ້ວຍອຸບພາທິກາ

[໔໕໕] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງທໍ່ໃດ?ນໍແລ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາທິກາ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາທິກາ ອົງ ໕ ຄື

໑. ບໍ່ສະຫຼາດໃນອັດຖະ

໒. ບໍ່ສະຫຼາດໃນທຳ

໓. ບໍ່ສະຫຼາດໃນການກ່າວດ້ວຍພາສາ

໔. ບໍ່ສະຫຼາດໃນກະບວນອັກສອນ

໕. ບໍ່ສະຫຼາດໃນຄຳຕົ້ນແລະຄຳຫຼັງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ

## ແຕ່ງຕັ້ງດ້ວຍອຸບພາຫິກາ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ ອົງ ໕ ຄື

໑. ສະຫຼາດໃນອັດຖະ

໒. ສະຫຼາດໃນທຳ

໓. ສະຫຼາດໃນການກ່າວດ້ວຍພາສາ

໔. ສະຫຼາດໃນກະບວນອັກສອນ

໕. ສະຫຼາດໃນຄຳຕົ້ນແລະຄຳຫຼັງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ

## ບໍ່ແຕ່ງຕັ້ງດ້ວຍອຸບພາຫິກາ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ ອົງ ໕ ຄື

໑. ເປັນຜູ້ມັກໂກດ ຖືກຄວາມໂກດຄອບງຳ

໒. ເປັນຜູ້ລົບຫຼູ່ ຖືກຄວາມລົບຫຼູ່ຄອບງຳ

໓. ເປັນຜູ້ຕີສະເໝີ ຖືກຄວາມຕີສະເໝີຄອບງຳ

໔. ເປັນຜູ້ມີປົກກະຕິຣິດສະຫຍາ ຖືກຄວາມຣິດສະຫຍາຄອບງຳ

໕. ເປັນຜູ້ຍຶດໝັ້ນທິດຖິຂອງຕົນ ເປັນຄົນລື່ນຄວາມສະລະສິ່ງທີ່ຕົນຍຶດໝັ້ນໄດ້ຍາກ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ

## ແຕ່ງຕັ້ງດ້ວຍອຸບພາຫິກາ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ ອົງ ໕ ຄື

໑. ບໍ່ເປັນຜູ້ມັກໂກດ ບໍ່ຖືກຄວາມໂກດຄອບງຳ

໒. ບໍ່ເປັນຜູ້ລົບຫຼູ່ ບໍ່ຖືກຄວາມລົບຫຼູ່ຄອບງຳ

໓. ບໍ່ເປັນຜູ້ຕີສະເໝີ ບໍ່ຖືກຄວາມຕີສະເໝີຄອບງຳ

໔. ບໍ່ເປັນຜູ້ມີປົກກະຕິຣິດສະຫຍາ ບໍ່ຖືກຄວາມຣິດສະຫຍາຄອບງຳ

໕. ບໍ່ເປັນຜູ້ຢຶດໝັ້ນທິດຖິຂອງຕົນ ບໍ່ມີຄວາມຖືດື້ ສະລະສິ່ງທີ່ຕົນຢຶດໝັ້ນໄດ້ງ່າຍ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ

## ບໍ່ແຕ່ງຕັ້ງດ້ວຍອຸບພາຫິກາ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອີກຢ່າງ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ ອົງ ໕ ຄື

໑. ໂກດ

໒. ພະຍາບາດ

໓. ບຽດບຽນ

໔. ຍົວະໃຫ້ໂກດ

໕. ບໍ່ອົດທົນ ບໍ່ຮັບອະນຸສາສະນີໂດຍເຄົາລົບ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ

## ແຕ່ງຕັ້ງດ້ວຍອຸບພາຫິກາ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ ອົງ ໕ ຄື

໑. ບໍ່ໂກດ

໒. ບໍ່ພະຍາບາດ

໓. ບໍ່ບຽດບຽນ

໔. ບໍ່ຍົວະໃຫ້ໂກດ

໕. ອົດທົນ ມີປົກກະຕິຮັບອະນຸສາສະນີໂດຍເຄົາລົບ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ

## ບໍ່ແຕ່ງຕັ້ງດ້ວຍອຸບພາຫິກາ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ ອົງ ໕ ຄື໑. ເປັນຜູ້ໃຫ້ຫຼົງງົມງວາຍ ຣະນຶກບໍ່ໄດ້

໒. ເປັນຜູ້ເວົ້າບໍ່ເປີດໂອກາດ

໓. ບໍ່ເປັນຜູ້ໂຈດຕາມອາບັດໃນທຳແລະວິໄນທີ່ສົມຄວນ

໔. ບໍ່ເປັນຜູ້ປັບຕາມອາບັດໃນທຳແລະວິໄນທີ່ສົມຄວນ

໕. ບໍ່ຊີ້ແຈ່ງຕາມຄວາມເຫັນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ

## ແຕ່ງຕັ້ງດ້ວຍອຸບພາຫິກາ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ ອົງ ໕ ຄື

໑. ເປັນຜູ້ເຕືອນໃຫ້ຣະນຶກ ບໍ່ໃຫ້ຫຼົງງົມງວາຍ

໒. ເປັນຜູ້ເວົ້າເປີດໂອກາດ

໓. ເປັນຜູ້ໂຈດຕາມອາບັດໃນທຳແລະວິໄນທີ່ສົມຄວນ

໔. ເປັນຜູ້ປັບຕາມອາບັດໃນທຳແລະວິໄນທີ່ສົມຄວນ

໕. ຊີ້ແຈ່ງຕາມຄວາມເຫັນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ

## ບໍ່ແຕ່ງຕັ້ງດ້ວຍອຸບພາຫິກາ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ ອົງ ໕ ຄື

໑. ລຳອຽງຍ້ອນຮັກ

໒. ລຳອຽງຍ້ອນຊັງ

໓. ລຳອຽງຍ້ອນຫຼົງ

໔. ລຳອຽງຍ້ອນຢ້ານ

໕. ເປັນອະລັດຊີ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ

## ແຕ່ງຕັ້ງດ້ວຍອຸບພາຫິກາ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ ອົງ ໕ ຄື

໑. ບໍ່ລຳອຽງຍ້ອນຮັກ

໒. ບໍ່ລຳອຽງຍ້ອນຊັງ

໓. ບໍ່ລຳອຽງຍ້ອນຫຼົງ

໔. ບໍ່ລຳອຽງຍ້ອນຢ້ານ

໕. ເປັນລັດຊີ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ

## ບໍ່ແຕ່ງຕັ້ງດ້ວຍອຸບພາຫິກາ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ ອົງ ໕ ຄື

໑. ລຳອຽງຍ້ອນຮັກ

໒. ລຳອຽງຍ້ອນຊັງ

໓. ລຳອຽງຍ້ອນຫຼົງ

໔. ລຳອຽງຍ້ອນຢ້ານ

໕. ບໍ່ສະຫຼາດໃນພຣະວິໄນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງບໍ່ເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ

## ແຕ່ງຕັ້ງດ້ວຍອຸບພາຫິກາ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ ອົງ ໕ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ສະຫຼາດໃນພຣະວິໄນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ສົງເພິ່ງແຕ່ງຕັ້ງດ້ວຍອຸບພາຫິກາ”

## ອົງຂອງພິກຂຸຜູ້ໂງ່ຈ້ຳ

[໔໕໓] ທ່ານພຣະອຸບາລີທູນຖາມວ່າ “ພິກຂຸຜູ້ປະກອບດ້ວຍອົງທີ່ໃດ?ນໍແລ ນັບວ່າເປັນຜູ້ໂງ່ຈ້ຳໂດຍແທ້ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນັບວ່າເປັນຜູ້ໂງ່ຈ້ຳໂດຍແທ້ ອົງ ໕ ຄື

໑. ບໍ່ຮູ້ພຣະສູດ
໒. ບໍ່ຮູ້ຂໍ້ອະນຸໂລມພຣະສູດ
໓. ບໍ່ຮູ້ພຣະວິໄນ
໔. ບໍ່ຮູ້ຂໍ້ອະນຸໂລມພຣະວິໄນ
໕. ບໍ່ສະຫຼາດໃນຖານະອັນຄວນແລະຖານະອັນບໍ່ຄວນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ນັບວ່າໂງ່ຈ້ຳໂດຍແທ້

## ອົງຂອງພິກຂຸຜູ້ສະຫຼາດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນັບວ່າສະຫຼາດໂດຍແທ້ ອົງ ໕ ຄື

໑. ຮູ້ພຣະສູດ
໒. ຮູ້ຂໍ້ອະນຸໂລມພຣະສູດ
໓. ຮູ້ພຣະວິໄນ
໔. ຮູ້ຂໍ້ອະນຸໂລມພຣະວິໄນ
໕. ສະຫຼາດໃນຖານະອັນຄວນແລະຖານະອັນບໍ່ຄວນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ນັບວ່າສະຫຼາດໂດຍແທ້

## ອົງຂອງພິກຂຸຜູ້ໂງ່ຈ້ຳ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ນັບວ່າໂງ່ຈ້ຳໂດຍແທ້ ອົງ ໕ ຄື

໑. ບໍ່ຮູ້ພຣະທຳ
໒. ບໍ່ຮູ້ຂໍ້ອະນຸໂລມພຣະທຳ
໓. ບໍ່ຮູ້ພຣະວິໄນ
໔. ບໍ່ຮູ້ຂໍ້ອະນຸໂລມພຣະວິໄນ
໕. ບໍ່ສະຫຼາດໃນຄຳຕົ້ນແລະຄຳຫຼັງ

dddwອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ນັບວ່າໂງ່ຈ້ຳໂດຍແທ້

## ອົງຂອງພິກຂຸຜູ້ສະຫຼາດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນັບວ່າສະຫຼາດໂດຍແທ້ ອົງ ໕ ຄື

໑. ຮູ້ພຣະທຳ ໒. ຮູ້ຂໍ້ອະນຸໂລມພຣະທຳ

໓. ຮູ້ພຣະວິໄນ ໔. ຮູ້ຂໍ້ອະນຸໂລມພຣະວິໄນ

໕. ສະຫຼາດໃນຄຳຕົ້ນແລະຄຳຫຼັງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ນັບວ່າສະຫຼາດໂດຍແທ້

## ອົງຂອງພິກຂຸຜູ້ໂງ່ຈ້າ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ນັບວ່າໂງ່ຈ້າໂດຍແທ້ ອົງ ໕ ຄື

໑. ບໍ່ຮູ້ວັດຖຸ ໒. ບໍ່ຮູ້ນິທານ

໓. ບໍ່ຮູ້ພຣະບັນຍັດ ໔. ບໍ່ຮູ້ບົດທີ່ຕົກຫຼົ່ນໃນພາຍຫຼັງ

໕. ບໍ່ຮູ້ຄຳເວົ້າອັນກ່ຽວເນື່ອງກັນໄດ້

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ນັບວ່າໂງ່ຈ້າໂດຍແທ້

## ອົງຂອງພິກຂຸຜູ້ສະຫຼາດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນັບວ່າສະຫຼາດໂດຍແທ້ ອົງ ໕ ຄື

໑. ຮູ້ວັດຖຸ ໒. ຮູ້ນິທານ

໓. ຮູ້ພຣະບັນຍັດ ໔. ຮູ້ບົດທີ່ຕົກຫຼົ່ນໃນພາຍຫຼັງ

໕. ຮູ້ຄຳເວົ້າອັນກ່ຽວເນື່ອງກັນໄດ້

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ນັບວ່າສະຫຼາດໂດຍແທ້

## ອົງຂອງພິກຂຸຜູ້ໂງ່ຈ້າ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ນັບວ່າໂງ່ຈ້າໂດຍແທ້ ອົງ ໕ ຄື

໑. ບໍ່ຮູ້ອາບັດ ໒. ບໍ່ຮູ້ສະມຸດຖານແຫ່ງອາບັດ

໓. ບໍ່ຮູ້ປະໂຍຄແຫ່ງອາບັດ ໔. ບໍ່ຮູ້ຄວາມລະງັບອາບັດ

໕. ບໍ່ສະຫຼາດໃນການວິນິດໄສອາບັດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ນັບວ່າໂງ່ຈ້າໂດຍແທ້

## ອົງຂອງພິກຂຸຜູ້ສະຫຼາດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນັບວ່າສະຫຼາດໂດຍແທ້ ອົງ ໕ ຄື

໑. ຮູ້ອາບັດ
໒. ຮູ້ປະໂຍຄະແຫ່ງອາບັດ
໓. ຮູ້ສະມຸດຖານແຫ່ງອາບັດ
໔. ຮູ້ຄວາມລະງັບອາບັດ
໕. ສະຫຼາດໃນການວິນິດໄສອາບັດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ນັບວ່າສະຫຼາດໂດຍແທ້

## ອົງຂອງພິກຂຸຜູ້ໂງ່ຈ້າ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ນັບວ່າໂງ່ຈ້າໂດຍແທ້ ອົງ ໕ ຄື

໑. ບໍ່ຮູ້ອະທິກອນ
໒. ບໍ່ຮູ້ປະໂຍຄະແຫ່ງອະທິກອນ
໓. ບໍ່ຮູ້ສະມຸດຖານແຫ່ງອະທິກອນ
໔. ບໍ່ຮູ້ຄວາມລະງັບອະທິກອນ
໕. ບໍ່ສະຫຼາດໃນການວິນິດໄສອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ນັບວ່າໂງ່ຈ້າໂດຍແທ້

## ອົງຂອງພິກຂຸຜູ້ສະຫຼາດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນັບວ່າສະຫຼາດໂດຍແທ້ ອົງ ໕ ຄື

໑. ຮູ້ອະທິກອນ
໒. ຮູ້ປະໂຍຄະແຫ່ງອະທິກອນ
໓. ຮູ້ສະມຸດຖານແຫ່ງອະທິກອນ
໔. ຮູ້ຄວາມລະງັບອະທິກອນ
໕. ສະຫຼາດໃນການວິນິດໄສອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ນັບວ່າສະຫຼາດໂດຍແທ້”

**ອຸບພາຫິກະວັກທີ ໗ ຈົບ**

## ຫົວຂໍ້ປະຈຳວັກ

ພິກຂຸບໍ່ສະຫຼາດໃນອັດຖະ ມັກໂກດ ຍົວະໃຫ້ໂກດ ບໍ່ຫຼີກງົມງວາຍ
ລຳອຽງຍ້ອນຮັກ ບໍ່ສະຫຼາດ ບໍ່ສະຫຼາດອີກ ສຸຕະ ທຳ
ວັດຖຸ ອາບັດ ອະທິກອນ ທັງສອງຝ່າຍທ່ານປະກາດໄວ້ໝົດແລ້ວ
ຂໍທ່ານທັງຫຼາຍຈົ່ງເຂົ້າໃຈທັງຝ່າຍດຳ ແລະຝ່າຍຂາວ ເທີ້ນ

# ໑໐. ອະທິກະຣະນະວູປະສະມະວັກ

## ໝວດວ່າດ້ວຍການລະງັບອະທິກອນ

### ອົງຂອງພິກຂຸຜູ້ບໍ່ຄວນລະງັບອະທິກອນ

[໔໕໗] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ປະກອບດ້ວຍອົງທີ່ໃດ?ນໍແລ ບໍ່ຄວນລະງັບອະທິກອນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ບໍ່ຄວນລະງັບອະທິກອນ ອົງ ໕ ຄື

໑. ບໍ່ຮູ້ອາບັດ
໒. ບໍ່ຮູ້ປະໂຍຄະແຫ່ງອາບັດ
໓. ບໍ່ຮູ້ສະມຸດຖານແຫ່ງອາບັດ
໔. ບໍ່ຮູ້ຄວາມລະງັບອາບັດ
໕. ບໍ່ສະຫຼາດໃນການວິນິດໄສອາບັດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນລະງັບອະທິກອນ

### ອົງຂອງພິກຂຸຜູ້ຄວນລະງັບອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນລະງັບອະທິກອນ ອົງ ໕ ຄື

໑. ຮູ້ອາບັດ
໒. ຮູ້ປະໂຍຄະແຫ່ງອາບັດ
໓. ຮູ້ສະມຸດຖານແຫ່ງອາບັດ
໔. ຮູ້ຄວາມລະງັບອາບັດ
໕. ສະຫຼາດໃນການວິນິດໄສອາບັດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນລະງັບອະທິກອນ

### ອົງຂອງພິກຂຸຜູ້ບໍ່ຄວນລະງັບອະທິກອນ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຄວນລະງັບອະທິກອນ ອົງ ໕ ຄື

໑. ບໍ່ຮູ້ອະທິກອນ
໒. ບໍ່ຮູ້ປະໂຍຄະແຫ່ງອະທິກອນ
໓. ບໍ່ຮູ້ສະມຸດຖານແຫ່ງອະທິກອນ
໔. ບໍ່ຮູ້ຄວາມລະງັບອະທິກອນ
໕. ບໍ່ສະຫຼາດໃນການວິນິດໄສອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນລະງັບອະທິກອນ

### ອົງຂອງພິກຂຸຜູ້ຄວນລະງັບອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນລະງັບອະທິກອນ ອົງ ໕ ຄື

໑. ຮູ້ອະທິກອນ ໒. ຮູ້ສະມຸດຖານແຫ່ງອະທິກອນ
໓. ຮູ້ປະໂຍຄະແຫ່ງອະທິກອນ ໔. ຮູ້ຄວາມລະງັບອະທິກອນ
໕. ສະຫຼາດໃນການວິນິດໄສອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນລະງັບອະທິກອນ

## ອົງຂອງພິກຂຸຜູ້ບໍ່ຄວນລະງັບອະທິກອນ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຄວນລະງັບອະທິກອນ ອົງ ໕ ຄື

໑. ລຳອຽງຍ້ອນຮັກ ໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ ໔. ລຳອຽງຍ້ອນຢ້ານ
໕. ເປັນອະລັດຊີ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນລະງັບອະທິກອນ

## ອົງຂອງພິກຂຸຜູ້ຄວນລະງັບອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນລະງັບອະທິກອນ ອົງ ໕ ຄື

໑. ບໍ່ລຳອຽງຍ້ອນຮັກ ໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ ໔. ບໍ່ລຳອຽງຍ້ອນຢ້ານ
໕. ເປັນລັດຊີ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນລະງັບອະທິກອນ

## ອົງຂອງພິກຂຸຜູ້ບໍ່ຄວນລະງັບອະທິກອນ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຄວນລະງັບອະທິກອນ ອົງ ໕ ຄື

໑. ລຳອຽງຍ້ອນຮັກ ໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ ໔. ລຳອຽງຍ້ອນຢ້ານ
໕. ໄດ້ຍິນໄດ້ຟັງໜ້ອຍ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນລະງັບອະທິກອນ

## ອົງຂອງພິກຂຸຜູ້ຄວນລະງັບອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນລະງັບອະທິກອນ ອົງ ໕ ຄື

໑. ບໍ່ລຳອຽງຍ້ອນຮັກ ໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ ໔. ບໍ່ລຳອຽງຍ້ອນຢ້ານ

໕. ເປັນພະຫູສູດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນລະງັບອະທິກອນ

ອົງຂອງພິກຂຸຜູ້ບໍ່ຄວນລະງັບອະທິກອນ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຄວນລະງັບອະທິກອນ ອົງ ໕ ຄື

໑. ບໍ່ຮູ້ວັດຖຸ
໒. ບໍ່ຮູ້ພຣະບັນຍັດ
໓. ບໍ່ຮູ້ຄຳເວົ້າອັນກ່ຽວເນື່ອງກັນໄດ້
໔. ບໍ່ຮູ້ນິທານ
໕. ບໍ່ຮູ້ບົດທີ່ຕົກຫຼົ່ນໃນພາຍຫຼັງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນລະງັບອະທິກອນ

## ອົງຂອງພິກຂຸຜູ້ຄວນລະງັບອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນລະງັບອະທິກອນ ອົງ ໕ ຄື

໑. ຮູ້ວັດຖຸ
໒. ຮູ້ພຣະບັນຍັດ
໓. ຮູ້ຄຳເວົ້າອັນກ່ຽວເນື່ອງກັນໄດ້
໔. ຮູ້ນິທານ
໕. ຮູ້ບົດທີ່ຕົກຫຼົ່ນໃນພາຍຫຼັງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນລະງັບອະທິກອນ

## ອົງຂອງພິກຂຸຜູ້ບໍ່ຄວນລະງັບອະທິກອນ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຄວນລະງັບອະທິກອນ ອົງ ໕ ຄື

໑. ລຳອຽງຍ້ອນຮັກ
໒. ລຳອຽງຍ້ອນຫຼົງ
໓. ບໍ່ສະຫຼາດໃນພຣະວິໄນ
໔. ລຳອຽງຍ້ອນຊັງ
໕. ລຳອຽງຍ້ອນຢ້ານ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນລະງັບອະທິກອນ

## ອົງຂອງພິກຂຸຜູ້ຄວນລະງັບອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນລະງັບອະທິກອນ ອົງ ໕ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຫຼົງ
໓. ສະຫຼາດໃນພຣະວິໄນ
໔. ບໍ່ລຳອຽງຍ້ອນຊັງ
໕. ບໍ່ລຳອຽງຍ້ອນຢ້ານ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນລະງັບອະທິກອນ

## ອົງຂອງພິກຂຸຜູ້ບໍ່ຄວນລະງັບອະທິກອນ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຄວນລະງັບອະທິກອນ ອົງ ໕ ຄື

໑. ລຳອຽງຍ້ອນຮັກ
໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ
໔. ລຳອຽງຍ້ອນຢ້ານ
໕. ໜັກໃນບຸກຄົນ ບໍ່ໜັກໃນສົງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນລະງັບອະທິກອນ

## ອົງຂອງພິກຂຸຜູ້ຄວນລະງັບອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນລະງັບອະທິກອນ ອົງ ໕ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ໜັກໃນສົງ ບໍ່ໜັກໃນບຸກຄົນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນລະງັບອະທິກອນ

## ອົງຂອງພິກຂຸຜູ້ບໍ່ຄວນລະງັບອະທິກອນ ອີກໄນໜຶ່ງ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຄວນລະງັບອະທິກອນ ອົງ ໕ ຄື

໑. ລຳອຽງຍ້ອນຮັກ
໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ
໔. ລຳອຽງຍ້ອນຢ້ານ
໕. ໜັກໃນອາມິດ ບໍ່ໜັກໃນສັດທຳ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນລະງັບອະທິກອນ

## ອົງຂອງພິກຂຸຜູ້ຄວນລະງັບອະທິກອນ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ຄວນລະງັບອະທິກອນ ອົງ ໕ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ໜັກໃນສັດທຳ ບໍ່ໜັກໃນອາມິດ

ອຸບາລີ ພິກຂຸຜູ້ປະກອບດ້ວຍອົງ ໕ ນີ້ແລ ຄວນລະງັບອະທິກອນ”

## ສິ່ງແຕກກັນ

[໕໕໘] ທ່ານພຣະອຸບາລີທູນຖາມວ່າ "ສົງແຕກກັນດ້ວຍອາການທໍ່ໃດ?ນໍແລ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ສົງແຕກກັນດ້ວຍອາການ ໕ ຢ່າງ ອາການ ໕ ຢ່າງ ຄື

໑. ກຳ
໒. ອຸດເທດ
໓. ຊີ້ແຈ່ງ
໔. ສູດປະກາດ
໕. ໃຫ້ຈັບສະຫຼາກ

ອຸບາລີ ສົງແຕກກັນດ້ວຍອາການ ໕ ນີ້ແລ"

## ສັງຄະຣາຊີ ແລະສັງຄະເພດ

ທ່ານພຣະອຸບາລີທູນຖາມວ່າ "ທີ່ຮຽກວ່າ ສັງຄະຣາຊີ ສັງຄະຣາຊີ ດ້ວຍອາການພຽງໃດ ຈຶ່ງເປັນສັງຄະຣາຊີ ແຕ່ບໍ່ເປັນສັງຄະເພດ ແລະກໍດ້ວຍອາການພຽງໃດ ເປັນທັງສັງຄະຣາຊີແລະສັງຄະເພດ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ອາຄັນຕຸກະຂໍ້ວັດປະຕິບັດນັ້ນເຮົາບັນຍັດໄວ້ແລ້ວສຳລັບພິກຂຸ ອາຄັນຕຸກະທັງຫຼາຍ ເມື່ອສິກຂາບົດອັນເຮົາບັນຍັດໄວ້ຮຽບຮ້ອຍແນວນີ້ແລ້ວ ພິກຂຸອາຄັນຕຸກະ ທັງຫຼາຍກໍຍັງບໍ່ປະພຶດໃນອາຄັນຕຸກະຂໍ້ວັດປະຕິບັດ ອຸບາລີ ແມ່ນແນວນີ້ແລເປັນສັງຄະຣາຊີ ແຕ່ບໍ່ເປັນສັງຄະເພດ

ອຸບາລີ ອາວາສິກະຂໍ້ວັດປະຕິບັດນັ້ນເຮົາບັນຍັດໄວ້ແລ້ວສຳລັບພິກຂຸຜູ້ຢູ່ປະຈຳໃນອາວາດທັງຫຼາຍ ເມື່ອສິກຂາບົດອັນເຮົາບັນຍັດໄວ້ຮຽບຮ້ອຍແນວນີ້ແລ້ວ ພິກຂຸຜູ້ຢູ່ປະຈຳໃນອາວາດທັງຫຼາຍ ກໍຍັງບໍ່ປະພຶດໃນອາວາສິກະຂໍ້ວັດປະຕິບັດ ອຸບາລີ ແມ່ນແນວນີ້ແລເປັນສັງຄະຣາຊີ ແຕ່ບໍ່ເປັນສັງຄະເພດ

ອຸບາລີ ພັດຕັກຄະຂໍ້ວັດປະຕິບັດນັ້ນເຮົາບັນຍັດໄວ້ແລ້ວສຳລັບພິກຂຸທັງຫຼາຍຕາມລຳດັບຜູ້ແກ່ກວ່າ ຕາມລຳດັບຣາຕີ ຕາມສົມຄວນ ຄື ອາສະນະອັນເລີດ ນ້ຳອັນເລີດ ບິນທະບາດອັນເລີດເມື່ອສິກຂາບົດອັນເຮົາບັນຍັດໄວ້ຮຽບຮ້ອຍແນວນີ້ແລ້ວ ພິກຂຸນະວະກະທັງຫຼາຍກໍຍັງພາກັນກີດກັນອາສະນະໃນໂຮງພັດສຳລັບພຣະເຖຣະສາ ອຸບາລີ ແມ່ນແນວນີ້ແລເປັນສັງຄະຣາຊີ ແຕ່ບໍ່ເປັນສັງຄະເພດ

ອຸບາລີ ເສນາສະນະຂໍ້ວັດປະຕິບັດໃນເສນາສະນະນັ້ນເຮົາບັນຍັດໄວ້ແລ້ວສຳລັບພິກຂຸທັງຫຼາຍຕາມ ລຳດັບຜູ້ແກ່ກວ່າ ຕາມລຳດັບຣາຕີ ຕາມສົມຄວນ ເມື່ອສິກຂາບົດອັນເຮົາບັນຍັດ

ໄວ້ຮຽບຮ້ອຍ ແນວນີ້ແລ້ວ ພິກຂຸນະວະກະທັງຫຼາຍກໍຍັງພາກັນກີດກັນເສນາສະນະສຳລັບພຣະເຖຣະສາ ອຸບາລີ ແມ່ນແນວນີ້ແລເປັນສັງຄະຣາຊີ ແຕ່ບໍ່ເປັນສັງຄະເພດ

ອຸບາລີ ອຸໂປສົດແນວດຽວກັນ ປະວາຣະນາແນວດຽວກັນ ສັງຄະກຳແນວດຽວກັນ ກຳນ້ອຍໃຫຍ່ແນວດຽວກັນ ພາຍໃນສີມານັ້ນ ເຮົາບັນຍັດໄວ້ແລ້ວແກ່ພິກຂຸທັງຫຼາຍ

ເມື່ອສິກຂາບົດອັນເຮົາບັນຍັດໄວ້ຮຽບຮ້ອຍແນວນີ້ແລ້ວ ພິກຂຸທັງຫຼາຍກະທຳຄວາມແຕກແຍກກັນແລ້ວ ແບ່ງເປັນກຸ່ມແຍກກັນເຮັດອຸໂປສົດ ແຍກກັນເຮັດປະວາຣະນາ ແຍກກັນເຮັດສັງຄະກຳ ແຍກກັນເຮັດກຳໃຫຍ່ນ້ອຍ ພາຍໃນສີມານັ້ນເອງ ອຸບາລີ ແມ່ນແນວນີ້ແລເປັນທັງສັງຄະຣາຊີ ແລະສັງຄະເພດ

**ອະທິກະຣະນະວູປະສະມະວັກທີ ໑໐ ຈົບ**

## ຫົວຂໍ້ປະຈຳວັກ

ພິກຂຸຮູ້ອາບັດ ອະທິກອນ ພິກຂຸລຳອຽງຍ້ອນຮັກ
ພິກຂຸໄດ້ຍິນໄດ້ຟັງໜ້ອຍ ພິກຂຸບໍ່ຮູ້ວັດຖຸ ບໍ່ສະຫຼາດ
ພິກຂຸບໍ່ໜັກໃນບຸກຄົນ ພິກຂຸບໍ່ໜັກໃນອາມິດ ສົງແຕກກັນ
ສັງຄະຣາຊີ ແລະສັງຄະເພດ

## ໑໑. ສັງຄະເພທະກະວັກ

## ໝວດວ່າດ້ວຍພິກຂຸຜູ້ທຳລາຍສົງ

## ອົງຂອງພິກຂຸຜູ້ທຳລາຍສົງມີໂທດ

[໔໕໗] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງທີ່ໃດ?ນໍແລຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ
໒. ສະແດງທຳວ່າເປັນອະທຳ
໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ

໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ

໕. ເຊື່ອງຄວາມເຫັນດ້ວຍກຳ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ

໒. ສະແດງທຳວ່າເປັນອະທຳ

໓. ສະແດງສິ່ງບໍ່ແມ່ນວິໄນວ່າເປັນວິໄນ

໔. ສະແດງວິໄນວ່າເປັນສິ່ງບໍ່ແມ່ນວິໄນ

໕. ເຊື່ອງຄວາມເຫັນດ້ວຍອຸດເທດ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ

໒. ສະແດງທຳວ່າເປັນອະທຳ

໓. ສະແດງສິ່ງບໍ່ແມ່ນວິໄນວ່າເປັນວິໄນ

໔. ສະແດງວິໄນວ່າເປັນສິ່ງບໍ່ແມ່ນວິໄນ

໕. ຊີ້ແຈ່ງເຊື່ອງຄວາມເຫັນ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຮົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ

໒. ສະແດງທຳວ່າເປັນອະທຳ

໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ

໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ

໕. ເຊື່ອງຄວາມເຫັນດ້ວຍສູດປະກາດ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ຕ້ອງໄປເກີດໃນ
ອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ
໒. ສະແດງທຳວ່າເປັນອະທຳ
໓. ສະແດງສິ່ງບໍ່ແມ່ນວິໄນວ່າເປັນວິໄນ
໔. ສະແດງວິໄນວ່າເປັນສິ່ງບໍ່ແມ່ນວິໄນ
໕. ເຊື່ອງຄວາມເຫັນດ້ວຍການໃຫ້ຈັບສະຫຼາກ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ
໒. ສະແດງທຳວ່າເປັນອະທຳ
໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ
໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ
໕. ເຊື່ອງຄວາມເຫັນຖືກດ້ວຍກຳ

ຯລຯ ເຊື່ອງຄວາມເຫັນຖືກດ້ວຍອຸດເທດ ຯລຯ ຊີ້ແຈ່ງເຊື່ອງຄວາມເຫັນຖືກ ຯລຯ ເຊື່ອງຄວາມເຫັນຖືກດ້ວຍສູດປະກາດ ຯລຯ ເຊື່ອງຄວາມເຫັນຖືກດ້ວຍການໃຫ້ຈັບສະຫຼາກ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ
໒. ສະແດງທຳວ່າເປັນອະທຳ
໓. ສະແດງສິ່ງທີ່ມິໃຊ່ວິໄນວ່າເປັນວິໄນ
໔. ສະແດງວິໄນວ່າເປັນສິ່ງທີ່ມິໃຊ່ວິໄນ
໕. ເຊື່ອງຄວາມພໍໃຈດ້ວຍກຳ

ຯລຯ ເຊື່ອງຄວາມພໍໃຈດ້ວຍອຸດເທດ ຯລຯ ຊີ້ແຈ່ງເຊື່ອງຄວາມພໍໃຈ ຯລຯ ເຊື່ອງຄວາມພໍໃຈດ້ວຍສູດປະກາດ ຯລຯ ເຊື່ອງຄວາມພໍໃຈດ້ວຍການໃຫ້ຈັບສະຫຼາກ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ
໒. ສະແດງທຳວ່າເປັນອະທຳ
໓. ສະແດງສິ່ງທີ່ມິໃຊວິໄນວ່າເປັນວິໄນ
໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ
໕. ເຊື່ອງສັນຍາດ້ວຍກຳ

ຯລຯ ເຊື່ອງສັນຍາດ້ວຍອຸດເທດ ຯລຯ ຊີ້ແຈ່ງເຊື່ອງສັນຍາ ຯລຯ ເຊື່ອງສັນຍາດ້ວຍສູດປະກາດ ຯລຯ ເຊື່ອງສັນຍາດ້ວຍການໃຫ້ຈັບສະຫຼາກ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ຕ້ອງໄປເກີດໃນອະບາຍ ຕ້ອງໄປເກີດໃນນະຣົກ ດຳລົງຢູ່ຊົ່ວກັບ ແກ້ໄຂບໍ່ໄດ້"

**ສັງຄະເພທະກະວັກທີ ໑໑ ຈົບ**

## ຫົວຂໍ້ປະຈຳວັກ

ພິກຂຸເຊື່ອງຄວາມເຫັນດ້ວຍກຳ ດ້ວຍອຸດເທດ
ດ້ວຍການຊີ້ແຈ່ງ ດ້ວຍການສູດປະກາດ ດ້ວຍການໃຫ້ຈັບສະຫຼາກ ນີ້ ລວມເປັນ ໕
ອົງຄວາມເຫັນ ຄວາມເຫັນຖືກ ຄວາມພໍໃຈ
ແລະສັນຍາ ໓ ຢ່າງນັ້ນ ມີໄນ ແຍກເປັນ ໕ ໄນແລ

# ໑໘. ທຸຕິຍະສັງຄະເພທະກະວັກ

## ໝວດວ່າດ້ວຍພິກຂຸຜູ້ທຳລາຍສົງ ໝວດທີ ໘

### ອົງຂອງພິກຂຸຜູ້ທຳລາຍສົງບໍ່ມີໂທດ

[໔໙໐] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງທີ່ໃດ?ນໍແລ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ
໒. ສະແດງທຳວ່າເປັນອະທຳ
໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ
໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ
໕. ບໍ່ເຊື່ອງຄວາມເຫັນດ້ວຍກຳ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອີກຢ່າງ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ
໒. ສະແດງທຳວ່າເປັນອະທຳ
໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ
໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ
໕. ບໍ່ເຊື່ອງຄວາມເຫັນດ້ວຍອຸດເທດ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ

໒. ສະແດງທຳວ່າເປັນອະທຳ

໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ

໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ

໕. ຊີ້ແຈ່ງບໍ່ເຊື່ອງຄວາມເຫັນ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ

໒. ສະແດງທຳວ່າເປັນອະທຳ

໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ

໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ

໕. ບໍ່ເຊື່ອງຄວາມເຫັນດ້ວຍສູດປະກາດ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ

໒. ສະແດງທຳວ່າເປັນອະທຳ

໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ

໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ

໕. ບໍ່ເຊື່ອງຄວາມເຫັນດ້ວຍການໃຫ້ຈັບສະຫຼາກ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ

໒. ສະແດງທຳວ່າເປັນອະທຳ

໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ

໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ

໕. ບໍ່ເຊື່ອງຄວາມເຫັນຖືກດ້ວຍກຳ

ຯລຯ ບໍ່ເຊື່ອງຄວາມເຫັນຖືກດ້ວຍອຸດເທດ ຯລຯ ບໍ່ຊີ້ແຈ່ງເຊື່ອງຄວາມເຫັນຖືກ ຯລຯ ບໍ່ເຊື່ອງຄວາມເຫັນຖືກດ້ວຍສູດປະກາດ ຯລຯ ບໍ່ເຊື່ອງຄວາມເຫັນຊອບດ້ວຍການໃຫ້ຈັບສະຫຼາກ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ

໒. ສະແດງທຳວ່າເປັນອະທຳ

໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ

໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ

໕. ບໍ່ເຊື່ອງຄວາມພໍໃຈດ້ວຍກຳ

ຯລຯ ບໍ່ເຊື່ອງຄວາມພໍໃຈດ້ວຍອຸດເທດ ຯລຯ ບໍ່ຊີ້ແຈ່ງເຊື່ອງຄວາມພໍໃຈ ຯລຯ ບໍ່ເຊື່ອງຄວາມພໍໃຈດ້ວຍສູດປະກາດ ຯລຯ ບໍ່ເຊື່ອງຄວາມພໍໃຈດ້ວຍການ ໃຫ້ຈັບສະຫຼາກ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ແມ່ນອື່ນອີກ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້ ອົງ ໕ ຄື

໑. ສະແດງອະທຳວ່າເປັນທຳ

໒. ສະແດງທຳວ່າເປັນອະທຳ

໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ

໔. ສະແດງວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ

໕. ບໍ່ເຊື່ອງສັນຍາດ້ວຍກຳ

ຯລຯ ບໍ່ເຊື່ອງສັນຍາດ້ວຍອຸດເທດ ຯລຯ ບໍ່ຊີ້ແຈ່ງບໍ່ເຊື່ອງສັນຍາ ຯລຯ ບໍ່ ເຊື່ອງສັນຍາດ້ວຍສູດປະກາດ ຯລຯ ບໍ່ເຊື່ອງສັນຍາດ້ວຍການໃຫ້ຈັບສະຫຼາກ

ອຸບາລີ ພິກຂຸຜູ້ທຳລາຍສົງປະກອບດ້ວຍອົງ ໕ ນີ້ແລ ບໍ່ຕ້ອງໄປເກີດໃນອະບາຍ ບໍ່ຕ້ອງໄປເກີດໃນນະຮົກ ບໍ່ຕ້ອງດຳລົງຢູ່ຊົ່ວກັບ ບໍ່ແມ່ນແກ້ໄຂບໍ່ໄດ້"

**ທຸຕິຍະສັງຄະເພທະກະວັກທີ ໑໘ ຈົບ**

## ຫົວຂໍ້ປະຈຳວັກ

ພິກຂຸບໍ່ເຊື່ອງຄວາມເຫັນດ້ວຍກຳ ດ້ວຍອຸດເທດ ດ້ວຍການຊີ້ແຈ່ງ ດ້ວຍການສູດປະກາດ ດ້ວຍການໃຫ້ຈັບສະຫຼາກ ນີ້ລວມເປັນ ໕ ອົງຄວາມເຫັນ ຄວາມເຫັນຖືກ ຄວາມພໍໃຈ ແລະສັນຍາ ໓ ຢ່າງນັ້ນ ມີໃນແຍກເປັນ ໕ ໃນແລ ຂໍທ່ານທັງຫຼາຍຈົ່ງຮູ້ ໔໐ ວິທີຖ້ອນ ໃນຝ່າຍຂາວ ຄື ໔໐ ວິທີຖ້ອນໃນຝ່າຍດຳທາງຫຼັງ ເທີ້ນ

## ໑໓. ອາວາສິກະວັກ

## ໝວດວ່າດ້ວຍພິກຂຸຜູ້ຢູ່ໃນອາວາດ

## ອົງຂອງພິກຂຸຜູ້ຢູ່ໃນອາວາດ

[໕໖໑] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ຢູ່ປະຈຳໃນອາວາດປະກອບດ້ວຍ ອົງທໍ່ໃດ?ນໍແລ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄືຖືກໂຍນລົງນະຣົກ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ຢູ່ປະຈຳໃນອາວາດປະກອບດ້ວຍອົງ ໕ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄືຖືກໂຍນລົງນະຣົກ ອົງ ໕ ຄື

໑. ລຳອຽງຍ້ອນຮັກ ໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ ໔. ລຳອຽງຍ້ອນຢ້ານ
໕. ໃຊ້ສອຍຂອງສົງຄືຂອງສ່ວນໂຕ

ອຸບາລີ ພິກຂຸຜູ້ຢູ່ໃນອາວາດປະກອບດ້ວຍອົງ ໕ ນີ້ແລ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄືຖືກໂຍນລົງນະຣົກ

ອຸບາລີ ພິກຂຸຜູ້ຢູ່ໃນອາວາດປະກອບດ້ວຍອົງ ໕ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄືຖືກສົ່ງຂຶ້ນສະຫວັນ ອົງ ໕ ຄື

໑. ບໍ່ລຳອຽງຍ້ອນຮັກ ໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ ໔. ບໍ່ລຳອຽງຍ້ອນຢ້ານ
໕. ບໍ່ໃຊ້ສອຍຂອງສົງຄືຂອງສ່ວນໂຕ

ອຸບາລີ ພິກຂຸຜູ້ຢູ່ໃນອາວາດປະກອບດ້ວຍອົງ ໕ ນີ້ແລ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄືຖືກສົ່ງຂຶ້ນສະຫວັນ"

## ການຊີ້ແຈ່ງພຣະວິໄນບໍ່ຊອບທຳ

[໔໖໔] ທ່ານພຣະອຸບາລີທູນຖາມວ່າ “ການຊີ້ແຈ່ງພຣະວິໄນທີ່ບໍ່ຖືກຕ້ອງຕາມທຳມີທໍ່ໃດ? ນໍແລ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ອຸບາລີ ການຊີ້ແຈ່ງພຣະວິໄນທີ່ບໍ່ຖືກຕ້ອງຕາມທຳມີ ໕ ຢ່າງ ຄື

ອຸບາລີ ພິກຂຸໃນທຳວິໄນນີ້

໑. ກຳນົດອະທຳວ່າເປັນທຳ
໒. ກຳນົດທຳວ່າເປັນອະທຳ
໓. ກຳນົດສິ່ງທີ່ບໍ່ແມ່ນວິໄນວ່າເປັນວິໄນ
໔. ກຳນົດວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ
໕. ບັນຍັດສິ່ງທີ່ບໍ່ໄດ້ຊົງບັນຍັດ ຖອນຂໍ້ທີພຣະພຸດທະເຈົ້າຊົງບັນຍັດໄວ້

ອຸບາລີ ການຊີ້ແຈ່ງພຣະວິໄນ ໕ ຢ່າງນີ້ແລ ບໍ່ຊອບທຳ

ອຸບາລີ ການຊີ້ແຈ່ງພຣະວິໄນທີ່ຊອບທຳມີ ໕ ຢ່າງ ໕ ຢ່າງ ມີອັນໃດແດ່ ຄື

ອຸບາລີ ພິກຂຸໃນທຳວິໄນນີ້

໑. ກຳນົດອະທຳວ່າເປັນອະທຳ
໒. ກຳນົດທຳວ່າເປັນທຳ
໓. ກຳນົດສິ່ງທີ່ບໍ່ແມ່ນວິໄນວ່າເປັນສິ່ງທີ່ບໍ່ແມ່ນວິໄນ
໔. ກຳນົດວິໄນວ່າເປັນວິໄນ
໕. ບໍ່ບັນຍັດສິ່ງທີ່ບໍ່ໄດ້ຊົງບັນຍັດ ບໍ່ຖອນພຣະບັນຍັດທີ່ພຣະພຸດທະເຈົ້າຊົງບັນຍັດໄວ້

ອຸບາລີ ການຊີ້ແຈ່ງພຣະວິໄນ ໕ ຢ່າງນີ້ແລ ຊອບທຳ

## ອົງຂອງພິກຂຸຜູ້ແຈກພັດ

[໔໖໓] ທ່ານພຣະອຸບາລີທູນຖາມວ່າ “ພິກຂຸຜູ້ແຈກພັດປະກອບດ້ວຍອົງທໍ່ໃດ?ນໍແລ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄືຖືກໂຍນລົງນະຮົກ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ອຸບາລີ ພິກຂຸຜູ້ແຈກພັດປະກອບດ້ວຍອົງ ໕ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄືຖືກໂຍນລົງນະຮົກ ອົງ ໕ ຄື

໑. ລຳອຽງຍ້ອນຮັກ
໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ
໔. ລຳອຽງຍ້ອນຢ້ານ
໕. ບໍ່ຮູ້ຈັກອາຫານທີ່ແຈກແລະອາຫານທີ່ຍັງບໍ່ໄດ້ແຈກ

ອຸບາລີ ພິກຂຸຜູ້ແຈກພັດປະກອບດ້ວຍອົງ ໕ ນີ້ແລ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄື ຖືກໂຍນລົງນະຮົກ

ອຸບາລີ ພິກຂຸຜູ້ແຈກພັດປະກອບດ້ວຍອົງ ໕ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄືຖືກສົ່ງຂຶ້ນສະຫວັນ ອົງ ໕ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ຈັກອາຫານທີ່ແຈກແລະອາຫານທີ່ຍັງບໍ່ໄດ້ແຈກ

ອຸບາລີ ພິກຂຸຜູ້ແຈກພັດປະກອບດ້ວຍອົງ ໕ ນີ້ແລ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄື ຖືກສົ່ງຂຶ້ນສະຫວັນ"

## ອົງຂອງພິກຂຸຜູ້ແຕ່ງຕັ້ງເສນາສະນະ ເປັນຕົ້ນ

[໔໖໔] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ແຕ່ງຕັ້ງເສນາສະນະປະກອບດ້ວຍອົງທີ່ໃດ? ນໍແລ ຂ້ານ້ອຍ

ພິກຂຸຜູ້ຮັກສາຄັງເກັບພັດສະດຸ ຯລຯ ພິກຂຸຜູ້ຮັບຈີວອນ ຯລຯ ພິກຂຸຜູ້ແຈກຈີວອນ ຯລຯ

ພິກຂຸຜູ້ແຈກຍາຄູ ຯລຯ ພິກຂຸຜູ້ແຈກໝາກໄມ້ ຯລຯ ພິກຂຸຜູ້ແຈກຂອງຫຍໍ້າ ຯລຯ ພິກຂຸຜູ້ແຈກຂອງເລັກໜ້ອຍ ຯລຯ ພິກຂຸຜູ້ໃຫ້ຮັບຜ້າສາດົກ ຯລຯ ພິກຂຸຜູ້ໃຫ້ຮັບບາດ ຯລຯ ພິກຂຸຜູ້ໃຊ້ຄົນທຳງານວັດ ຯລຯ

ພິກຂຸຜູ້ໃຊ້ສາມະເນນປະກອບດ້ວຍອົງທີ່ໃດ?ນໍແລ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄື ຖືກໂຍນລົງນະຮົກ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ໃຊ້ສາມະເນນປະກອບດ້ວຍອົງ ໕ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄືຖືກໂຍນລົງນະຮົກ ອົງ ໕ ຄື

໑. ລຳອຽງຍ້ອນຮັກ
໒. ລຳອຽງຍ້ອນຊັງ
໓. ລຳອຽງຍ້ອນຫຼົງ
໔. ລຳອຽງຍ້ອນຢ້ານ
໕. ບໍ່ຮູ້ຈັກງານທີ່ຄວນໃຊ້ແລະງານທີ່ຍັງບໍ່ໄດ້ໃຊ້

ອຸບາລີ ພິກຂຸຜູ້ໃຊ້ສາມະເນນປະກອບດ້ວຍອົງ ໕ ນີ້ແລ ເກັບຂອງສົງຕາມທີ່ນຳມາ ເກັບໄວ້ ຄືຖືກໂຍນລົງນະຮົກ

ອຸບາລີ ພິກຂຸຜູ້ໃຊ້ສາມະເນນປະກອບດ້ວຍອົງ ໕ ເກັບຂອງສົງຕາມທີ່ນຳມາເກັບໄວ້ ຄື ຖືກສົ່ງຂຶ້ນສະຫວັນ ອົງ ໕ ຄື

໑. ບໍ່ລຳອຽງຍ້ອນຮັກ ໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ ໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ຈັກງານທີ່ຄວນໃຊ້ແລະງານທີ່ຍັງບໍ່ໄດ້ໃຊ້

ອຸບາລີ ພິກຂຸຜູ້ໃຊ້ສາມະເນນປະກອບດ້ວຍອົງ ໕ ນີ້ແລ ເກັບຂອງສົ່ງຕາມທີ່ນຳມາ ເກັບໄວ້ ຄືຖືກສົ່ງຂຶ້ນສະຫວັນ"

**ອາວາສິກະວັກທີ ໑໓ ຈົບ**

## ຫົວຂໍ້ປະຈຳວັກ

ພິກຂຸຜູ້ຢູ່ໃນອາວາດ ຊີ້ແຈ່ງພຣະວິໄນ ພິກຂຸຜູ້ແຈກພັດ
ພິກຂຸຜູ້ແຕ່ງຕັ້ງເສນາສະນະ ພິກຂຸຜູ້ຮັກສາຄັງເກັບພັດສະດຸ
ພິກຂຸຜູ້ຮັບຈີວອນ ພິກຂຸຜູ້ແຈກຈີວອນ ພິກຂຸຜູ້ແຈກຢາຄູ
ຜູ້ແຈກໝາກໄມ້ ຜູ້ແຈກຂອງຫຍ້ຳ ຜູ້ແຈກຂອງເລັກໜ້ອຍ
ພິກຂຸຜູ້ໃຫ້ຮັບຜ້າສາດົກ ພິກຂຸຜູ້ໃຫ້ຮັບບາດ
ພິກຂຸຜູ້ໃຊ້ຄົນທຳງານວັດ ພິກຂຸຜູ້ໃຊ້ສາມະເນນ

## ໑໔. ກະຖິນັດຖານະວັກ

## ໝວດວ່າດ້ວຍການ ການກະຖິນ

## ອານິສົງການກະຖິນ

[໔໙໕] ທ່ານພຣະອຸບາລີທູນຖາມວ່າ "ການ ການກະຖິນມີອານິສົງທີ່ໃດ?ນໍແລ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ການ ການກະຖິນມີອານິສົງ ໕ ຢ່າງນີ້ ຄື

໑. ທ່ຽວໄປບໍ່ຕ້ອງບອກລາ ໒. ບໍ່ຕ້ອງຖືໄຕຣຈີວອນໄປຄົບຊຸດ
໓. ສັນຄະນະໂພຊະນະໄດ້ ໔. ຊົງອະຕິເຣກຈີວອນໄວ້ໄດ້ຕາມຕ້ອງການ
໕. ພວກທ່ານຈະໄດ້ຈີວອນທີ່ເກີດຂຶ້ນໃນບ່ອນນັ້ນ

ອຸບາລີ ການ ການກະຖິນມີອານິສົງ ໕ ຢ່າງນີ້ແລ

## ໂທດຂອງການນອນລືມສະຕິ

[໔໙໖] ທ່ານພຣະອຸບາລີທູນຖາມວ່າ "ບຸກຄົນຜູ້ນອນຫຼັບລືມສະຕິບໍ່ຮູ້ໂຕມີໂທດທີ່ໃດ? ນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ບຸກຄົນຜູ້ນອນຫຼັບລືມສະຕິບໍ່ຮູ້ໂຕມີໂທດ ໕ ແນວ ນີ້ ຄື

໑. ຫຼັບເປັນທຸກ
໒. ຕື່ນເປັນທຸກ
໓. ເຫັນຄວາມຝັນຊົ່ວຊາມ
໔. ເທວະດາບໍ່ຮັກສາ
໕. ນ້ຳອະສຸຈິເຄື່ອນ

ອຸບາລີ ບຸກຄົນຜູ້ນອນຫຼັບລືມສະຕິບໍ່ຮູ້ໂຕມີໂທດ ໕ ຢ່າງນີ້ແລ

ອານິສົງຂອງການນອນມີສະຕິ

ອຸບາລີ ບຸກຄົນຜູ້ນອນຫຼັບມີສະຕິຮູ້ສຶກໂຕ ມີອານິສົງ ໕ ຢ່າງນີ້ ຄື

໑. ຫຼັບເປັນສຸກ
໒. ຕື່ນເປັນສຸກ
໓. ບໍ່ເຫັນຄວາມຝັນຊົ່ວຊາມ
໔. ເທວະດາຮັກສາ
໕. ນ້ຳອະສຸຈິບໍ່ເຄື່ອນ

ອຸບາລີ ບຸກຄົນຜູ້ນອນຫຼັບມີສະຕິຮູ້ສຶກໂຕ ມີອານິສົງ ໕ ຢ່າງນີ້ແລ

## ບຸກຄົນບໍ່ຄວນໄຫວ້

[໔໙໗] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸທີ່ບໍ່ຄວນໄຫວ້ມີທີ່ໃດ?ນໍແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸທີ່ບໍ່ຄວນໄຫວ້ນີ້ມີ ໕ ຈຳພວກ ຄື

໑. ບໍ່ຄວນໄຫວ້ພິກຂຸຜູ້ເຂົ້າໄປ
໒. ບໍ່ຄວນໄຫວ້ພິກຂຸຜູ້ເຂົ້າໄປສູ່ຖະໜົນສູ່ບໍລິເວນເຮືອນ
໓. ບໍ່ຄວນໄຫວ້ພິກຂຸຜູ້ຢູ່ໃນບ່ອນມືດ
໔. ບໍ່ຄວນໄຫວ້ພິກຂຸຜູ້ບໍ່ໄດ້ສົນໃຈ
໕. ບໍ່ຄວນໄຫວ້ພິກຂຸຜູ້ຫຼັບຢູ່

ອຸບາລີ ພິກຂຸ ໕ ຈຳພວກນີ້ແລ ທີ່ບໍ່ຄວນໄຫວ້

ອຸບາລີ ພິກຂຸທີ່ບໍ່ຄວນໄຫວ້ແມ່ນອື່ນອີກ ໕ ຈຳພວກ ຄື

໑. ບໍ່ຄວນໄຫວ້ພິກຂຸໃນເວລາທີ່ດື່ມຍາຄູ
໒. ບໍ່ຄວນໄຫວ້ພິກຂຸໃນໂຮງພັດ
໓. ບໍ່ຄວນໄຫວ້ພິກຂຸຜູ້ເປັນສັດຕູ
໔. ບໍ່ຄວນໄຫວ້ພິກຂຸຜູ້ກຳລັງຄິດເລື້ອງອື່ນ
໕. ບໍ່ຄວນໄຫວ້ພິກຂຸຜູ້ກຳລັງເປືອຍກາຍ

ອຸບາລີ ພິກຂຸ ໕ ຈຳພວກນີ້ແລ ທີ່ບໍ່ຄວນໄຫວ້

ອຸບາລີ ພິກຂຸທີ່ບໍ່ຄວນໄຫວ້ແມ່ນອື່ນອີກ ໕ ຈຳພວກ ຄື

໑. ບໍ່ຄວນໄຫວ້ພິກຂຸຜູ້ກຳລັງຫຍ້ຳຢູ່

໒. ບໍ່ຄວນໄຫວ້ພິກຂຸຜູ້ກຳລັງສັນຢູ່
໓. ບໍ່ຄວນໄຫວ້ພິກຂຸຜູ້ກຳລັງ
໔. ບໍ່ຄວນໄຫວ້ພິກຂຸຜູ້ກຳລັງຖ່າຍ ຖ່າຍອຸດຈາຣະປັດສາວະ
໕. ບໍ່ຄວນໄຫວ້ພິກຂຸຜູ້ຖືກສົງຍົກວັດ

ອຸບາລີ ພິກຂຸ ໕ ຈຳພວກນີ້ແລ ທີ່ບໍ່ຄວນໄຫວ້

ອຸບາລີ ບຸກຄົນທີ່ບໍ່ຄວນໄຫວ້ແມ່ນອື່ນອີກ ໕ ຈຳພວກ ຄື

໑. ຜູ້ອຸປະສົມບົດກ່ອນບໍ່ຄວນໄຫວ້ຜູ້ອຸປະສົມບົດພາຍຫຼັງ
໒. ບໍ່ຄວນໄຫວ້ອະນຸປະສຳບັນ
໓. ບໍ່ຄວນໄຫວ້ພິກຂຸນານາສັງວາດ ມີພັນສາແກ່ກວ່າ ເປັນອະທຳວາທີ
໔. ບໍ່ຄວນໄຫວ້ມາຕຸຄາມ
໕. ບໍ່ຄວນໄຫວ້ບັນເດາະ

ອຸບາລີ ບຸກຄົນ ໕ ຈຳພວກນີ້ແລ ທີ່ບໍ່ຄວນໄຫວ້

ອຸບາລີ ພິກຂຸທີ່ບໍ່ຄວນໄຫວ້ແມ່ນອື່ນອີກ ໕ ຈຳພວກ ຄື

໑. ບໍ່ຄວນໄຫວ້ພິກຂຸຜູ້ກຳລັງຢູ່ປະຣິວາດ
໒. ບໍ່ຄວນໄຫວ້ພິກຂຸຜູ້ຄວນດຶງເຂົ້າຫາອາບັດເດີມ
໓. ບໍ່ຄວນໄຫວ້ພິກຂຸຜູ້ຄວນແກ່ມານັດ
໔. ບໍ່ຄວນໄຫວ້ພິກຂຸຜູ້ກຳລັງປະພຶດມານັດ
໕. ບໍ່ຄວນໄຫວ້ພິກຂຸຜູ້ຄວນແກ່ອັບພານ

ອຸບາລີ ພິກຂຸ ໕ ຈຳພວກນີ້ແລ ທີ່ບໍ່ຄວນໄຫວ້"

## ບຸກຄົນຄວນໄຫວ້

[໔໖໗] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸທີ່ຄວນໄຫວ້ມີທໍ່ໃດ?ນໍແລ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸທີ່ຄວນໄຫວ້ນີ້ມີ ໕ ຈຳພວກ ຄື

໑. ຜູ້ອຸປະສົມບົດຫຼັງຄວນໄຫວ້ຜູ້ອຸປະສົມບົດກ່ອນ
໒. ຄວນໄຫວ້ພິກຂຸນານາສັງວາດ ຜູ້ມີພັນສາແກ່ກວ່າ ເປັນທຳວາທີ
໓. ຄວນໄຫວ້ພຣະອາຈານ
໔. ຄວນໄຫວ້ພຣະອຸປັດຊາ
໕. ຄວນໄຫວ້ພຣະຕະຖາຄົດຜູ້ເປັນພຣະອະຣະຫັນ ຕັດສະຣູ້ເອງໂດຍຊອບໃນໂລກພ້ອມທັງເທວະໂລກ ມານໂລກ ພົມໂລກ ໃນໝູ່ສັດພ້ອມທັງສະມະນະພາມເທວະດາແລະມະນຸດ

ອຸບາລີ ພິກຂຸ ໕ ຈຳພວກນີ້ແລ ທີ່ຄວນໄຫວ້"

# ຂໍ້ປະຕິບັດຂອງພິກຂຸຜູ້ອ່ອນກວ່າ

[໔໙໙] ທ່ານພຣະອຸບາລີທູນຖາມວ່າ "ພິກຂຸຜູ້ອ່ອນກວ່າ ເມື່ອໄຫວ້ຕີນຂອງພິກຂຸຜູ້ແກ່ກວ່າ ຄວນຕັ້ງທຳທໍ່ໃດ?ໄວ້ໃນຕົນ ແລ້ວຈຶ່ງໄຫວ້ຕີນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ພິກຂຸຜູ້ອ່ອນກວ່າ ເມື່ອໄຫວ້ຕີນຂອງພິກຂຸຜູ້ແກ່ກວ່າ ຄວນຕັ້ງທຳ ໕ ຢ່າງ ໄວ້ໃນຕົນ ແລ້ວຈຶ່ງໄຫວ້ຕີນ ທຳ ໕ ຢ່າງ ຄື

ອຸບາລີ ພິກຂຸຜູ້ອ່ອນກວ່າ ເມື່ອໄຫວ້ຕີນຂອງພິກຂຸຜູ້ແກ່ກວ່າ

໑. ຄວນຫົ່ມຜ້າບ່ຽງບ່າ
໒. ປະຄອງອັນຊະລີ
໓. ນວດຕີນດ້ວຍຝາມືທັງສອງ
໔. ມີຄວາມຮັກ
໕. ມີຄວາມເຄົາລົບ ແລ້ວຈຶ່ງໄຫວ້ຕີນ

ອຸບາລີ ພິກຂຸຜູ້ອ່ອນກວ່າ ເມື່ອໄຫວ້ຕີນຂອງພິກຂຸຜູ້ແກ່ກວ່າ ຄວນຕັ້ງທຳ ໕ ຢ່າງນີ້ແລໄວ້ໃນຕົນ ແລ້ວຈຶ່ງໄຫວ້ຕີນ"

**ກະຖິນັດຖານະວັກທີ ໑໔ ຈົບ**

## ຫົວຂໍ້ປະຈຳວັກ

ການ ການກະຖິນ ການຫຼັບເປັນສຸກ
ບໍ່ຄວນໄຫວ້ພິກຂຸຜູ້ເຂົ້າສູ່ບໍລິເວນເຮືອນ
ດື່ມຍາຄູ ຫຍ້ຳ ອຸປະສົມບົດກ່ອນ ຢູ່ປະຣິວາດ
ບຸກຄົນຄວນໄຫວ້ ພິກຂຸອ່ອນກວ່າໄຫວ້ພິກຂຸແກ່ກວ່າ

**ອຸປາລີປັນຈະກະ ຈົບ**

## ຫົວຂໍ້ບອກວັກ

ອະນິດສິຕະວັກ ກຳມະວັກ໑ ໂວຫາຣະວັກ
ທິດຖາວິກຳມະວັກ ໂຈທະນາວັກ໒ ທຸດົງຄະວັກ
ມຸສາວາທະວັກ ພິກຂຸໂນວາທະວັກ ອຸບພາຫິກະວັກ
ອະທິກະຣະນະວູປະສະມະວັກ ສັງຄະເພທະກະວັກ
ສັງຄະເພດ ໕ ຢ່າງຄືແຕ່ກ່ອນ໑
ອາວາສິກະວັກ ກະຖິນັດຖານະວັກ
ລວມ ໑໔ ວັກ ທ່ານປະກາດໄວ້ດີແລ້ວແລ

# ອັດຖາປັດຕິສະມຸດຖານ

## ວ່າດ້ວຍສະມຸດຖານອາບັດທີ່ມີຢູ່

### ໑. ປາຣາຊິກ

### ວ່າດ້ວຍອາບັດປາຣາຊິກ

[໕໗໐] ອາບັດທີ່ພິກຂຸບໍ່ຈິງໃຈຕ້ອງ ແຕ່ຈິງໃຈອອກ ມີຢູ່
ອາບັດທີ່ພິກຂຸຈິງໃຈຕ້ອງ ແຕ່ບໍ່ຈິງໃຈອອກ ມີຢູ່
ອາບັດທີ່ພິກຂຸບໍ່ຈິງໃຈຕ້ອງ ບໍ່ຈິງໃຈອອກ ມີຢູ່
ອາບັດທີ່ພິກຂຸຈິງໃຈຕ້ອງ ຈິງໃຈອອກ ມີຢູ່
ອາບັດທີ່ພິກຂຸມີຈິດເປັນກຸສົນຕ້ອງ ມີຈິດເປັນກຸສົນອອກ ມີຢູ່
ອາບັດທີ່ພິກຂຸມີຈິດເປັນກຸສົນຕ້ອງ ແຕ່ມີຈິດເປັນອະກຸສົນອອກ ມີຢູ່
ອາບັດທີ່ພິກຂຸມີຈິດເປັນກຸສົນຕ້ອງ ແຕ່ມີຈິດເປັນອັບພະຍາກະຕະອອກ ມີຢູ່
ອາບັດທີ່ພິກຂຸມີຈິດເປັນອະກຸສົນຕ້ອງ ແຕ່ມີຈິດເປັນກຸສົນອອກ ມີຢູ່
ອາບັດທີ່ພິກຂຸມີຈິດເປັນອະກຸສົນຕ້ອງ ມີຈິດເປັນອະກຸສົນອອກ ມີຢູ່
ອາບັດທີ່ພິກຂຸມີຈິດເປັນອະກຸສົນຕ້ອງ ແຕ່ມີຈິດເປັນອັບພະຍາກະຕະອອກ ມີຢູ່
ອາບັດທີ່ພິກຂຸມີຈິດເປັນອັບພະຍາກະຕະຕ້ອງ ມີຈິດເປັນກຸສົນອອກ ມີຢູ່
ອາບັດທີ່ພິກຂຸມີຈິດເປັນອັບພະຍາກະຕະຕ້ອງ ແຕ່ມີຈິດເປັນອະກຸສົນອອກ ມີຢູ່
ອາບັດທີ່ພິກຂຸມີຈິດເປັນອັບພະຍາກະຕະຕ້ອງ ແຕ່ມີຈິດເປັນອັບພະຍາກະຕະອອກ ມີຢູ່

### ສິກຂາບົດທີ ໑

ຖາມ : ປາຣາຊິກສິກຂາບົດທີ ໑ ເກີດດ້ວຍສະມຸດຖານທໍ່ໃດ?
ຕອບ : ປາຣາຊິກສິກຂາບົດທີ ໑ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ

### ສິກຂາບົດທີ ໔

ຖາມ : ປາຣາຊິກສິກຂາບົດທີ ໔ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ປາຣາຊິກສິກຂາບົດທີ ໒ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດ ທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນ ເກີດທາງກາຍ (໓) ເກີດ ທາງກາຍວາຈາກັບຈິດ

## ສິກຂາບົດທີ ໓

ຖາມ : ປາຣາຊິກສິກຂາບົດທີ ໓ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ປາຣາຊິກສິກຂາບົດທີ ໓ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດ ທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນ ເກີດທາງກາຍ

(໓) ເກີດທາງກາຍວາຈາກັບຈິດ

## ສິກຂາບົດທີ ໔

ຖາມ : ປາຣາຊິກສິກຂາບົດທີ ໔ ເກີດດ້ວຍສະມຸດຖານທໍ່ໃດ?

ຕອບ : ປາຣາຊິກສິກຂາບົດທີ ໔ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດ ທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນ ເກີດທາງກາຍ

(໓) ເກີດທາງກາຍວາຈາກັບຈິດ

**ປາຣາຊິກ ໔ ສິກຂາບົດ ຈົບ**

## ໒. ສັງຄາທິເສດ

## ວ່າດ້ວຍອາບັດສັງຄາທິເສດ

## ສິກຂາບົດທີ ໑

[໕໗໑] ຖາມ : ສັງຄາທິເສດຂອງພິກຂຸຜູ້ຈົງໃຈເຮັດນໍ້າອະສຸຈິໃຫ້ເຄື່ອນ ເກີດດ້ວຍສະມຸດ ຖານ ທໍ່ໃດ

ຕອບ : ສັງຄາທິເສດຂອງພິກຂຸຜູ້ຈົງໃຈເຮັດນໍ້າອະສຸຈິໃຫ້ເຄື່ອນ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

## ສິກຂາບົດທີ ໒

ຖາມ : ສັງຄາທິເສດຂອງພິກຂຸຜູ້ຖືກຕ້ອງກາຍກັບມາຕຸຄາມ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດຂອງພິກຂຸຜູ້ຖືກຕ້ອງກາຍກັບມາຕຸຄາມ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

## ສິກຂາບົດທີ ໓

ຖາມ : ສັງຄາທິເສດຂອງພິກຂຸຜູ້ເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດຂອງພິກຂຸຜູ້ເວົ້າກ້ຽວມາຕຸຄາມດ້ວຍວາຈາຊົ່ວຫຍາບ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ແຕ່ບໍ່ແມ່ນເກີດທາງວາຈາ (໒) ເກີດ ທາງວາຈາກັບຈິດ ແຕ່ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ

## ສິກຂາບົດທີ ໔

ຖາມ : ສັງຄາທິເສດຂອງພິກຂຸຜູ້ກ່າວສັນເສີນການປົນເປີຄວາມຕ້ອງການຂອງຕົນຕໍ່ໜ້າມາຕຸຄາມ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດຂອງພິກຂຸຜູ້ກ່າວສັນເສີນການປົນເປີຄວາມຕ້ອງການຂອງຕົນຕໍ່ໜ້າມາຕຸຄາມ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ໗ລ໗

## ສິກຂາບົດທີ ໕

ຖາມ : ສັງຄາທິເສດຂອງພິກຂຸຜູ້ເຮັດໜ້າທີ່ຊັກສື່ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດຂອງພິກຂຸຜູ້ເຮັດໜ້າທີ່ຊັກສື່ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງວາຈາ ບໍ່ແມ່ນ ເກີດທາງກາຍ ບໍ່ແມ່ນເກີດທາງຈິດ (໓) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໔) ເກີດ ທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໕) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໖) ເກີດທາງກາຍວາຈາກັບຈິດ

## ສິກຂາບົດທີ ໖

ຖາມ : ສັງຄາທິເສດຂອງພິກຂຸຜູ້ໃຫ້ສ້າງກຸດຕິດ້ວຍການຂໍເອົາເອງ ເກີດດ້ວຍສະມຸດຖານ ທີ່ໃດ

ຕອບ : ສັງຄາທິເສດຂອງພິກຂຸຜູ້ໃຫ້ສ້າງກຸດຕິດ້ວຍການຂໍເອົາເອງ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ສິກຂາບົດທີ ໗

ຖາມ : ສັງຄາທິເສດຂອງພິກຂຸຜູ້ໃຫ້ສ້າງວິຫານໃຫຍ່ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດຂອງພິກຂຸຜູ້ໃຫ້ສ້າງວິຫານໃຫຍ່ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຯລຯ

## ສິກຂາບົດທີ ໘

ຖາມ : ສັງຄາທິເສດຂອງພິກຂຸຜູ້ໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກທີ່ບໍ່ມີມູນ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດຂອງພິກຂຸຜູ້ໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກທີ່ບໍ່ມີມູນ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ສິກຂາບົດທີ ໙

ຖາມ : ສັງຄາທິເສດຂອງພິກຂຸຜູ້ອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນເປັນເລດໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດຂອງພິກຂຸຜູ້ອ້າງເອົາບາງສ່ວນແຫ່ງອະທິກອນເລື້ອງອື່ນເປັນເລດແລ້ວໃສ່ຄວາມພິກຂຸດ້ວຍອາບັດປາຣາຊິກ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຯລຯ

## ສິກຂາບົດທີ ໑໐

ຖາມ : ສັງຄາທິເສດຂອງພິກຂຸຜູ້ທຳລາຍສົງ ບໍ່ຍອມສະລະກຳ ກະທັ່ງສົງສູດສະມະນຸພາດ ຄົບ ໓ ຄັ້ງເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດຂອງພິກຂຸຜູ້ທຳລາຍສົງ ບໍ່ຍອມສະລະກຳ ກະທັ່ງສົງສູດສະມະນຸພາດ ຄົບ ໓ ຄັ້ງ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍ ວາຈາ ກັບຈິດ

## ສິກຂາບົດທີ ໑໑

ຖາມ : ສັງຄາທິເສດຂອງພິກຂຸຜູ້ປະພຶດຕາມພິກຂຸຜູ້ທຳລາຍສົງ ບໍ່ຍອມສະລະກຳ ກະທັ່ງສົງສູດສະມະນຸພາດຄົບ ໓ ຄັ້ງ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດຂອງພິກຂຸຜູ້ປະພຶດຕາມພິກຂຸຜູ້ທຳລາຍສົງ ບໍ່ຍອມສະລະກຳ ກະທັ່ງສົງສູດສະມະນຸພາດຄົບ ໓ ຄັ້ງ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດ ທາງກາຍວາຈາກັບຈິດ

## ສິກຂາບົດທີ ໑໒

ຖາມ : ສັງຄາທິເສດຂອງພິກຂຸຜູ້ວ່າຍາກ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດຂອງພິກຂຸຜູ້ວ່າຍາກ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍວາຈາກັບຈິດ

## ສິກຂາບົດທີ ໑໓

ຖາມ : ສັງຄາທິເສດຂອງພິກຂຸຜູ້ປະທຸດສະຮ້າຍສະກຸນ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດຂອງພິກຂຸຜູ້ປະທຸດສະຮ້າຍສະກຸນ ບໍ່ຍອມສະລະກຳ ຈົນວ່າສົງສູດສະມະນຸພາດຄົບ ໓ ຄັ້ງ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍ ວາຈາກັບຈິດ

**ສັງຄາທິເສດ ໑໓ ສິກຂາບົດ ຈົບ**

# ເສຂິຍະວັດ

໗໑໗

## ສິກຂາບົດທີ ໑໕

[໒໗໔] ຖາມ : ທຸກກົດຂອງພິກຂຸຜູ້ອາໄສຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ທຸກກົດຂອງພິກຂຸຜູ້ອາໄສຄວາມບໍ່ເອື້ອເຟື້ອ ຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳ ເກີດດ້ວຍສະມຸດຖານ ໑ ສະມຸດຖານ ຄື ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ

**ເສຂິຍະວັດ ຈົບ**

## ໓. ປາຣາຊິກາທິ

## ວ່າດ້ວຍອາບັດປາຣາຊິກ ເປັນຕົ້ນ

## ປາຣາຊິກ ໔

[໒໗໓] ຖາມ : ປາຣາຊິກ ໔ ສິກຂາບົດ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ປາຣາຊິກ ໔ ສິກຂາບົດ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ

## ສັງຄາທິເສດ ໑໓

ຖາມ : ສັງຄາທິເສດ ໑໓ ສິກຂາບົດ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ສັງຄາທິເສດ ໑໓ ສິກຂາບົດ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງວາຈາ ບໍ່ແມ່ນເກີດທາງ ກາຍ ບໍ່ແມ່ນເກີດທາງຈິດ (໓) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໔) ເກີດທາງກາຍ ກັບຈິດ ບໍ່ແມ່ນເກີດທາງວາຈາ (໕) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໖) ເກີດທາງກາຍ ວາຈາກັບຈິດ

## ອະນິຍະຕະ ໒

ຖາມ : ອະນິຍະຕະ ໒ ສິກຂາບົດ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ອະນິຍະຕະ ໒ ສິກຂາບົດ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງ ກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດ ທາງກາຍວາຈາກັບຈິດ

## ນິດສັກຄິຍະປາຈິດຕີ ໓໐

ຖາມ : ນິດສັກຄິຍະປາຈິດຕີ ໓໐ ສິກຂາບົດ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ນິດສັກຄິຍະປາຈິດຕີ ໓໐ ສິກຂາບົດ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງວາຈາ ບໍ່ແມ່ນເກີດທາງ ກາຍ ບໍ່ແມ່ນເກີດທາງຈິດ (໓) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໔) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໕) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໖) ເກີດ ທາງກາຍວາຈາກັບຈິດ

## ປາຈິດຕີ ໙໒

ຖາມ : ປາຈິດຕີ ໙໒ ສິກຂາບົດ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ປາຈິດຕີ ໙໒ ສິກຂາບົດ ເກີດດ້ວຍສະມຸດຖານ ໖ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງວາຈາ ບໍ່ແມ່ນເກີດທາງ ກາຍ ບໍ່ແມ່ນເກີດທາງຈິດ (໓) ເກີດທາງກາຍກັບວາຈາ ບໍ່ແມ່ນເກີດທາງຈິດ (໔) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໕) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໖) ເກີດ ທາງກາຍວາຈາກັບຈິດ

## ປະຕິເທສະນີຍະ ໔

ຖາມ : ປະຕິເທສະນີຍະ ໔ ສິກຂາບົດ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ປະຕິເທສະນີຍະ ໔ ສິກຂາບົດ ເກີດດ້ວຍສະມຸດຖານ ໔ ສະມຸດຖານ ຄື (໑) ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ ບໍ່ແມ່ນເກີດທາງຈິດ (໒) ເກີດທາງກາຍກັບວາຈາ ບໍ່ແມ່ນ ເກີດທາງຈິດ (໓) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໔) ເກີດທາງກາຍວາຈາກັບຈິດ

## ເສຂິຍະ ໗໔

ຖາມ : ເສຂິຍະ ໗໔ ສິກຂາບົດ ເກີດດ້ວຍສະມຸດຖານທີ່ໃດ?

ຕອບ : ເສຂິຍະ ໗໔ ສິກຂາບົດ ເກີດດ້ວຍສະມຸດຖານ ໓ ສະມຸດຖານ ຄື (໑) ເກີດທາງກາຍກັບຈິດ ບໍ່ແມ່ນເກີດທາງວາຈາ (໒) ເກີດທາງວາຈາກັບຈິດ ບໍ່ແມ່ນເກີດທາງກາຍ (໓) ເກີດທາງກາຍວາຈາກັບຈິດ

**ສະມຸດຖານ ຈົບ**

## ຫົວຂໍ້ປະຈຳເລື້ອງ

ພິກຂຸບໍ່ຈິງໃຈ ມີຈິດເປັນກຸສົນ ສະມຸດຖານທຸກສິກຂາບົດ
ຂໍທ່ານທັງຫຼາຍ ຈົ່ງເຂົ້າໃຈສະມຸດຖານໂດຍຮູ້ຕາມທຳເທີ້ນ

# ທຸຕິຍະຄາຖາສັງຄະນິກະ

## ວ່າດ້ວຍກຸ່ມຄາຖາ ກຸ່ມທີ ໒

### ໑. ກາຍິກາທິອາປັດຕິ

### ວ່າດ້ວຍອາບັດທາງກາຍ ເປັນຕົ້ນ

[໔ກ໒] ຖາມ : ອາບັດທາງກາຍຈັດໄວ້ທໍ່ໃດ? ທາງວາຈາຈັດໄວ້ທໍ່ໃດ?
ເມື່ອປົກປິດຕ້ອງອາບັດທໍ່ໃດ? ອາບັດທີ່ມີການເຄົ້າຄືງເປັນປັດໄຈມີທໍ່ໃດ?

ຕອບ : ອາບັດທາງກາຍຈັດໄວ້ ໖ ທາງວາຈາຈັດໄວ້ ໖
ເມື່ອປົກປິດຕ້ອງອາບັດ ໓ ຢ່າງ ອາບັດທີ່ມີການເຄົ້າຄືງເປັນປັດໄຈມີ ໕
ຕ້ອງອາບັດເມື່ອອາຣຸນຂຶ້ນ ເປັນຕົ້ນ

ຖາມ : ຕ້ອງອາບັດເມື່ອອາຣຸນຂຶ້ນມີທໍ່ໃດ? ອາບັດຊື່ຍາວະຕະຕິຍະກາ
ມີທໍ່ໃດ? ອາບັດຊື່ອັດຖະວັດຖຸກາໃນສາດສະໜານີ້ມີທໍ່ໃດ?
ຈັດສິກຂາບົດແລະປາຕິໂມກຂຸດເທດທັງມວນ ເຂົ້າໃນອຸດເທດທໍ່ໃດ?

ຕອບ : ຕ້ອງອາບັດເມື່ອອາຣຸນຂຶ້ນມີ ໓ ອາບັດຊື່ຍາວະຕະຕິຍະກາມີ ໒
ອາບັດຊື່ອັດຖະວັດຖຸກາໃນສາດສະໜານີ້ມີ ໑
ຈັດສິກຂາບົດແລະປາຕິໂມກຂຸດເທດທັງມວນເຂົ້າໃນນິທານຸດເທດແນວດຽວ
ມູນແຫ່ງພຣະວິໄນ ເປັນຕົ້ນ

ຖາມ : ມູນແຫ່ງພຣະວິໄນທີ່ພຣະພຸດທະເຈົ້າຊົງບັນຍັດໄວ້ມີທໍ່ໃດ?
ອາບັດໜັກໃນຝ່າຍພຣະວິໄນທີ່ຕັດໄວ້ມີທໍ່ໃດ?
ອາບັດຍ້ອນອັດໂທດຊົ່ວຫຍາບມີທໍ່ໃດ?

ຕອບ : ມູນແຫ່ງພຣະວິໄນທີ່ພຣະພຸດທະເຈົ້າຊົງບັນຍັດໄວ້ມີ ໒
ອາບັດໜັກໃນຝ່າຍພຣະວິໄນທີ່ຕັດໄວ້ມີ ໒
ອາບັດຍ້ອນປົດໂທດຊົ່ວຫຍາບມີ ໒
ຕ້ອງອາບັດໃນບໍລິເວນເຮືອນ ເປັນຕົ້ນ

ຖາມ : ອາບັດໃນບໍລິເວນເຮືອນມີທໍ່ໃດ?
ອາບັດມີຝັ່ງນະທີເປັນປັດໄຈມີທໍ່ໃດ? ຕ້ອງອາບັດຖຸນລັດໄຈ
ຍ້ອນຊີ້ນຈັກຂະນິດ ຕ້ອງອາບັດທຸກກົດຍ້ອນຊີ້ນຈັກຂະນິດ

ຕອບ : ອາບັດໃນບໍລິເວນເຮືອນມີ ໔ ອາບັດມີຝັ່ງນະທີເປັນປັດໄຈມີ ໔

ຕ້ອງອາບັດຖຸນລັດໄຈຍ້ອນຊີ້ນບໍ່ຫຼາຍ

ຕ້ອງອາບັດທຸກກົດຍ້ອນຊີ້ນ ໗ ຊະນິດ

ຕ້ອງອາບັດທາງວາຈາໃນກາງຄືນ ເປັນຕົ້ນ

ຖາມ : ອາບັດທາງວາຈາໃນກາງຄືນມີທີ່ໃດ? ອາບັດທາງວາຈາ
ໃນກາງເວັນມີທີ່ໃດ? ເມື່ອໃຫ້ຕ້ອງອາບັດທີ່ໃດ? ເມື່ອຮັບຕ້ອງອາບັດທີ່ໃດ?

ຕອບ : ອາບັດທາງວາຈາໃນກາງຄືນມີ ໒
ອາບັດທາງວາຈາໃນກາງເວັນມີ ໒ ເມື່ອໃຫ້ຕ້ອງອາບັດ ໓
ເມື່ອຮັບຕ້ອງອາບັດ ໔

## ໒. ເທສະນາຄາມີນິຍາທິອາປັດຕິ

## ວ່າດ້ວຍອາບັດເປັນເທສະນາຄາມີນີ ເປັນຕົ້ນ

[໕໗໕] ຖາມ : ອາບັດເປັນເທສະນາຄາມີນີມີທີ່ໃດ?
ອາບັດທີ່ແກ້ໄຂໄດ້ຈັດໄວ້ທີ່ໃດ? ອາບັດທີ່ເຮັດຄືນບໍ່ໄດ້ໃນສາດສະໜານີ້ພຣະພຸດທະເຈົ້າ
ຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?

ຕອບ : ອາບັດເປັນເທສະນາຄາມີນີມີ ໕
ອາບັດທີ່ເຮັດຄືນໄດ້ຈັດໄວ້ ໒ ອາບັດທີ່ເຮັດຄືນບໍ່ໄດ້ໃນສາດສະໜານີ້ພຣະພຸດທະເຈົ້າ
ຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແນວດຽວ
ຕ້ອງອາບັດໜັກໃນຝ່າຍພຣະວິໄນ ເປັນຕົ້ນ

ຖາມ : ອາບັດໜັກໃນຝ່າຍພຣະວິໄນເປັນໄປທາງກາຍແລະວາຈາ
ຕັດໄວ້ທີ່ໃດ? ທັນຍຣົດໃນເວລາວິການມີທີ່ໃດ?
ສົມມຸດດ້ວຍຍັດຕິຈະຕຸດຖະກຳວາຈາມີທີ່ໃດ?

ຕອບ : ອາບັດໜັກໃນຝ່າຍພຣະວິໄນເປັນໄປທາງກາຍແລະວາຈາຕັດໄວ້ ໒
ທັນຍະຣົດໃນເວລາວິການມີແນວດຽວ
ສົມມຸດດ້ວຍຍັດຕິຈະຕຸດຖະກຳວາຈາມີແນວດຽວ
ອາບັດປາຣາຊິກທາງກາຍ ເປັນຕົ້ນ

ຖາມ : ອາບັດປາຣາຊິກທາງກາຍມີທີ່ໃດ? ພູມຂອງພິກຂຸຜູ້ມີສັງວາດ
ມີທີ່ໃດ? ຣັດຕິເສດຂອງພິກຂຸຈັກພວກ ແລະພຣະບັນຍັດເລື້ອງ ໒ ນີ້ວມີທີ່ໃດ?

ຕອບ : ອາບັດປາຣາຊິກທາງກາຍມີ ໒

ພູມຂອງພິກຂຸຜູ້ມີສັງວາດມີ ໔ ຣັດຕິເສດຂອງພິກຂຸມີ ໔ ພວກ
ແລະພຣະບັນຍັດເລື້ອງ ໔ ນີ້ວມີ ໔
ຕ້ອງອາບັດຍ້ອນທຳຮ້າຍໂຕເອງ ເປັນຕົ້ນ

ຖາມ : ຍ້ອນທຳຮ້າຍໂຕເອງຕ້ອງອາບັດທໍ່ໃດ?
ສິ່ງແຕກກັນດ້ວຍອາການທໍ່ໃດ? ອາບັດຊື່ປະຖະມາປັດຕິກາ
ໃນສາດສະໜານີ້ມີທໍ່ໃດ? ການເຮັດຍັດຕິມີທໍ່ໃດ?

ຕອບ : ຍ້ອນທຳຮ້າຍໂຕເອງຕ້ອງອາບັດມີ ໔
ສິ່ງແຕກກັນດ້ວຍອາການ ໔
ອາບັດຊື່ປະຖະມາປັດຕິກາໃນສາດສະໜານີ້ມີ ໔ ເຮັດຍັດຕິມີ ໔
ຕ້ອງອາບັດຍ້ອນປານາຕິບາດ ເປັນຕົ້ນ

ຖາມ : ອາບັດຍ້ອນປານາຕິບາດມີທໍ່ໃດ? ອາບັດປາຣາຊິກ
ເນື່ອງດ້ວຍວາຈາມີທໍ່ໃດ? ອາບັດກ່ຽວດ້ວຍເວົ້າເຊີນຊວນຕັດໄວ້ທໍ່ໃດ?
ອາບັດກ່ຽວດ້ວຍທ່ຽວເປັນພໍ່ສື່ຕັດໄວ້ທໍ່ໃດ?

ຕອບ : ອາບັດຍ້ອນປານາຕິບາດມີ ໓
ອາບັດປາຣາຊິກເນື່ອງດ້ວຍວາຈາມີ ໓
ອາບັດກ່ຽວດ້ວຍເວົ້າເຊີນຊວນຕັດໄວ້ ໓
ແລະອາບັດກ່ຽວດ້ວຍທ່ຽວເປັນພໍ່ສື່ຕັດໄວ້ ໓
ບຸກຄົນບໍ່ຄວນໃຫ້ອຸປະສົມບົດ ເປັນຕົ້ນ

ຖາມ : ບຸກຄົນບໍ່ຄວນໃຫ້ອຸປະສົມບົດມີທໍ່ໃດ?
ກຳສັງຄະຫະມີທໍ່ໃດ? ບຸກຄົນຖືກນາສະນະຕັດໄວ້ທໍ່ໃດ?
ອະນຸສາວະນາດຽວກັນສຳລັບບຸກຄົນຈຳນວນທໍ່ໃດ?

ຕອບ : ບຸກຄົນບໍ່ຄວນໃຫ້ອຸປະສົມບົດມີ ໓ ພວກ
ກຳສັງຄະຫະມີ ໓ ຢ່າງ ບຸກຄົນທີ່ຖືກນາສະນະຕັດໄວ້ ໓ ພວກ
ອະນຸສາວະນາດຽວກັນສຳລັບບຸກຄົນຈຳນວນ ໓ ຄົນ
ຕ້ອງອາບັດຍ້ອນອະທິນນາທານ ເປັນຕົ້ນ

ຖາມ : ຕ້ອງອາບັດຍ້ອນອະທິນນາທານມີທໍ່ໃດ?
ອາບັດຍ້ອນເສບເມຖຸນທຳເປັນປັດໄຈມີທໍ່ໃດ?
ເມື່ອຕັດ (ຕົ້ນໄມ້) ຕ້ອງອາບັດທໍ່ໃດ?
ອາບັດຍ້ອນວັດຖຸທີ່ຖິ້ມເປັນປັດໄຈມີທໍ່ໃດ?

ຕອບ : ຕ້ອງອາບັດຍ້ອນອະທິນນາທານມີ ໓
ອາບັດຍ້ອນເສບເມຖຸນທຳເປັນປັດໄຈມີ ໔

ເມື່ອຕັດຕ້ອງອາບັດ ໓ ອາບັດຍ້ອນວັດຖຸທີ່ຖິ້ມເປັນປັດໄຈມີ ໕
ປັບອາບັດຄວບກັນ ເປັນຕົ້ນ

ຖາມ : ໃນພິກຂຸໂນວາທະກະວັກ ອາບັດທຸກກົດກັບປາຈິດຕິ
ທີ່ຕັດໄວ້ໝວດທີ ໗ ໃນສິກຂາບົດທີ ໑ ນັ້ນມີທໍ່ໃດ?
ພິກຂຸນີຈັກຈຳພວກເປັນເຫດໃຫ້ພິກຂຸຕ້ອງອາບັດ ຍ້ອນຈີວອນເປັນເຫດ

ຕອບ : ໃນພິກຂຸໂນວາທະກະວັກ ອາບັດທຸກກົດກັບປາຈິດຕິ
ທີ່ຕັດໄວ້ໝວດທີ ໗ ໃນສິກຂາບົດທີ ໑ ນັ້ນມີ ໔
ພິກຂຸນີ ໔ ພວກເປັນເຫດໃຫ້ພິກຂຸຕ້ອງອາບັດ
ຍ້ອນຈີວອນເປັນເຫດ
ຕ້ອງອາບັດປະຕິເທສະນີຍະ ເປັນຕົ້ນ

ຖາມ : ອາບັດປະຕິເທສະນີຍະທີ່ຕັດໄວ້ແກ່ພິກຂຸນີມີທໍ່ໃດ?
ຍ້ອນຂໍເຂົ້າເປືອກມາສັນ ປັບອາບັດທຸກກົດກັບປາຈິດຕິບໍ

ຕອບ : ອາບັດປະຕິເທສະນີຍະທີ່ຕັດໄວ້ແກ່ພິກຂຸນີ
ປັບອາບັດໄວ້ ໘ ຍ້ອນຂໍເຂົ້າເປືອກມາສັນ
ປັບອາບັດທຸກກົດກັບປາຈິດຕິ
ຕ້ອງອາບັດຍ້ອນຍ່າງ ເປັນຕົ້ນ

ຖາມ : ຜູ້ຍ່າງຕ້ອງອາບັດທໍ່ໃດ? ຜູ້ຢືນຕ້ອງອາບັດທໍ່ໃດ?
ຜູ້ນັ່ງຕ້ອງອາບັດທໍ່ໃດ? ແລະຜູ້ນອນຕ້ອງອາບັດທໍ່ໃດ?

ຕອບ : ຜູ້ຍ່າງຕ້ອງອາບັດ ໔ ຜູ້ຢືນຕ້ອງອາບັດ ໔ ທໍ່ກັນ
ຜູ້ນັ່ງຕ້ອງອາບັດ ໔ ແລະຜູ້ນອນຕ້ອງອາບັດ ໔ ທໍ່ກັນ

## ໓. ປາຈິດຕິຍະ
## ວ່າດ້ວຍອາບັດປາຈິດຕິຕ້ອງອາບັດໃນເຂດດຽວກັນ

[໔໗໖] ຖາມ : ອາບັດປາຈິດຕິທັງໝົດທີ່ມີວັດຖຸຕ່າງກັນ ມີທໍ່ໃດ?
ພິກຂຸເພິ່ງຕ້ອງໃນຂະນະດຽວກັນ ບໍ່ກ່ອນ ບໍ່ຫຼັງ

ຕອບ : ອາບັດປາຈິດຕິທັງໝົດທີ່ມີວັດຖຸຕ່າງກັນ
ມີ ໕ ພິກຂຸເພິ່ງຕ້ອງໃນຂະນະດຽວກັນ ບໍ່ກ່ອນ ບໍ່ຫຼັງ

ຖາມ : ອາບັດປາຈິດຕິທັງໝົດທີ່ມີວັດຖຸຕ່າງກັນ ມີທໍ່ໃດ?
ພິກຂຸເພິ່ງຕ້ອງໃນຂະນະດຽວກັນ ບໍ່ກ່ອນ ບໍ່ຫຼັງ

ຕອບ : ອາບັດປາຈິດຕິທັງໝົດທີ່ມີວັດຖຸຕ່າງກັນ ມີ ໗
ພິກຂຸເພິ່ງຕ້ອງໃນຂະນະດຽວກັນ ບໍ່ກ່ອນ ບໍ່ຫຼັງ

## ວິທີສະແດງອາບັດ

ຖາມ : ອາບັດປາຈິດຕີທັງໝົດທີ່ມີວັດຖຸຕ່າງກັນ ມີທໍ່ໃດ?
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ
ພິກຂຸເພິ່ງສະແດງດ້ວຍວາຈາທໍ່ໃດ?

ຕອບ : ອາບັດປາຈິດຕີທັງໝົດທີ່ມີວັດຖຸຕ່າງກັນ ມີ ໕
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ
ພິກຂຸເພິ່ງສະແດງດ້ວຍວາຈາແນວດຽວ

ຖາມ : ອາບັດປາຈິດຕີທັງໝົດທີ່ມີວັດຖຸຕ່າງກັນ ມີທໍ່ໃດ?
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ
ພິກຂຸເພິ່ງສະແດງດ້ວຍວາຈາທໍ່ໃດ?

ຕອບ : ອາບັດປາຈິດຕີທັງໝົດທີ່ມີວັດຖຸຕ່າງກັນ ມີ ໙
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ
ພິກຂຸເພິ່ງສະແດງດ້ວຍວາຈາແນວດຽວ

ຖາມ : ອາບັດປາຈິດຕີທັງໝົດທີ່ມີວັດຖຸຕ່າງກັນ ມີທໍ່ໃດ?
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ
ພິກຂຸເພິ່ງສະແດງຣະບຸອັນໃດ?

ຕອບ : ອາບັດປາຈິດຕີທັງໝົດທີ່ມີວັດຖຸຕ່າງກັນ ມີ ໕
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ
ພິກຂຸເພິ່ງສະແດງຣະບຸວັດຖຸ

ຖາມ : ອາບັດປາຈິດຕີທັງໝົດທີ່ມີວັດຖຸຕ່າງກັນ ມີທໍ່ໃດ?
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ
ພິກຂຸເພິ່ງສະແດງຣະບຸອັນໃດ?

ຕອບ : ອາບັດປາຈິດຕີທັງໝົດທີ່ມີວັດຖຸຕ່າງກັນ ມີ ໙
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ແລ້ວ
ພິກຂຸເພິ່ງສະແດງຣະບຸວັດຖຸ

## ຍາວະຕະຕິຍະກາບັດ ເປັນຕົ້ນ

ຖາມ : ຍ້ອນສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດທໍ່ໃດ?
ຍ້ອນການກ່າວເປັນປັດໄຈ ຕ້ອງອາບັດທໍ່ໃດ?
ພິກຂຸຫຍໍ້າຕ້ອງອາບັດທໍ່ໃດ? ຍ້ອນໂພຊະນະເປັນປັດໄຈ ຕ້ອງອາບັດທໍ່ໃດ?

ຕອບ : ຍ້ອນສູດສະມະນຸພາດຄົບ ໓ ຄັ້ງ ຕ້ອງອາບັດ ໓
ຍ້ອນການກ່າວເປັນປັດໄຈ ຕ້ອງອາບັດ ໖
ພິກຂຸຫຍ້ຳຕ້ອງອາບັດ ໓ ຍ້ອນໂພຊະນະເປັນປັດໄຈ ຕ້ອງອາບັດ ໕

## ຖານະແຫ່ງຍາວະຕະຕິຍະກາບັດ ເປັນຕົ້ນ

ຖາມ : ຍາວະຕະຕິຍະກາບັດທັງໝົດຍ່ອມເຖິງຖານະທີ່ໃດ?
ອາບັດມີແກ່ຄົນຈັກພວກ ແລະອະທິກອນມີແກ່ຄົນຈັກພວກ
ຕອບ : ຍາວະຕະຕິຍະກາບັດທັງໝົດຍ່ອມເຖິງຖານະ ໕
ອາບັດມີແກ່ສະຫະທຳມິກ ໕ ແລະອະທິກອນມີແກ່ສະຫະທຳມິກ ໕

## ວິນິດໄສ ເປັນຕົ້ນ

ຖາມ : ວິນິດໄສມີແກ່ຄົນຈັກພວກ ການລະງັບມີແກ່ຄົນຈັກພວກ
ບຸກຄົນຈັກພວກບໍ່ຕ້ອງອາບັດ ແລະພິກຂຸຍ່ອມງາມດ້ວຍຖານະທີ່ໃດ?
ຕອບ : ວິນິດໄສມີແກ່ສະຫະທຳມິກ ໕ ການລະງັບມີແກ່
ສະຫະທຳມິກ ໕ ບໍ່ຕ້ອງອາບັດ ແລະພິກຂຸຍ່ອມງາມດ້ວຍ ໓ ຖານະ

## ອາບັດທາງກາຍໃນຣາຕີ ເປັນຕົ້ນ

ຖາມ : ອາບັດທາງກາຍໃນກາງຄືນມີທີ່ໃດ? ອາບັດທາງກາຍ
ໃນກາງເວັນມີທີ່ໃດ? ພິກຂຸເພ່ງເບິ່ງຕ້ອງອາບັດທີ່ໃດ?
ຍ້ອນບິນທະບາດເປັນປັດໄຈ ຕ້ອງອາບັດທີ່ໃດ?
ຕອບ : ອາບັດທາງກາຍໃນກາງຄືນມີ ໔ ອາບັດທາງກາຍ
ໃນກາງເວັນມີ ໔ ພິກຂຸເພ່ງເບິ່ງຕ້ອງອາບັດກອງດຽວ
ຍ້ອນບິນທະບາດເປັນປັດໄຈ ຕ້ອງອາບັດກອງດຽວ

## ພິກຂຸທີ່ສົງຍົກວັດ ເປັນຕົ້ນ

ຖາມ : ພິກຂຸເຫັນອານິສົງທີ່ໃດ?ຈຶ່ງສະແດງຍ້ອນເຊື່ອຄົນອື່ນ
ພິກຂຸຖືກຍົກວັດຕັດໄວ້ທີ່ໃດ? ຄວາມປະພຶດຖືກມີທີ່ໃດ?
ຕອບ : ພິກຂຸເຫັນອານິສົງ ໗ ແນວຈຶ່ງສະແດງ
ຍ້ອນເຊື່ອຄົນອື່ນ ພິກຂຸຖືກຍົກວັດຕັດໄວ້ ໓ ພວກ
ຄວາມປະພຶດຖືກມີ ໔໓ ຂໍ້

## ມຸສາວາທະ ເປັນຕົ້ນ

ຖາມ : ມຸສາວາທະເຖິງຖານະທໍ່ໃດ? ທີ່ຕັດວ່າຢ່າງຍິ່ງມີທໍ່ໃດ?
ປະຕິເທສະນີຍະມີຈັກສິກຂາບົດ ແລະການສະແດງໂທດຂອງບຸກຄົນຈັກພວກ

ຕອບ : ມຸສາວາທະເຖິງຖານະ ໕ ທີ່ຕັດວ່າຢ່າງຍິ່ງມີ ໑໔ ສິກຂາບົດ
ປະຕິເທສະນີຍະມີ ໑໔ ສິກຂາບົດ
ແລະການສະແດງໂທດຂອງບຸກຄົນ ໔ ພວກ

## ອົງຂອງມຸສາວາທະ ເປັນຕົ້ນ

ຖາມ : ມຸສາວາທະມີອົງທໍ່ໃດ? ອົງອຸໂປສົດມີທໍ່ໃດ?
ອົງທີ່ເອື້ອຕໍ່ການເປັນທູດມີທໍ່ໃດ? ຕິດຖີຍະຂໍ້ວັດປະຕິບັດມີທໍ່ໃດ?

ຕອບ : ມຸສາວາທະມີອົງ ໘ ອົງອຸໂປສົດມີ ໘ ອົງ
ທີ່ເອື້ອຕໍ່ການເປັນທູດມີ ໘ ຕິດຖີຍະຂໍ້ວັດປະຕິບັດມີ ໘

## ອຸປະສໍາປະທາ ເປັນຕົ້ນ

ຖາມ : ອຸປະສໍາປະທາມີວາຈາທໍ່ໃດ? ພິກຂຸນີເພິ່ງລຸກຮັບພິກຂຸນີ
ຈັກພວກ ເພິ່ງໃຫ້ອາສະນະແກ່ພິກຂຸນີຈັກພວກ
ພິກຂຸຜູ້ສັ່ງສອນພິກຂຸນີປະກອບດ້ວຍຄຸນສົມບັດທໍ່ໃດ?

ຕອບ : ອຸປະສໍາປະທາມີວາຈາ ໘ ພິກຂຸນີເພິ່ງລຸກຮັບພິກຂຸນີ ໘ ພວກ
ເພິ່ງໃຫ້ອາສະນະແກ່ພິກຂຸນີ ໘ ພວກ
ພິກຂຸຜູ້ສັ່ງສອນພິກຂຸນີປະກອບດ້ວຍຄຸນສົມບັດ ໘ ຂໍ້

## ຄວາມຂາດ ເປັນຕົ້ນ

ຖາມ : ຄວາມຂາດມີແກ່ບຸກຄົນທໍ່ໃດ? ອາບັດຖຸນລັດໄຈ
ມີແກ່ບຸກຄົນທໍ່ໃດ? ບຸກຄົນທໍ່ໃດ?ບໍ່ຕ້ອງອາບັດ
ອາບັດແລະອະນາບັດຂອງຄົນທັງໝົດມີວັດຖຸແນວດຽວກັນບໍ

ຕອບ : ຄວາມຂາດມີແກ່ບຸກຄົນຜູ້ດຽວ ອາບັດຖຸນລັດໄຈ
ມີແກ່ບຸກຄົນ ໔ ພວກ ບຸກຄົນ ໔ ພວກບໍ່ຕ້ອງອາບັດ
ອາບັດແລະອະນາບັດຂອງຄົນທັງໝົດມີວັດຖຸແນວດຽວກັນ

## ກຳເນື່ອງດ້ວຍຍັດຕິ ເປັນຕົ້ນ

ຖາມ : ອາຄາຕະວັດຖຸມີທີ່ໃດ? ສິ່ງແຕກກັນດ້ວຍເຫດທີ່ໃດ?
ອາບັດຊື່ປະຖະມາປັດຕິກາ ໃນສາດສະໜານີ້ມີທີ່ໃດ?
ການເຮັດດ້ວຍຍັດຕິມີທີ່ໃດ?

ຕອບ : ອາຄາຕະວັດຖຸມີ ໙ ສິ່ງແຕກກັນດ້ວຍເຫດ ໙ ຢ່າງ
ອາບັດຊື່ປະຖະມາປັດຕິກາໃນສາດສະໜານີ້ມີ ໙ ຢ່າງ
ການເຮັດດ້ວຍຍັດຕິມີ ໙ ຢ່າງ

## ໔. ອະວັນທະນີຍະປຸກຄະລາທິ
## ວ່າດ້ວຍບຸກຄົນບໍ່ຄວນໄຫວ້ ເປັນຕົ້ນ

[໔໗໗] ຖາມ : ບຸກຄົນທີ່ໃດ?ອັນພິກຂຸບໍ່ຄວນຂາບໄຫວ້
ບໍ່ຄວນທຳອັນຊະລີກຳແລະສາມີຈິກຳ ເຮັດແກ່ບຸກຄົນຈັກພວກ
ຕ້ອງອາບັດທຸກກົດ ການຊົງຈີວອນມີກຳນົດທີ່ໃດ?

ຕອບ : ບຸກຄົນ ໑໐ ຈຳພວກ ອັນພິກຂຸບໍ່ຄວນຂາບໄຫວ້
ບໍ່ຄວນທຳອັນຊະລີກຳ ແລະສາມີຈິກຳ
ເຮັດແກ່ບຸກຄົນ ໑໐ ຈຳພວກ ຕ້ອງອາບັດທຸກກົດ
ການຊົງຈີວອນມີກຳນົດ ໑໐ ມື້

## ໃຫ້ຈີວອນ ເປັນຕົ້ນ

ຖາມ : ຈີວອນຄວນໃຫ້ແກ່ບຸກຄົນໃນສາດສະໜານີ້ຜູ້ຢູ່ຈຳພັນສາແລ້ວ
ຈັກພວກ ເມື່ອມີຜູ້ຮັບແທນ ຄວນໃຫ້ແກ່ບຸກຄົນຈັກພວກ
ແລະບໍ່ຄວນໃຫ້ແກ່ບຸກຄົນຈັກພວກ

ຕອບ : ຈີວອນຄວນໃຫ້ແກ່ສະຫະທຳມິກ ໕ ໃນສາດສະໜານີ້ຜູ້ຢູ່ຈຳພັນສາແລ້ວ
ເມື່ອມີຜູ້ຮັບແທນ ຄວນໃຫ້ແກ່ບຸກຄົນ ໗ ຈຳພວກ
ແລະບໍ່ຄວນໃຫ້ແກ່ບຸກຄົນ ໑໖ ຈຳພວກ

## ພິກຂຸຢູ່ປະຣິວາດ

ຖາມ : ຊົ່ວ ໑໐໐ ຣາຕີ ພິກຂຸຢູ່ປະຣິວາດປິດອາບັດໄວ້ຈັກຮ້ອຍ
ຕ້ອງຢູ່ປະຣິວາດຈັກຣາຕີຈຶ່ງຈະພົ້ນ

ຕອບ : ຊົ່ວ ໑໐໐ ຣາຕີ ພິກຂຸຢູ່ປະຣິວາດປິດອາບັດໄວ້ ໑,໐໐໐ ຣາຕີ
ຕ້ອງຢູ່ປະຣິວາດ ໑໐ ຣາຕີຈຶ່ງຈະພົ້ນ

## ໂທດແຫ່ງກຳ

ຖາມ : ໂທດແຫ່ງກຳອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ? ກຳທີ່ບໍ່ຖືກຕ້ອງຕາມທຳທັງໝົດ
ທີ່ຕັດໄວ້ໃນເລື້ອງພຣະວິໄນໃນພຣະນະຄອນຈຳປາມີທີ່ໃດ?

ຕອບ : ໂທດແຫ່ງກຳອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ມີ ໑໘ ກຳ
ກຳທີ່ຕັດໄວ້ໃນເລື້ອງພຣະວິໄນໃນພຣະນະຄອນຈຳປາລ້ວນບໍ່ຊອບທຳ

## ກຳສົມບັດ

ຖາມ : ກຳສົມບັດອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ? ກຳທີ່ຊອບທຳທັງໝົດ
ທີ່ຕັດໄວ້ໃນເລື້ອງພຣະວິໄນໃນພຣະນະຄອນຈຳປາມີທີ່ໃດ?

ຕອບ : ກຳສົມບັດອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ມີ ໔ ປະການ
ກຳທີ່ຕັດໄວ້ໃນເລື້ອງພຣະວິໄນໃນພຣະນະຄອນຈຳປາລ້ວນຊອບທຳ

## ກຳ ໖ ຢ່າງ

ຖາມ : ກຳອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ກຳທີ່ຕັດໄວ້ໃນເລື້ອງພຣະວິໄນໃນພຣະນະຄອນຈຳປາ
ທີ່ຊອບທຳມີທີ່ໃດ? ທີ່ບໍ່ຖືກຕ້ອງຕາມທຳມີທີ່ໃດ?

ຕອບ : ກຳອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ມີ ໖ ຢ່າງ ໃນກຳ ໖ ຢ່າງນີ້
ກຳອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກ
ຕັດໄວ້ໃນເລື້ອງພຣະວິໄນໃນພຣະນະຄອນຈຳປາ ທີ່ຊອບທຳມີແນວດຽວ
ທີ່ບໍ່ຖືກຕ້ອງຕາມທຳມີ ໕ ຢ່າງ

## ກຳ ໔ ຢ່າງ

ຖາມ : ກຳອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ? ກຳທີ່ຕັດໄວ້ໃນເລື້ອງພຣະວິໄນ
ໃນພຣະນະຄອນຈຳປາ ທີ່ຊອບທຳມີທີ່ໃດ? ທີ່ບໍ່ຖືກຕ້ອງຕາມທຳມີທີ່ໃດ?
ຕອບ : ກຳອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ມີ ໔ ຢ່າງ
ໃນກຳ ໔ ຢ່າງນີ້ ກຳອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ໃນເລື້ອງພຣະວິໄນໃນພຣະນະຄອນຈຳປາ
ທີ່ຊອບທຳມີແນວດຽວ ທີ່ບໍ່ຖືກຕ້ອງຕາມທຳມີ ໓ ຢ່າງ

## ອາບັດລະງັບ ແລະບໍ່ລະງັບ

ຖາມ : ໃນກອງອາບັດທີ່ພຣະອະນັນຕຊິນນະເຈົ້າຜູ້ໝັ້ນຄົງ
ຜູ້ຊົງເຫັນວິເວກ ຊົງສະແດງແລ້ວນັ້ນ ກອງອາບັດຈັກກອງ
ເວັ້ນສະມະຖະເສຍກໍລະງັບໄດ້ ທ່ານຜູ້ສະຫຼາດໃນວິພັງ
ຂ້າພະເຈົ້າຖາມຂໍ້ນັ້ນ ຂໍທ່ານຈົ່ງບອກ
ຕອບ : ໃນກອງອາບັດທີ່ພຣະອະນັນຕຊິນນະເຈົ້າຜູ້ໝັ້ນຄົງ
ຜູ້ຊົງເຫັນວິເວກ ຊົງສະແດງແລ້ວນັ້ນ ກອງອາບັດກອງດຽວ
ເວັ້ນສະມະຖະເສຍກໍລະງັບໄດ້ ທ່ານຜູ້ສະຫຼາດໃນວິພັງ
ຂ້າພະເຈົ້າຂໍບອກຂໍ້ນັ້ນແກ່ທ່ານ

## ພິກຂຸຜູ້ທຳລາຍສົງໄປສູ່ອະບາຍ

ຖາມ : ພິກຂຸຜູ້ທຳລາຍສົງໄປສູ່ອະບາຍ ອັນພຣະພຸດທະເຈົ້າ
ຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ພິກຂຸຜູ້ທຳລາຍສົງໄປສູ່ອະບາຍ ຕົກນະຮົກຢູ່ຊົ່ວກັບ
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາ
ຜູ້ສູງສັກຕັດໄວ້ ໑໘໔ ພວກ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ພິກຂຸຜູ້ທຳລາຍສົງບໍ່ໄປສູ່ອະບາຍ

ຖາມ : ພິກຂຸຜູ້ທຳລາຍສົງບໍ່ໄປສູ່ອະບາຍ
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ພິກຂຸຜູ້ທຳລາຍສົງບໍ່ໄປສູ່ອະບາຍ
ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນແຫ່ງ
ພຣະຣາຊາຜູ້ສູງສັກຕັດໄວ້ ໑໗ ພວກ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ໝວດ ໗

ຖາມ : ໝວດ ໗ ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ໝວດ ໗ ອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໑໗ ໝວດ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ໕. ໂສລະສະກຳມາທິ

## ວ່າດ້ວຍກຳ ໑໖ ຢ່າງ ເປັນຕົ້ນ

[໕໗໗] ຖາມ : ກຳອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ກຳອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໑໖ ຢ່າງ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ໂທດແຫ່ງກຳ

ຖາມ : ໂທດແຫ່ງກຳອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ

ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ໂທດແຫ່ງກໍາອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໑໘ ຢ່າງ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ກໍາສົມບັດ

ຖາມ : ກໍາສົມບັດອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ກໍາສົມບັດອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໔ ຢ່າງ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ກໍາ ໖

ຖາມ : ກໍາອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ກໍາອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໖ ຢ່າງ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ກໍາ ໔

ຖາມ : ກໍາອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ກໍາອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໔ ຢ່າງ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ປາຣາຊິກ ໔

ຖາມ : ປາຣາຊິກອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ປາຣາຊິກອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໔ ຢ່າງ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ສັງຄາທິເສດ ໑໓

ຖາມ : ສັງຄາທິເສດອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ສັງຄາທິເສດອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໑໓ ຢ່າງ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ
ອະນິຍະຕະ ໒

ຖາມ : ອະນິຍະຕະອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ອະນິຍະຕະອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໒ ສິກຂາບົດ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ນິດສັກຄີ ໓໒

ຖາມ : ນິດສັກຄີອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທີ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ນິດສັກຄີອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໓໒ ສິກຂາບົດ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ປາຈິດຕີ ໑໗໗

ຖາມ : ປາຈິດຕີອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທໍ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ປາຈິດຕີອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໑໗໗ ສິກຂາບົດ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ປະຕິເທສະນີຍະ ໑໘

ຖາມ : ປະຕິເທສະນີຍະອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທໍ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ປະຕິເທສະນີຍະອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໑໘ ສິກຂາບົດ
ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ

## ເສຂິຍະ ໗໕

ຖາມ : ເສຂິຍະອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ທໍ່ໃດ?
ຂ້າພະເຈົ້າທັງຫຼາຍຂໍຟັງວິໄສຂອງທ່ານຜູ້ຮູ້ແຈ້ງພຣະວິໄນ
ຕອບ : ເສຂິຍະອັນພຣະພຸດທະເຈົ້າຜູ້ເປັນເຜົ່າພັນ
ແຫ່ງພຣະຣາຊາຜູ້ສູງສັກຕັດໄວ້ ໗໕ ສິກຂາບົດ

ຂໍທ່ານຈົ່ງຟັງວິໄສຂອງຂ້າພະເຈົ້າຜູ້ຮູ້ແຈ້ງພຣະວິໄນ
ບັນຫາຂໍ້ໃດ ທ່ານຖາມແລ້ວດ້ວຍດີພຽງໃດ
ບັນຫາຂໍ້ນັ້ນຂ້າພະເຈົ້າກໍຕອບແລ້ວດ້ວຍດີ ພຽງນັ້ນ
ອັນໜຶ່ງ ໃນຄຳຖາມແລະຄຳຕອບຈະບໍ່ອ້າງເຖິງສູດອັນໃດ? ບໍ່ມີແລ

**ທຸຕິຍະຄາຖາສັງຄນິກະ ຈົບ**

# ເສທະໂມຈະນະຄາຖາ

# ວ່າດ້ວຍຄາຖາທີ່ເຮັດໃຫ້ເຫື່ອແຕກ

## ໑. ອະວິບປະວາສະປັນຫາ

### ປັນຫາວ່າດ້ວຍການບໍ່ຢູ່ປາສະຈາກ

[໔໗໙] ພິກຂຸທັງຫຼາຍບໍ່ຢູ່ຮ່ວມກັບພິກຂຸນີທັງຫຼາຍ
ຄວາມສະນິດຊິດເຊື້ອບາງຢ່າງໃນບຸກຄົນນັ້ນເຮັດບໍ່ໄດ້
ຍ້ອນບໍ່ຢູ່ປາສະຈາກບໍ່ຕ້ອງອາບັດ
ປັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ຄະຣຸພັນທີ່ບໍ່ເພິ່ງສະລະ ບໍ່ເພິ່ງແຈກ ອັນພຣະຜູ້ມີພຣະພາກເຈົ້າ
ຜູ້ສະແຫວງຫາຄຸນອັນຍິ່ງໃຫຍ່ຕັດໄວ້ ໕ ໝວດ
ພິກຂຸຜູ້ສະລະໃຊ້ສອຍບໍ່ຕ້ອງອາບັດ
ປັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ຂ້າພະເຈົ້າບໍ່ກ່າວເຖິງບຸກຄົນ ໑໐ ຈຳພວກ
ບຸກຄົນທີ່ເພິ່ງເວັ້ນ ໑໑ ຈຳພວກ
ພິກຂຸໄຫວ້ຜູ້ແກ່ກວ່າຕ້ອງອາບັດ
ປັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸບໍ່ຖືກສົງລົງອຸກເຂປະນິຍະກຳ ແລະບໍ່ໄດ້ຢູ່ປະຣິວາດ
ບໍ່ເປັນຜູ້ທຳລາຍສົງ ແລະບໍ່ເປັນຜູ້ໄປເຂົ້າຮີດ
ດຳລົງຢູ່ໃນພູມຂອງພິກຂຸຜູ້ມີສັງວາດສະເໝີກັນ
ເປັນຫຍັງນໍຈຶ່ງບໍ່ທົ່ວໄປແກ່ສິກຂາ
ປັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ບຸກຄົນເຂົ້າເຖິງທຳ ສອບຖາມເຖິງກຸສົນທີ່ປະກອບດ້ວຍປະໂຫຍດ
ບໍ່ແມ່ນຜູ້ມີຊີວິດ ບໍ່ແມ່ນຜູ້ຕາຍ ບໍ່ແມ່ນຜູ້ດັບ
ທ່ານຜູ້ຮູ້ທັງຫຼາຍຮຽກບຸກຄົນນັ້ນວ່າແນວໃດ
ປັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ຂ້າພະເຈົ້າບໍ່ກ່າວເຖິງອະໄວຍະວະເໜືອບໍລິເວນບ່າຂຶ້ນໄປ
ເວັ້ນອະໄວຍະວະບໍລິເວນໃຕ້ສາຍບືລົງມາ ພິກຂຸເພິ່ງເປັນປາຣາຊິກ

ຍ້ອນເມຖຸນທຳເປັນປັດໄຈໄດ້ແນວໃດ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸສ້າງກຸດຕິດ້ວຍການຂໍເອົາເອງ ບໍ່ໄດ້ໃຫ້ສົງສະແດງພື້ນທີ່ ເກີນຂະໜາດ ເຊິ່ງເປັນພື້ນທີ່ມີອັນຕະລາຍ
ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ບໍ່ຕ້ອງອາບັດ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸສ້າງກຸດຕິດ້ວຍການຂໍເອົາເອງ ໃຫ້ສົງສະແດງພື້ນທີ່ ໄດ້ຂະໜາດ ເປັນພື້ນທີ່ບໍ່ມີອັນຕະລາຍ ເປັນພື້ນທີ່ບໍ່ມີບໍລິເວນໂດຍຮອບ ຕ້ອງອາບັດ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸບໍ່ພະຍາຍາມອັນໃດ?ທາງກາຍ ແລະບໍ່ເວົ້າກັບຜູ້ອື່ນທາງວາຈາ ແຕ່ຕ້ອງອາບັດໜັກເຊິ່ງເປັນມູນແຫ່ງການຕັດຂາດ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ສັດຕະບຸຣຸດບໍ່ທຳຄວາມຊົ່ວອັນໃດ?ທາງກາຍ ທາງວາຈາ ແລະແມ່ນທາງໃຈ ຖືກສົງນາສະນະແລ້ວ ຊື່ວ່າຖືກນາສະນະດ້ວຍດີ
ຍ້ອນເຫດໃດ ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸບໍ່ເຈລະຈາກັບມະນຸດໃດ ໆ ດ້ວຍວາຈາ ແລະບໍ່ກ່າວຄຳເວົ້າກັບຜູ້ອື່ນ
ຕ້ອງອາບັດທາງວາຈາ ບໍ່ຕ້ອງອາບັດທາງກາຍ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ສິກຂາບົດທັງຫຼາຍ ອັນພຣະພຸດທະເຈົ້າຜູ້ປະເສີດ ພັນນາໄວ້ແລ້ວ ສັງຄາທິເສດ ໔ ສິກຂາບົດ
ພິກຂຸນີຕ້ອງທັງໝົດ ດ້ວຍຄວາມພະຍາຍາມເທື່ອດຽວກັນ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸນີ ໘ ອົງ ອຸປະສົມບົດແຕ່ສົງຝ່າຍດຽວ
ພິກຂຸຮັບຈີວອນຈາກມືຂອງພິກຂຸນີ ໘ ອົງ ຕ້ອງອາບັດຕ່າງກັນ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸ ໔ ຮູບ ຊວນກັນໄປລັກຄະຣຸພັນ ໘ ອົງ ຕ້ອງອາບັດປາຣາຊິກ ອີກ ໑ ອົງ ບໍ່ຕ້ອງອາບັດປາຣາຊິກ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

## ໘. ປາຣາຊິກາທິປັນຫາ

## ບັນຫາວ່າດ້ວຍອາບັດປາຣາຊິກ ເປັນຕົ້ນ

[໘໗໐] ສະຕີຢູ່ຂ້າງໃນແລະພິກຂຸຢູ່ຂ້າງນອກ ປ່ອງໃນເຮືອນນັ້ນກໍບໍ່ມີ
ພິກຂຸຈະເພິ່ງຕ້ອງອາບັດປາຣາຊິກຍ້ອນເມຖຸນທຳເປັນປັດໄຈໄດ້ແນວໃດ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ເມື່ອພິກຂຸຮັບປະເຄນນ້ຳມັນ ນ້ຳເຜີ້ງ ນ້ຳອ້ອຍແລະເນີຍໃສ
ດ້ວຍຕົນເອງແລ້ວເກັບໄວ້ ເມື່ອຍັງບໍ່ລ່ວງ ໆ ມື້
ເມື່ອປັດໄຈມີຢູ່ຈຶ່ງສັນ ຕ້ອງອາບັດ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ອາບັດນິດສັກຄິຍະປາຈິດຕີ ອາບັດສຸດທິກະປາຈິດຕີ
ພິກຂຸຕ້ອງພ້ອມກັນ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸ ໘໐ ອົງ ມາປະຊຸມກັນ ສຳຄັນວ່າພ້ອມພຽງຈຶ່ງເຮັດກຳ
ພິກຂຸຢູ່ໄກ ໑໘ ໂຍດ ເພິ່ງຍັງກຳນັ້ນໃຫ້ໄດ້
ຍ້ອນການແບ່ງພວກເປັນປັດໄຈ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸຕ້ອງຄະຣຸກາບັດທີ່ເຮັດຄືນໄດ້ທັງໝົດ ໖໘ ເວລາດຽວກັນ
ດ້ວຍອາການພຽງກ້າວຂາ ແລະດ້ວຍກ່າວວາຈາ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸນຸ່ງຜ້າອັນຕະຣະວາສົກ ຫົ່ມຜ້າສັງຄາຕີ ໘ ຊັ້ນ
ຜ້າທັງໝົດນັ້ນເປັນນິດສັກຄີ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ຍັດຕິກໍບໍ່ໄດ້ສູດ ກຳວາຈາກໍບໍ່ໄດ້ສູດ
ພຣະຊິນນະເຈົ້າກໍບໍ່ໄດ້ຮັບສັ່ງວ່າ ທ່ານຈົ່ງມາເປັນພິກຂຸເທີ້ນ
ໄຕຣສະຣະນະຄົມເຂົາກໍບໍ່ໄດ້ຮັບ
ແຕ່ອຸປະສຳບົດກຳຂອງບຸກຄົນນັ້ນບໍ່ເສຍ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ບຸກຄົນຜູ້ໂງ່ຈ້າຂ້າສະຕີເຊິ່ງບໍ່ແມ່ນມານດາ ແລະຂ້າບຸຣຸດເຊິ່ງບໍ່ແມ່ນບິດາ
ຂ້າບຸກຄົນຜູ້ບໍ່ແມ່ນອະຣິຍະ ແຕ່ຕ້ອງອະນັນຕະຣິຍະກຳຍ້ອນໂທດນັ້ນ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ບຸກຄົນຜູ້ໂງ່ຈ້າຂ້າສະຕີຜູ້ເປັນມານດາ ແລະຂ້າບຸຣຸດຜູ້ເປັນບິດາ
ເມື່ອຂ້າມານດາບິດາແລ້ວ ບໍ່ຕ້ອງອະນັນຕະຣິຍະກຳຍ້ອນໂທດນັ້ນ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸບໍ່ໂຈດ ບໍ່ສອບສວນ ແລ້ວເຮັດກຳແກ່ບຸກຄົນຜູ້ຢູ່ລັບຫຼັງ
ແລະກຳທີ່ເຮັດແລ້ວ ເປັນອັນເຮັດຊອບແລ້ວ
ທັງກາຣົກສົງກໍບໍ່ຕ້ອງອາບັດ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸໂຈດ ສອບສວນແລ້ວ ເພິ່ງເຮັດກຳແກ່ບຸກຄົນຜູ້ຢູ່ຕໍ່ໜ້າ
ແລະກຳທີ່ເຮັດແລ້ວ ບໍ່ເປັນອັນເຮັດ ທັງກາຣົກສົງກໍຕ້ອງອາບັດ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸຕັດຕ້ອງອາບັດກໍມີ ບໍ່ຕ້ອງອາບັດກໍມີ
ພິກຂຸປົກປິດຕ້ອງອາບັດກໍມີ ບໍ່ຕ້ອງອາບັດກໍມີ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸເວົ້າຈິງຕ້ອງອາບັດໜັກ ເວົ້າຕົວະຕ້ອງອາບັດເບົາ
ເວົ້າຕົວະຕ້ອງອາບັດໜັກ ແລະເວົ້າຈິງຕ້ອງອາບັດເບົາ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

## ໓. ປາຈິດຕິຍາທິບັນຫາ

## ບັນຫາວ່າດ້ວຍອາບັດປາຈິດຕິ ເປັນຕົ້ນ

[໔໗໑] ພິກຂຸໃຊ້ສອຍຈີວອນທີ່ອະທິຖານແລ້ວ ຍ້ອມດ້ວຍນ້ຳຍ້ອມ
ແມ່ນກັບປະກໍເຮັດແລ້ວ ຍັງຕ້ອງອາບັດ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ເມື່ອພຣະອາທິດອັດສະດົງແລ້ວ ພິກຂຸສັນຊີ້ນ ບໍ່ແມ່ນຜູ້ວິກົນຈະລິດ
ບໍ່ແມ່ນຜູ້ມີຈິດຟຸ້ງຊ່ານ ແລະບໍ່ແມ່ນຜູ້ກະສັບກະສ່າຍຍ້ອນເວທະນາ
ແຕ່ບໍ່ຕ້ອງອາບັດ ແລະທຳຂໍ້ນັ້ນພຣະສຸຄົດເຈົ້າຊົງສະແດງໄວ້ແລ້ວ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸບໍ່ແມ່ນຜູ້ມີຈິດກຳໜັດ ບໍ່ແມ່ນຜູ້ມີຈິດຄິດລັກ
ແລະແມ່ນຜູ້ອື່ນພິກຂຸນັ້ນກໍບໍ່ໄດ້ຄິດຈະຂ້າ ຄວາມຂາດຍ່ອມມີແກ່ພິກຂຸນັ້ນຜູ້ໃຫ້ສະຫຼາກ
ເມື່ອພິກຂຸຈັບຕ້ອງອາບັດຖຸນລັດໄຈ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ບໍ່ແມ່ນເສນາສະນະປ່າທີ່ຮູ້ກັນວ່າໜ້າຫວາດຣະແວງ
ແລະບໍ່ແມ່ນສົງໃຫ້ສົມມຸດ ທັງກະຖິນພິກຂຸນັ້ນກໍບໍ່ໄດ້ການ
ພິກຂຸນັ້ນມຸ້ງນຈີວອນໄວ້ ບ່ອນນັ້ນເອງ ແລ້ວໄປໄກເຖິງເຄິ່ງໂຍດ
ເມື່ອອາຣຸນຂຶ້ນ ບໍ່ຕ້ອງອາບັດໃນເລື້ອງນັ້ນນັ້ນເລ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ອາບັດທັງມວນທີ່ເກີດທາງກາຍ ບໍ່ແມ່ນເກີດທາງວາຈາ
ມີວັດຖຸຕ່າງກັນ ພິກຂຸຕ້ອງໃນຂະນະດຽວກັນ ບໍ່ກ່ອນບໍ່ຫຼັງ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ອາບັດທັງມວນທີ່ເກີດທາງວາຈາ ບໍ່ແມ່ນເກີດທາງກາຍ
ມີວັດຖຸຕ່າງກັນ ພິກຂຸຕ້ອງໃນຂະນະດຽວກັນ ບໍ່ກ່ອນບໍ່ຫຼັງ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ບໍ່ມີການເສບເມຖຸນທຳໃນສະຕີ ໓ ຈຳພວກ ບຸຣຸດ ໓ ຈຳພວກ
ຄົນບໍ່ປະເສີດ ໓ ຈຳພວກ ແລະບັນເດາະ ໓ ຈຳພວກ
ແລະບໍ່ມີການເສບເມຖຸນທຳໃນອະໄວຍະວະທີ່ຜາກົດ ແຕ່ມີມູນແຫ່ງການຕັດຂາດ
ຍ້ອນເມຖຸນທຳເປັນປັດໄຈ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸຂໍຈີວອນກັບມານດາ ແລະບໍ່ໄດ້ນ້ອມລາບໄປເພື່ອສົງ
ຍ້ອນເຫດໃດ ພິກຂຸນັ້ນຈຶ່ງຕ້ອງອາບັດ
ແຕ່ບໍ່ຕ້ອງອາບັດຍ້ອນບຸກຄົນຜູ້ເປັນຍາດ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ຜູ້ໂກດຍ່ອມໃຫ້ສົງຍິນດີ ຜູ້ໂກດຍ່ອມຖືກສົງຕິຕຽນ
ກໍທຳທີ່ເປັນເຫດໃຫ້ສົງສັນເສີນຜູ້ໂກດນັ້ນ ຊື່ອັນໃດ?
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ຜູ້ແຊ່ມຊື່ນຍ່ອມໃຫ້ສົງຍິນດີ ຜູ້ແຊ່ມຊື່ນຍ່ອມຖືກສົງຕິຕຽນ
ກໍທຳທີ່ເປັນເຫດໃຫ້ສົງຕິຕຽນຜູ້ແຊ່ມຊື່ນນັ້ນ ຊື່ອັນໃດ?
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸຕ້ອງອາບັດສັງຄາທິເສດ ຖຸນລັດໄຈ ປາຈິດຕີ
ປະຕິເທສະນີຍະ ແລະທຸກກົດໃນຂະນະດຽວກັນ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ທັງ ໔ ມີອາຍຸຄົບ ໔໐ ປີ ທັງ ໔ ມີພຣະອຸປັດຊາອົງດຽວກັນ
ມີອາຈານອົງດຽວກັນ ສູດກຳວາຈາດຽວກັນ

ຄົນໜຶ່ງເປັນອຸປະສຳບັນ ຄົນໜຶ່ງເປັນອະນຸປະສຳບັນ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ຜ້າທີ່ບໍ່ໄດ້ເຮັດກັບປະແລະບໍ່ໄດ້ຍ້ອມດ້ວຍນ້ຳຍ້ອມ
ພິກຂຸນຸ່ງຫົ່ມເດີນທາງໄປຕາມປາຖະໜາ ແລະພິກຂຸນັ້ນບໍ່ຕ້ອງອາບັດ
ທຳນັ້ນພຣະສຸຄົດເຈົ້າຊົງສະແດງແລ້ວ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸນີບໍ່ໃຫ້ ບໍ່ຮັບ ການຮັບບໍ່ມີດ້ວຍເຫດນັ້ນ
ແຕ່ຕ້ອງອາບັດໜັກ ບໍ່ຕ້ອງອາບັດເບົາ ແລະຕ້ອງອາບັດນັ້ນ
ຍ້ອນການໃຊ້ສອຍເປັນປັດໄຈ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸນີບໍ່ໃຫ້ ບໍ່ຮັບ ການຮັບບໍ່ມີດ້ວຍເຫດນັ້ນ
ແຕ່ຕ້ອງອາບັດເບົາ ບໍ່ຕ້ອງອາບັດໜັກ ແລະຕ້ອງອາບັດນັ້ນ
ຍ້ອນການໃຊ້ສອຍເປັນປັດໄຈ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

ພິກຂຸນີຕ້ອງອາບັດໜັກມີສ່ວນເຫຼືອ ປົກປິດໄວ້
ຍ້ອນອາໄສຄວາມບໍ່ເອື້ອເຟື້ອ
ຜູ້ບໍ່ແມ່ນພິກຂຸນີກໍບໍ່ຕ້ອງໂທດ
ບັນຫາຂໍ້ນີ້ ທ່ານຜູ້ສະຫຼາດທັງຫຼາຍຄິດກັນແລ້ວ

**ເສທະໂມຈະນະຄາຖາ ຈົບ**

## ຫົວຂໍ້ປະຈຳເລື່ອງ

ບໍ່ຢູ່ຮ່ວມກັນ ບໍ່ສະລະ ບຸກຄົນ ໑໐ ຈຳພວກ
ບໍ່ຖືກສົງລົງອຸກເຂປະນີຍະກຳ ເຂົ້າເຖິງທຳ ອະໄວຍະວະເໜືອບໍລິເວນບ່າ
ຈາກນັ້ນສ້າງກຸດຕິດ້ວຍການຂໍເອົາເອງ ໘ ສິກຂາບົດ

ບໍ່ພະຍາຍາມທາງກາຍ ແຕ່ຕ້ອງອາບັດໜັກ ບໍ່ທຳຄວາມຊົ່ວທາງກາຍ
ແຕ່ຖືກສົງນາສະນະຊອບແລ້ວ ບໍ່ເຈລະຈາ ສິກຂາບົດ
ຊົນ ໘ ຄົນ ແລະຊົນ ໔ ຄົນ

ສະຕິ ນ້ຳມັນ ນິດສັກຄີ ພິກຂຸ ຍ່າງກ້າວຍ່າງ
ນຸ່ງຜ້າ ບໍ່ສູດຍັດຕິ ຂ້າສະຕີບໍ່ແມ່ນມານດາ ຂ້າບຸຣຸດບໍ່ແມ່ນບິດາ

ບໍ່ໂຈດ ໂຈດ ຕັດ ເວົ້າຈິງ ຜ້າທີ່ອະທິຖານ
ພຣະອາທິດອັດສະດົງຄົດແລ້ວ ບໍ່ກຳໜັດ ບໍ່ແມ່ນເສນາສະນະປ່າ

ອາບັດທາງກາຍ ທາງວາຈາ ສະຕິ ໖ ພວກ ມານດາ
ໂກດແລ້ວໃຫ້ຍິນດີ ແຊ່ມຊື່ນ ຕ້ອງສັງຄາທິເສດ
ສອງຄືນ ຜ້າບໍ່ໄດ້ເຮັດກັບປະ ບໍ່ໃຫ້ ຕ້ອງອາບັດໜັກ
ຄາຖາທີ່ຄິດຈົບເທື່ອໄຫຼ ເປັນບັນຫາທີ່ທ່ານຜູ້ຮູ້ໄດ້ຊີ້ແຈ່ງໄວ້ແລ້ວແລ

# ປັນຈະວັກ

## ວ່າດ້ວຍໝວດ ໕ ໝວດ

### ໑. ກຳວັກ

### ໝວດວ່າດ້ວຍເລື້ອງກຳ

### ກຳ ໔

[໔໗໘] ກຳ(ສັງຄະກຳ) ໔ ຢ່າງ ຄື

໑. ອະປະໂລກະນະກຳ
໒. ຍັດຕິທຸຕິຍະກຳ
໓. ຍັດຕິກຳ
໔. ຍັດຕິຈະຕຸດຖະກຳ

ຖາມ : ກຳ ໔ ຢ່າງນີ້ ຍ່ອມວິບັດໂດຍອາການທີ່ໃດ?

ຕອບ : ກຳ ໔ ຢ່າງນີ້ ຍ່ອມວິບັດໂດຍອາການ ໕ ຢ່າງ ຄື

໑. ໂດຍວັດຖຸ
໒. ໂດຍອະນຸສາວະນາ
໓. ໂດຍຍັດຕິ
໔. ໂດຍສີມາ
໕. ໂດຍບໍລິສັດ

### ວັດຖຸວິບັດ

[໔໗໙] ຖາມ : ກຳຍ່ອມຊື່ວ່າວິບັດໂດຍວັດຖຸແນວໃດ

ຕອບ : ກຳຍ່ອມຊື່ວ່າວິບັດໂດຍວັດຖຸແນວນີ້ ຄື ກຳທີ່ຄວນເຮັດພ້ອມໜ້າ ແຕ່ສົງເຮັດລັບຫຼັງ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ກຳທີ່ຄວນສອບຖາມກ່ອນເຮັດ ແຕ່ສົງບໍ່ສອບຖາມກ່ອນເຮັດ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ກຳທີ່ຄວນເຮັດຕາມປະຕິຍານ ແຕ່ສົງບໍ່ເຮັດຕາມປະຕິຍານ ກຳບໍ່ຊອບທຳ ຊື່ວ່າ ວິບັດໂດຍວັດຖຸ

ສົງໃຫ້ອະມູລະຫະວິໄນແກ່ພິກຂຸຜູ້ຄວນສະຕິວິໄນ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ສົງເຮັດຕັດສະປາປິຍະສິກາກຳແກ່ພິກຂຸຜູ້ຄວນອະມູລະຫະວິໄນ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ສົງເຮັດຕັດຊະນີຍະກຳແກ່ພິກຂຸຜູ້ຄວນຕັດສະປາປີຍະສິກາກຳ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ສົງເຮັດນີຍະສະກຳແກ່ພິກຂຸຜູ້ຄວນຕັດຊະນີຍະກຳ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ສົງເຮັດປັບພາຊະນີຍະກຳແກ່ພິກຂຸຜູ້ຄວນນີຍະສະກຳ ກຳບໍ່ຊອບທຳ ຊື່ວ່າ ວິບັດໂດຍວັດຖຸ

ສົງເຮັດປະຕິສາຣະນີຍະກຳແກ່ພິກຂຸຜູ້ຄວນປັບພາຊະນີຍະກຳ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ສົງເຮັດອຸກເຂປະນີຍະກຳແກ່ພິກຂຸຜູ້ຄວນປະຕິສາຣະນີຍະກຳ ກຳບໍ່ຊອບທຳ ຊື່ວ່າ ວິບັດໂດຍວັດຖຸ

ສົງໃຫ້ປະຣິວາດແກ່ພິກຂຸຜູ້ຄວນອຸກເຂປະນີຍະກຳ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ສົງດຶງພິກຂຸຜູ້ຄວນປະຣິວາດເຂົ້າຫາອາບັດເດີມ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ສົງໃຫ້ມານັດແກ່ພິກຂຸຜູ້ຄວນດຶງເຂົ້າຫາອາບັດເດີມ ກຳບໍ່ຊອບທຳ ຊື່ວ່າວິບັດ ໂດຍວັດຖຸ

ສົງອັບພານພິກຂຸຜູ້ຄວນມານັດ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ສົງໃຫ້ພິກຂຸຜູ້ຄວນອັບພານອຸປະສົມບົດ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ສົງເຮັດອຸໂປສົດໃນມື້ບໍ່ແມ່ນມື້ອຸໂປສົດ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ສົງປະວາຣະນາໃນມື້ບໍ່ແມ່ນມື້ປະວາຣະນາ ກຳບໍ່ຊອບທຳ ຊື່ວ່າວິບັດໂດຍວັດຖຸ

ແນວນີ້ ກຳຍ່ອມຊື່ວ່າວິບັດໂດຍວັດຖຸ

## ຍັດຕິວິບັດ

[໔໗໔] ຖາມ : ກຳຍ່ອມວິບັດໂດຍຍັດຕິແນວໃດ

ຕອບ : ກຳຍ່ອມວິບັດໂດຍຍັດຕິດ້ວຍອາການ ໕ ຢ່າງ ຄື

໑. ບໍ່ຣະບຸວັດຖຸ
໒. ບໍ່ຣະບຸບຸກຄົນ
໓. ບໍ່ຣະບຸສົງ
໔. ບໍ່ຣະບຸຍັດຕິ
໕. ຕັ້ງຍັດຕິພາຍຫຼັງ

ກຳຍ່ອມວິບັດໂດຍຍັດຕິດ້ວຍອາການ ໕ ຢ່າງນີ້

## ອະນຸສາວະນາວິບັດ

[໔໗໕] ຖາມ : ກຳຍ່ອມວິບັດໂດຍອະນຸສາວະນາແນວໃດ

ຕອບ : ກຳຍ່ອມວິບັດໂດຍອະນຸສາວະນາດ້ວຍອາການ ໕ ຢ່າງ ຄື

໑. ບໍ່ຣະບຸວັດຖຸ
໓. ບໍ່ຣະບຸສົງ

໓. ບໍ່ຣະບຸບຸກຄົນ ໔. ຖິ້ມວາຈາປະກາດ

໕. ສູດໃນການບໍ່ຄວນ

ກຳຍ່ອມວິບັດໂດຍອະນຸສາວະນາດ້ວຍອາການ ໕ ຢ່າງນີ້

## ສີມາວິບັດ

[໔໙໖] ຖາມ : ກຳຍ່ອມວິບັດໂດຍສີມາແນວໃດ

ຕອບ : ກຳຍ່ອມວິບັດໂດຍສີມາດ້ວຍອາການ ໑໑ ຢ່າງ ຄື

໑. ສົມມຸດສີມານ້ອຍເກີນ ໒. ສົມມຸດສີມາໃຫຍ່ເກີນ

໓. ສົມມຸດສີມາມີນິມິດຂາດ ໔. ສົມມຸດສີມາໃຊ້ເງົາເປັນນິມິດ

໕. ສົມມຸດສີມາບໍ່ມີນິມິດ ໖. ພິກຂຸຢູ່ພາຍນອກສີມາສົມມຸດສີມາ

໗. ສົມມຸດສີມາໃນແມ່ນ້ຳ ໘. ສົມມຸດສີມາໃນທະເລ

໙. ສົມມຸດສີມາໃນສະເກີດເອງ ໑໐. ຄາບກ່ຽວສີມາດ້ວຍສີມາ

໑໑. ທັບສີມາດ້ວຍສີມາ

ກຳຍ່ອມວິບັດໂດຍສີມາດ້ວຍອາການ ໑໑ ຢ່າງນີ້

## ບໍລິສັດວິບັດ

[໔໙໗] ຖາມ : ກຳຍ່ອມວິບັດໂດຍບໍລິສັດແນວໃດ

ຕອບ : ກຳຍ່ອມວິບັດໂດຍບໍລິສັດດ້ວຍອາການ ໑໒ ຢ່າງ ຄື

໑. ໃນກຳທີ່ສົງຈະຕຸວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າກຳມີຈຳນວນທໍ່ໃດ? ທີ່ຍັງບໍ່ມາ ບໍ່ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ພິກຂຸພ້ອມພຽງກັນ ຄັດຄ້ານ

໒. ໃນກຳທີ່ສົງຈະຕຸວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າກຳມີຈຳນວນທໍ່ໃດ? ທີ່ມາແລ້ວ ແຕ່ບໍ່ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ພິກຂຸພ້ອມພຽງ ກັນຄັດຄ້ານ

໓. ໃນກຳທີ່ສົງຈະຕຸວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າກຳມີຈຳນວນທໍ່ໃດ? ທີ່ມາແລ້ວ ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ແຕ່ພິກຂຸພ້ອມພຽງກັນ ຄັດຄ້ານ

໔. ໃນກຳທີ່ສົງປັນຈະວັກເພິ່ງເຮັດ ຯລຯ

໕. ໃນກຳທີ່ສົງປັນຈະວັກເພິ່ງເຮັດ ຯລຯ

໖. ໃນກຳທີ່ສົງປັນຈະວັກເພິ່ງເຮັດ ຯລຯ

໗. ໃນກຳທີ່ສົງທສະວັກເພິ່ງເຮັດ ຯລຯ

໘. ໃນກຳທີ່ສົງທສະວັກເພິ່ງເຮັດ ຯລຯ

໙. ໃນກຳທີ່ສົງທສະວັກເພິ່ງເຮັດ ຯລຯ

໑໐. ໃນກຳທີ່ສົງວິສະຕິວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າກຳມີຈຳນວນທໍ່ໃດ? ທີ່ຍັງບໍ່ມາ ບໍ່ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ພິກຂຸພ້ອມພຽງກັນຄັດຄ້ານ

໑໑. ໃນກຳທີ່ສົງວິສະຕິວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າກຳມີຈຳນວນທໍ່ໃດ? ທີ່ມາແລ້ວ ແຕ່ບໍ່ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ພິກຂຸພ້ອມພຽງກັນຄັດຄ້ານ

໑໒. ໃນກຳທີ່ສົງວິສະຕິວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າກຳມີຈຳນວນທໍ່ໃດ? ທີ່ມາແລ້ວ ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ແຕ່ພິກຂຸພ້ອມພຽງກັນຄັດຄ້ານ

ກຳຍ່ອມວິບັດໂດຍບໍລິສັດດ້ວຍອາການ ໑໒ ຢ່າງນີ້

## ກຳອັນສົງຈະຕຸວັກເພິ່ງເຮັດ ເປັນຕົ້ນ

[໔໗໗] ໃນກຳທີ່ສົງຈະຕຸວັກເພິ່ງເຮັດ ພິກຂຸປະກະຕັດຕະ ໔ ອົງ ເປັນຜູ້ເຂົ້າກຳ ປະກະຕັດຕະທີ່ເຫຼືອເປັນຜູ້ຄວນສັນທະ ພິກຂຸອົງທີ່ສົງເຮັດກຳນັ້ນ ບໍ່ແມ່ນເປັນຜູ້ເຂົ້າກຳແລະ ບໍ່ຄວນສັນທະ ແຕ່ເປັນຜູ້ຄວນແກ່ກຳ

ໃນກຳທີ່ສົງປັນຈະວັກເພິ່ງເຮັດ ພິກຂຸປະກະຕັດຕະ ໕ ອົງ ເປັນຜູ້ເຂົ້າກຳ ປະກະຕັດຕະທີ່ເຫຼືອເປັນຜູ້ຄວນສັນທະ ພິກຂຸອົງທີ່ສົງເຮັດກຳນັ້ນ ບໍ່ແມ່ນເປັນຜູ້ເຂົ້າກຳແລະບໍ່ຄວນສັນທະ ແຕ່ເປັນຜູ້ຄວນແກ່ກຳ

ໃນກຳທີ່ສົງທະສະວັກເພິ່ງເຮັດ ພິກຂຸປະກະຕັດຕະ ໑໐ ອົງ ເປັນຜູ້ເຂົ້າກຳ ປະກະຕັດຕະ ທີ່ເຫຼືອເປັນຜູ້ຄວນສັນທະ ພິກຂຸອົງທີ່ສົງເຮັດກຳນັ້ນ ບໍ່ແມ່ນເປັນຜູ້ເຂົ້າກຳແລະບໍ່ຄວນສັນທະ ແຕ່ເປັນຜູ້ຄວນແກ່ກຳ

ໃນກຳທີ່ສົງວິສະຕິວັກເພິ່ງເຮັດ ພິກຂຸປະກະຕັດຕະ ໒໐ ອົງ ເປັນຜູ້ເຂົ້າກຳ ປະກະຕັດຕະທີ່ເຫຼືອເປັນຜູ້ຄວນສັນທະ ພິກຂຸອົງທີ່ສົງເຮັດກຳນັ້ນ ບໍ່ແມ່ນເປັນຜູ້ເຂົ້າກຳແລະບໍ່ຄວນສັນທະ ແຕ່ເປັນຜູ້ຄວນແກ່ກຳ

## ກຳ ໔

[໔໗໘] ກຳ ໔ ຢ່າງ ຄື (໑) ອະປະໂລກະນະກຳ (໒) ຍັດຕິກຳ (໓) ຍັດຕິທຸຕິຍະກຳ (໔) ຍັດຕິຈະຕຸດຖະກຳ

ຖາມ : ກຳ ໔ ຢ່າງນີ້ ຍ່ອມວິບັດໂດຍອາການທໍ່ໃດ?

ຕອບ : ກຳ ໔ ຢ່າງນີ້ ຍ່ອມວິບັດໂດຍອາການ ໕ ຢ່າງ ຄື

໑. ໂດຍວັດຖຸ
໒. ໂດຍຍັດຕິ
໓. ໂດຍອະນຸສາວະນາ
໔. ໂດຍສີມາ
໕. ໂດຍບໍລິສັດ

## ວັດຖຸວິບັດ

[໔໙໐] ຖາມ : ກໍາຍ່ອມຊື່ວ່າວິບັດໂດຍວັດຖຸແນວໃດ
ຕອບ : ກໍາຍ່ອມຊື່ວ່າວິບັດໂດຍວັດຖຸແນວນີ້ ຄື
ສົງໃຫ້ບັນເດາະອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າວິບັດໂດຍວັດຖຸ
ສົງໃຫ້ຄົນໄຖຍະສັງວາດອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າວິບັດໂດຍວັດຖຸ
ສົງໃຫ້ຄົນຜູ້ເຂົ້າຮີດເດຍຣະຖີອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າວິບັດໂດຍວັດຖຸ
ສົງໃຫ້ສັດເດຍຣັດສານອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າວິບັດໂດຍວັດຖຸ
ສົງໃຫ້ຄົນຜູ້ຂ້າມານດາອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າວິບັດໂດຍວັດຖຸ
ສົງໃຫ້ຄົນຜູ້ຂ້າບິດາອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າວິບັດໂດຍວັດຖຸ
ສົງໃຫ້ຄົນຜູ້ຂ້າພຣະອະຣະຫັນອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າວິບັດໂດຍວັດຖຸ
ສົງໃຫ້ຄົນຜູ້ປະທຸດສະຮ້າຍພິກຂຸນີອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າ ວິບັດໂດຍວັດຖຸ
ສົງໃຫ້ຄົນຜູ້ທໍາລາຍສົງອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າວິບັດໂດຍວັດຖຸ
ສົງໃຫ້ຄົນຜູ້ຍັງພຣະໂລຫິດທໍ້ອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າວິບັດໂດຍວັດຖຸ
ສົງໃຫ້ຄົນສອງເພດອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າວິບັດໂດຍວັດຖຸ
ສົງໃຫ້ຄົນມີອາຍຸບໍ່ເຖິງ ໒໐ ປີ ອຸປະສົມບົດ ກໍາບໍ່ຊອບທໍາ ຊື່ວ່າວິບັດໂດຍວັດຖຸ
ແນວນີ້ ກໍາຊື່ວ່າຍ່ອມວິບັດໂດຍວັດຖຸ

## ຍັດຕິວິບັດ

[໔໙໑] ຖາມ : ກໍາຍ່ອມວິບັດໂດຍຍັດຕິແນວໃດ
ຕອບ : ກໍາຍ່ອມວິບັດໂດຍຍັດຕິດ້ວຍອາການ ໕ ຢ່າງ ຄື

໑. ບໍ່ຣະບຸວັດຖຸ
໒. ບໍ່ຣະບຸສົງ
໓. ບໍ່ຣະບຸບຸກຄົນ
໔. ບໍ່ຣະບຸຍັດຕິ
໕. ຕັ້ງຍັດຕິພາຍຫຼັງ

ກໍາຍ່ອມວິບັດໂດຍຍັດຕິດ້ວຍອາການ ໕ ຢ່າງນີ້

## ອະນຸສາວະນາວິບັດ

[໔໙໒] ຖາມ : ກໍາຍ່ອມວິບັດໂດຍອະນຸສາວະນາແນວໃດ
ຕອບ : ກໍາຍ່ອມວິບັດໂດຍອະນຸສາວະນາດ້ວຍອາການ ໕ ຢ່າງ ຄື

໑. ບໍ່ຣະບຸວັດຖຸ
໒. ບໍ່ຣະບຸສົງ
໓. ບໍ່ຣະບຸບຸກຄົນ
໔. ຖິ້ມວາຈາປະກາດ

໕. ສູດໃນການບໍ່ຄວນ

ກຳຍ່ອມວິບັດໂດຍອະນຸສາວະນາດ້ວຍອາການ ໕ ຢ່າງນີ້

## ສີມາວິບັດ

[໔໙໓] ຖາມ : ກຳຍ່ອມວິບັດໂດຍສີມາແນວໃດ

ຕອບ : ກຳຍ່ອມວິບັດໂດຍສີມາດ້ວຍອາການ ໑໑ ຢ່າງ ຄື

໑. ສົມມຸດສີມານ້ອຍເກີນ

໒. ສົມມຸດສີມາໃຫຍ່ເກີນ

໓. ສົມມຸດສີມາມີນິມິດຂາດ

໔. ສົມມຸດສີມາໃຊ້ເງົາເປັນນິມິດ

໕. ສົມມຸດສີມາບໍ່ມີນິມິດ

໖. ພິກຂຸຢູ່ພາຍນອກສີມາສົມມຸດສີມາ

໗. ສົມມຸດສີມາໃນແມ່ນ້ຳ

໘. ສົມມຸດສີມາໃນທະເລ

໙. ສົມມຸດສີມາໃນສະເກີດເອງ

໑໐. ຄາບກ່ຽວສີມາດ້ວຍສີມາ

໑໑. ທັບສີມາດ້ວຍສີມາ

ກຳຍ່ອມວິບັດໂດຍສີມາດ້ວຍອາການ ໑໑ ຢ່າງນີ້

## ບໍລິສັດວິບັດ

[໔໙໔] ຖາມ : ກຳຍ່ອມວິບັດໂດຍບໍລິສັດ ແນວໃດ

ຕອບ : ກຳຍ່ອມວິບັດໂດຍບໍລິສັດດ້ວຍອາການ ໑໒ ຢ່າງ ຄື

໑. ໃນກຳທີ່ສົງຈະຕຸວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າຮ່ວມກຳມີຈຳນວນ ທໍ່ໃດທີ່ຍັງບໍ່ມາ ບໍ່ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ພິກຂຸພ້ອມພຽງກັນຄັດຄ້ານ

໒. ໃນກຳທີ່ສົງຈະຕຸວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າຮ່ວມກຳມີຈຳນວນ ທໍ່ໃດທີ່ມາແລ້ວ ແຕ່ບໍ່ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ພິກຂຸພ້ອມພຽງກັນຄັດຄ້ານ

໓. ໃນກຳທີ່ສົງຈະຕຸວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າຮ່ວມກຳມີຈຳນວນທໍ່ໃດທີ່ມາແລ້ວ ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ແຕ່ພິກຂຸພ້ອມພຽງກັນຄັດຄ້ານ

໔. ໃນກຳທີ່ສົງປັນຈະວັກເພິ່ງເຮັດ ฯลฯ

໕. ໃນກຳທີ່ສົງປັນຈະວັກເພິ່ງເຮັດ ฯลฯ

໖. ໃນກຳທີ່ສົງປັນຈະວັກເພິ່ງເຮັດ ฯลฯ

໗. ໃນກຳທີ່ສົງທະສະວັກເພິ່ງເຮັດ ฯลฯ

໘. ໃນກຳທີ່ສົງທະສະວັກເພິ່ງເຮັດ ฯลฯ

໙. ໃນກຳທີ່ສົງທະສະວັກເພິ່ງເຮັດ ຯລຯ

໑໐. ໃນກຳທີ່ສົງວິສະຕິວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າຮ່ວມກຳມີຈຳນວນທໍ່ໃດ? ທີ່ຍັງບໍ່ມາ ບໍ່ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ພິກຂຸພ້ອມພຽງກັນຄັດຄ້ານ

໑໑. ໃນກຳທີ່ສົງວິສະຕິວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າຮ່ວມກຳມີຈຳນວນທໍ່ໃດ? ທີ່ມາແລ້ວ ແຕ່ບໍ່ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ພິກຂຸພ້ອມພຽງກັນຄັດຄ້ານ

໑໘. ໃນກຳທີ່ສົງວິສະຕິວັກເພິ່ງເຮັດ ພິກຂຸທັງຫຼາຍທີ່ເຂົ້າຮ່ວມກຳມີຈຳນວນທໍ່ໃດ? ທີ່ມາແລ້ວ ນຳສັນທະຂອງພິກຂຸຜູ້ຄວນສັນທະມາ ແຕ່ພິກຂຸພ້ອມພຽງກັນຄັດຄ້ານ

ກຳຍ່ອມວິບັດໂດຍບໍລິສັດດ້ວຍອາການ ໑໘ ຢ່າງນີ້

## ອະປະໂລກະນະກຳ ເປັນຕົ້ນ

[໘໙໕] ຖາມ : ອະປະໂລກະນະກຳຍ່ອມເຖິງຖານະທໍ່ໃດ? ຍັດຕິກຳຍ່ອມເຖິງຖານະທໍ່ໃດ? ຍັດຕິທຸຕິຍະກຳຍ່ອມເຖິງຖານະທໍ່ໃດ? ຍັດຕິຈະຕຸດຖະກຳຍ່ອມເຖິງຖານະທໍ່ໃດ?

ຕອບ : ອະປະໂລກະນະກຳຍ່ອມເຖິງຖານະ ໕ ຢ່າງ ຍັດຕິກຳຍ່ອມເຖິງຖານະ ໙ ຢ່າງ ຍັດຕິທຸຕິຍະກຳຍ່ອມເຖິງຖານະ ໗ ຢ່າງ ຍັດຕິຈະຕຸດຖະກຳຍ່ອມເຖິງຖານະ ໗ ຢ່າງ

## ຖານະແຫ່ງອະປະໂລກະນະກຳ

[໘໙໖] ຖາມ : ອະປະໂລກະນະກຳຍ່ອມເຖິງຖານະ ໕ ເຫຼົ່າໃດ

ຕອບ : ຖານະ ໕ ເຫຼົ່ານີ້ ຄື ໂອສາຣະນາ ນິດສາຣະນາ ພັນທຸກຳ ພົມທັນ ທັງກຳລັກສະນະເປັນຄຳຣົບ ໕

ອະປະໂລກະນະກຳຍ່ອມເຖິງຖານະ ໕ ເຫຼົ່ານີ້

## ຖານະແຫ່ງຍັດຕິກຳ

ຖາມ : ຍັດຕິກຳຍ່ອມເຖິງຖານະ ໙ ເຫຼົ່າໃດ

ຕອບ : ຖານະ ໙ ເຫຼົ່ານີ້ ຄື ໂອສາຣະນາ ນິດສາຣະນາ ອຸໂປສົດ ປະວາຣະນາ ສົມມຸດ ການໃຫ້ ການຮັບ ການເລື່ອນປະວາຣະນາອອກໄປ ທັງກຳລັກສະນະເປັນຄຳຣົບ ໙

ຍັດຕິກຳຍ່ອມເຖິງຖານະ ໙ ເຫຼົ່ານີ້

## ຖານະແຫ່ງຍັດຕິທຸຕິຍະກຳ

ຖາມ : ຍັດຕິທຸຕິຍະກຳຍ່ອມເຖິງຖານະ ໆ ເຫຼົ່າໃດ

ຕອບ : ຖານະ ໆ ເຫຼົ່ານີ້ ຄື ໂອສາຣະນາ ນິດສາຣະນາ ສົມມຸດ ການໃຫ້ ການຖອນ ການສະແດງ ທັງກຳລັກສະນະເປັນຄຳຣົບ ໆຍັດຕິທຸຕິຍະກຳຍ່ອມເຖິງຖານະ ໆ ເຫຼົ່ານີ້ ຖານະແຫ່ງຍັດຕິຈະຕຸດຖະກຳ

ຖາມ : ຍັດຕິຈະຕຸດຖະກຳຍ່ອມເຖິງຖານະ ໆ ເຫຼົ່າໃດ

ຕອບ : ຖານະ ໆ ເຫຼົ່ານີ້ ຄື ໂອສາຣະນາ ນິດສາຣະນາ ສົມມຸດ ການໃຫ້ ນິກຄະຫະ ສະມະນຸພາດ ທັງກຳລັກສະນະເປັນຄຳຣົບ ໆ

ຍັດຕິຈະຕຸດຖະກຳຍ່ອມເຖິງຖານະ ໆ ເຫຼົ່ານີ້

## ກຳອັນສົງຈະຕຸວັກເພິ່ງເຮັດ ເປັນຕົ້ນ

[໔໙໗] ໃນກຳທີ່ສົງຈະຕຸວັກເພິ່ງເຮັດ ພິກຂຸປະກະຕັດຕະ ໔ ອົງ ເປັນຜູ້ເຂົ້າກຳ ປະກະຕັດຕະທີ່ເຫຼືອເປັນຜູ້ຄວນສັນທະ ພິກຂຸອົງທີ່ສົງເຮັດກຳນັ້ນ ບໍ່ແມ່ນເປັນຜູ້ເຂົ້າກຳແລະ ບໍ່ແມ່ນເປັນຜູ້ຄວນສັນທະ ແຕ່ເປັນຜູ້ຄວນແກ່ກຳ

ໃນກຳທີ່ສົງປັນຈະວັກເພິ່ງເຮັດ ໆລໆ ໃນກຳທີ່ສົງທະສະວັກເພິ່ງເຮັດ ໆລໆ

ໃນກຳທີ່ສົງວີສະຕິວັກເພິ່ງເຮັດ ພິກຂຸປະກະຕັດຕະ ໒໐ ອົງ ເປັນຜູ້ເຂົ້າກຳ

ປະກະຕັດຕະທີ່ເຫຼືອເປັນຜູ້ຄວນສັນທະ ພິກຂຸອົງທີ່ສົງເຮັດກຳນັ້ນ ບໍ່ແມ່ນເປັນຜູ້ເຂົ້າກຳ ແລະບໍ່ແມ່ນເປັນຜູ້ຄວນສັນທະ ແຕ່ເປັນຜູ້ຄວນແກ່ກຳ

**ກຳວັກທີ ໑ ຈົບ**

## ໒. ອັດຖະວະສະວັກ

## ໝວດວ່າດ້ວຍອຳນາດປະໂຫຍດຊົງບັນຍັດສິກຂາບົດ

[໔໙໘] ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການ ຄື

໑. ເພື່ອການຍອມຮັບວ່າດີແຫ່ງພຣະສົງ

໒. ເພື່ອຄວາມຜາສຸກແຫ່ງພຣະສົງ

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການ ຄື

໑. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ

໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສິນດີງາມ

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການ ຄື

໑. ເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໔. ເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການ ຄື

໑. ເພື່ອອັດກັ້ນເວນທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໔. ເພື່ອກຳຈັດເວນທັງຫຼາຍອັນຈະບັງເກີດໃນອະນາຄົດ

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການ ຄື

໑. ເພື່ອອັດກັ້ນໂທດທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໔. ເພື່ອກຳຈັດໂທດທັງຫຼາຍອັນຈະບັງເກີດໃນອະນາຄົດ

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການ ຄື

໑. ເພື່ອອັດກັ້ນໄພທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໔. ເພື່ອກຳຈັດໄພທັງຫຼາຍອັນຈະບັງເກີດໃນອະນາຄົດ

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດ ປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດ ປະໂຫຍດ ໔ ປະການ ຄື

໑. ເພື່ອອັດກັ້ນອະກຸສົນທຳທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໔. ເພື່ອກຳຈັດອະກຸສົນທຳທັງຫຼາຍອັນຈະບັງເກີດໃນອະນາຄົດ

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດ ປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດ ປະໂຫຍດ ໔ ປະການ ຄື

໑. ເພື່ອອະນຸເຄາະຄະລິຫັດທັງຫຼາຍ

໔. ເພື່ອທຳລາຍການແບ່ງເປັນພັກເປັນພວກ ຂອງພິກຂຸຜູ້ມີຄວາມປາຖະໜາຊົ່ວ ຊາມທັງຫຼາຍ

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດ ປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດ ປະໂຫຍດ ໔ ປະການ ຄື

໑. ເພື່ອຄວາມເຫຼື້ອມໃສຂອງເຫຼົ່າຊົນທີ່ຍັງບໍ່ເຫຼື້ອມໃສ

໔. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງເຫຼົ່າຊົນທີ່ເຫຼື້ອມໃສແລ້ວ

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດ ປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດ ປະໂຫຍດ ໔ ປະການ ຄື

໑. ເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ

໔. ເພື່ອເອື້ອເຟື້ອພຣະວິໄນ

ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດແກ່ສາວົກທັງຫຼາຍ ໂດຍອາໄສອຳນາດ ປະໂຫຍດ ໔ ປະການນີ້

**ອັດຖະວະສະວັກທີ ໔ ຈົບ**

## ໓. ປັນຍັດຕະວັກ

## ໝວດວ່າດ້ວຍເລື້ອງທີ່ຊົງບັນຍັດ

## ຊົງບັນຍັດປາຕິໂມກ ເປັນຕົ້ນ

[໔໙໙] ພຣະຕະຖາຄົດເຈົ້າຊົງບັນຍັດປາຕິໂມກແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການ ຯລຯ ຊົງບັນຍັດປາຕິໂມກຂຸດເທດ ຯລຯ ຊົງບັນຍັດການງົດປາຕິໂມກ ຯລຯ ຊົງບັນຍັດປະວາຣະນາ ຯລຯ ຊົງບັນຍັດການງົດປະວາຣະນາ ຯລຯ ຊົງບັນຍັດຕັດຊະນີຍະກຳ ຯລຯ ຊົງບັນຍັດນິຍະສະກຳ ຯລຯ ຊົງບັນຍັດປັບພາຊະນີຍະກຳ ຯລຯ ຊົງບັນຍັດປະຕິສາຣະນີຍະກຳ ຯລຯ ຊົງບັນຍັດອຸກເຂປະນີຍະກຳ ຯລຯ ຊົງບັນຍັດການໃຫ້ປະຣິວາດ ຯລຯ ຊົງບັນຍັດການດຶງເຂົ້າຫາອາບັດເດີມ ຯລຯ ຊົງບັນຍັດການໃຫ້ມານັດ ຯລຯ ຊົງບັນຍັດອັບພານ ຯລຯ ຊົງບັນຍັດໂອສາຣະນີຍະກຳ ຯລຯ ຊົງບັນຍັດນິດສາຣະນີຍະກຳ ຯລຯ ຊົງບັນຍັດການອຸປະສົມບົດ ຯລຯ ຊົງບັນຍັດ ອະປະໂລກະນະກຳ ຯລຯ ຊົງບັນຍັດຍັດຕິກຳ ຯລຯ ຊົງບັນຍັດຍັດຕິທຸຕິຍະກຳ ຯລຯ ຊົງບັນຍັດຍັດຕິຈະຕຸດຖະກຳ ຯລຯ

**ປັນຍັດຕະວັກທີ ໓ ຈົບ**

## ໔. ອະປັນຍັດເຕປັນຍັດຕະວັກ

## ໝວດວ່າດ້ວຍຊົງບັນຍັດໃນເມື່ອຍັງບໍ່ໄດ້ບັນຍັດ

[໕໐໐] ຯລຯ ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດທີຍັງບໍ່ໄດ້ບັນຍັດ ຊົງບັນຍັດເພີ່ມເຕີມສິກຂາບົດທີ່ຊົງບັນຍັດໄວ້ແລ້ວ ຯລຯ ຊົງບັນຍັດສຳມຸຂາວິໄນ ຯລຯ ຊົງບັນຍັດສະຕິວິໄນ ຯລຯ ຊົງບັນຍັດອະມູລະຫະວິໄນ ຯລຯ ຊົງບັນຍັດປະຕິນຍາຕະກະຣະນະ ຯລຯ ຊົງບັນຍັດເຍພຸຍຍະສິກາ ຯລຯ ຊົງບັນຍັດຕັດສະປາປີຍະສິກາ ຯລຯ ຊົງບັນຍັດຕິນະວັດຖາຣະກະ ແກ່ສາວົກທັງຫຼາຍ ຍ້ອນອາໄສອຳນາດປະໂຫຍດ ໒ ປະການ ຄື

໑. ເພື່ອຄວາມຍອມຮັບວ່າດີແຫ່ງພຣະສົງ

໒. ເພື່ອຄວາມຜາສຸກແຫ່ງພຣະສົງ

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການ ຄື

໑. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ

໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສີນດີງາມ

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການ ຄື

໑. ເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໔. ເພື່ອກຳຈັດອາສະວະອັນຈະບັງເກີດໃນອະນາຄົດ

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການ ຄື

໑. ເພື່ອອັດກັ້ນເວນທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໔. ເພື່ອກຳຈັດເວນທັງຫຼາຍອັນຈະບັງເກີດໃນອະນາຄົດ

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການ ຄື

໑. ເພື່ອອັດກັ້ນໂທດທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໔. ເພື່ອກຳຈັດໂທດທັງຫຼາຍອັນຈະບັງເກີດໃນອະນາຄົດ

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໔ ປະການ ຄື

໑. ເພື່ອອັດກັ້ນໄພທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໔. ເພື່ອກຳຈັດໄພທັງຫຼາຍອັນຈະບັງເກີດໃນອະນາຄົດ

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການ ຄື

໑. ເພື່ອອັດກັ້ນອະກຸສົນທຳທັງຫຼາຍອັນຈະບັງເກີດໃນປັດຈຸບັນ

໒. ເພື່ອກຳຈັດອະກຸສົນທຳທັງຫຼາຍອັນຈະບັງເກີດໃນອະນາຄົດ

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການ ຄື

໑. ເພື່ອອະນຸເຄາະຄະລິຫັດທັງຫຼາຍ

໒. ເພື່ອທຳລາຍການແບ່ງເປັນພັກເປັນພວກຂອງພິກຂຸຜູ້ມີຄວາມປາຖະໜາຊົ່ວຊາມທັງຫຼາຍ

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການ ຄື

໑. ເພື່ອຄວາມເຫຼື້ອມໃສຂອງເຫຼົ່າຊົນທີ່ຍັງບໍ່ເຫຼື້ອມໃສ

໒. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງເຫຼົ່າຊົນທີ່ເຫຼື້ອມໃສແລ້ວ

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການນີ້

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການ ຄື

໑. ເພື່ອຄວາມຕັ້ງໝັ້ນແຫ່ງພຣະສັດທຳ

໒. ເພື່ອເອື້ອເຟື້ອພຣະວິໄນ

ພຣະຕະຖາຄົດເຈົ້າຊົງບັນຍັດຕິນະວັດຖາຣະກະແກ່ສາວົກທັງຫຼາຍ ໂດຍອາໄສອຳນາດປະໂຫຍດ ໒ ປະການນີ້

**ອະປັນຍັດເຕປັນຍັດຕະວັກທີ ໒ ຈົບ**

# ໕. ນະວະສັງຄະຫະວັກ

## ໝວດວ່າດ້ວຍສັງຄະຫະ ໙
## ສັງຄະຫະ ໙ ຢ່າງ

[໕໐໑] ສັງຄະຫະ ມີ ໙ ຢ່າງ ຄື

໑. ວັດຖຸສັງຄະຫະ
໒. ວິບັດສັງຄະຫະ
໓. ອາບັດສັງຄະຫະ
໔. ນິທານສັງຄະຫະ
໕. ບຸກຄົນສັງຄະຫະ
໖. ຂັນທະສັງຄະຫະ
໗. ສະມຸດຖານະສັງຄະຫະ
໘. ອະທິກະຣະນະສັງຄະຫະ
໙. ສະມະຖະສັງຄະຫະ

## ໃຫ້ບອກເລື້ອງ

ເມື່ອອະທິກອນເກີດຂຶ້ນແລ້ວ ຖ້າຄູ່ຄວາມທັງສອງມາເຖິງ ສົງເພິ່ງໃຫ້ທັງສອງບອກເລື້ອງ ເມື່ອໃຫ້ທັງສອງບອກເລື້ອງແລ້ວ ເພິ່ງຟັງປະຕິຍານຂອງທັງສອງ ເມື່ອຟັງປະຕິຍານຂອງທັງສອງແລ້ວ ເພິ່ງເວົ້າກັບຄູ່ຄວາມທັງສອງວ່າ ເມື່ອພວກເຮົາລະງັບອະທິກອນນີ້ແລ້ວ ທ່ານທັງສອງຈັກຍິນດີບໍ ຖ້າທັງສອງຮັບວ່າ ຂ້າພະເຈົ້າທັງສອງຈັກຍິນດີ ສົງເພິ່ງຮັບອະທິກອນນັ້ນໄວ້ ຖ້າບໍລິສັດມີອະລັດຊີຫຼາຍ ສົງເພິ່ງລະງັບດ້ວຍອຸບພາຫິກາ ຖ້າບໍລິສັດມີຄົນຊົ່ວຫຼາຍ ສົງເພິ່ງສະແຫວງຫາພຣະວິໄນທອນ ອະທິກອນນັ້ນຈະລະງັບໂດຍທຳ ໂດຍວິໄນ ໂດຍສັດຖຸສາດໃດ ສົງເພິ່ງລະງັບອະທິກອນນັ້ນໂດຍແນວນັ້ນ

## ເພິ່ງຮູ້ວັດຖຸ ເປັນຕົ້ນ

ເພິ່ງຮູ້ວັດຖຸ ເພິ່ງຮູ້ໂຄດ ເພິ່ງຮູ້ຊື່ ເພິ່ງຮູ້ອາບັດ
ຄຳວ່າ ເມຖຸນທຳ ເປັນທັງວັດຖຸ ເປັນທັງໂຄດ
ຄຳວ່າ ປາຣາຊິກ ເປັນທັງຊື່ ເປັນທັງອາບັດ
ຄຳວ່າ ອະທິນນາທານ ເປັນທັງວັດຖຸ ເປັນທັງໂຄດ
ຄຳວ່າ ປາຣາຊິກ ເປັນທັງຊື່ ເປັນທັງອາບັດ
ຄຳວ່າ ມະນຸດສະວິກຄະຫະ ເປັນທັງວັດຖຸ ເປັນທັງໂຄດ
ຄຳວ່າ ປາຣາຊິກ ເປັນທັງຊື່ ເປັນທັງອາບັດ
ຄຳວ່າ ອຸດຕະຣິມະນຸດສະທຳ ເປັນທັງວັດຖຸ ເປັນທັງໂຄດ
ຄຳວ່າ ປາຣາຊິກ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ສຸກກະວິສັດຖີ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ກາຍະສັງສັກຄະ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ທຸດຖຸນລະວາຈາ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ອັດຕະກາມະ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ສັນຈະຣິດຕະ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ໃຫ້ສ້າງກຸດຕິດ້ວຍການຂໍເອົາເອງ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ໃຫ້ສ້າງວິຫານໃຫຍ່ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ຕາມກຳຈັດພິກຂຸດ້ວຍທຳມີໂທດເຖິງປາຣາຊິກອັນບໍ່ມີມູນ ເປັນທັງວັດຖຸເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ອ້າງເລດບາງຢ່າງແຫ່ງອະທິກອນເລື້ອງອື່ນແລ້ວ ຕາມກຳຈັດພິກຂຸດ້ວຍທຳມີໂທດເຖິງປາຣາຊິກ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ພິກຂຸຜູ້ທຳລາຍສົງບໍ່ຍອມສະລະກຳ ຍ້ອນການສູດສະມະນຸພາດຄົບ ໓ ຄັ້ງ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ພິກຂຸຜູ້ປະພຶດຕາມພິກຂຸຜູ້ທຳລາຍສົງບໍ່ຍອມສະລະກຳ ຍ້ອນການສູດ ສະມະນຸພາດຄົບ ໓ ຄັ້ງ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ພິກຂຸຜູ້ວ່າຍາກບໍ່ຍອມສະລະກຳ ຍ້ອນການສູດສະມະນຸພາດຄົບ ໓ ຄັ້ງ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ

ຄຳວ່າ ພິກຂຸຜູ້ປະທຸດສະຮ້າຍສະກຸນບໍ່ຍອມສະລະກຳ ຍ້ອນການສູດສະມະນຸພາດຄົບ ໓ ຄັ້ງ ເປັນທັງວັດຖຸ ເປັນທັງໂຄດ

ຄຳວ່າ ສັງຄາທິເສດ ເປັນທັງຊື່ ເປັນທັງອາບັດ ๆລๆ
ຄຳວ່າ ອາໄສຄວາມບໍ່ສົນໃຈຖ່າຍອຸດຈາຣະ ປັດສາວະ ຫຼືບ້ວນນ້ຳລາຍລົງໃນນ້ຳ
ເປັນທັງວັດຖຸ ເປັນທັງໂຄດ
ຄຳວ່າ ທຸກກົດ ເປັນທັງຊື່ ເປັນທັງອາບັດ

**ນະວະສັງຄະຫະວັກທີ ៥ ຈົບ**

## ຫົວຂໍ້ປະຈຳວັກ

ອະປະໂລກະນະກຳ ຍັດຕິກຳ ຍັດຕິທຸຕິຍະກຳ
ຍັດຕິຈະຕຸດຖະກຳ ວັດຖຸ ຍັດຕິ ອະນຸສາວະນາ ສີມາ ບໍລິສັດ
ພ້ອມພຽງ ສອບຖາມ ປະຕິຍານ ຄວນສະຕິວິໄນ
ວັດຖຸ ສົງ ບຸກຄົນ ຍັດຕິ ຕັ້ງຍັດຕິພາຍຫຼັງ
ວັດຖຸ ສົງ ບຸກຄົນ ສູດປະກາດ
ສູດໃນການບໍ່ຄວນ ສີມານ້ອຍເກີນ ສີມາໃຫຍ່ເກີນ
ສີມາມີນິມິດຂາດ ສີມາໃຊ້ເງົາເປັນນິມິດ ສີມາບໍ່ມີນິມິດ
ຢູ່ນອກສີມາສົມມຸດສີມາ ສົມມຸດສີມາໃນແມ່ນ້ຳ
ໃນທະເລ ໃນສະເກີດເອງ ຄາບກ່ຽວສີມາ
ທັບສີມາດ້ວຍສີມາ ກຳທີ່ສົງຈະຕຸວັກເພິ່ງເຮັດ
ກຳທີ່ສົງປັນຈະວັກເພິ່ງເຮັດ
ກຳທີ່ສົງທະສະວັກເພິ່ງເຮັດ ກຳທີ່ສົງວິສະຕິວັກເພິ່ງເຮັດ
ບໍ່ນຳສັນທະມາ ນຳສັນທະມາ ຜູ້ເຂົ້າກຳ
ຜູ້ຄວນສັນທະ ຜູ້ຄວນແກ່ກຳ
ອະປະໂລກະນະກຳ ៥ ຖານະ ຍັດຕິກຳ ໙ ຖານະ
ຍັດຕິທຸຕິຍະກຳ ៗ ຖານະ ຍັດຕິຈະຕຸດຖະກຳ ៗ ຖານະ
ຍອມຮັບວ່າດີ ຄວາມຜາສຸກ ບຸກຄົນຜູ້ໜ້າດ້ານ
ພິກຂຸຜູ້ມີສິນເປັນທີ່ຮັກ ອາສະວະ
ເວນ ໂທດ ໄພ ອະກຸສົນທຳ ຄະລິຫັດ
ຜູ້ປາຖະໜາຊົ່ວຊາມ ຊຸມຊົນຜູ້ຍັງບໍ່ເຫຼື້ອມໃສ
ຊຸມຊົນຜູ້ເຫຼື້ອມໃສແລ້ວ ຄວາມຕັ້ງຢູ່ແຫ່ງພຣະສັດທຳ
ເອື້ອເຟື້ອພຣະວິໄນ ປາຕິໂມກຂຸດເທດ
ງົດປາຕິໂມກ ງົດປະວາຣະນາ ຕັດຊະນີຍະກຳ ນິຍະສະກຳ
ປັບພາຊະນີຍະກຳ ປະຕິສາຣະນີຍະກຳ ອຸກເຂປະນີຍະກຳ ປະຣິວາດ

ອາບັດເດີມ ມານັດ ອັບພານ ໂອສາຣະນາ ນິດສາຣະນາ ອຸປະສົມບົດ

ອະປະໂລກະນະກຳ ຍັດຕິກຳ ຍັດຕິທຸຕິຍະກຳ ຍັດຕິຈະຕຸດຖະກຳ ຍັງບໍ່ໄດ້ຊົງບັນຍັດ ຊົງບັນຍັດຊ້ຳ ສຳມຸຂາວິໄນ ສະຕິວິໄນ

ອະມູລະຫະວິໄນ ປະຕິນຍາຕະກະຣະນະ ເຍພຸຍຍະສິກາ ຕັດສະປາປິຍະສິກາ ຕິນະວັດຖາຣະກະ ວັດຖຸ ວິບັດ ອາບັດ ນິທານ ບຸກຄົນ

ຂັນ ສະມຸດຖານ ອະທິກອນ ສະມະຖະ ສັງຄະຫະ ຊື່ ອາບັດ ດັ່ງນີ້ແລ

**ຄຳພີປະຣິວານ ຈົບ**

## ປະຣິໂຍສານຄາຖາ

ກຳພຣະວິໄນທອນ ຜູ້ເຮືອງນາມ ມີປັນຍາຫຼາຍ ຊົງສຸຕະ ມີວິຈາຣະນະຍານ ຖາມແນວທາງຂອງທ່ານບູຣະພາຈານໃນບ່ອນນັ້ນ ໆ ຄິດແລ້ວໃຫ້ຂຽນຂໍ້ພິດສະດານແລະສັງເຂບນີ້ໄວ້ໃນສາຍກາງ ຕາມແນວທາງທີ່ວາງໄວ້ ເຊິ່ງຈະນຳຄວາມສະດວກມາໃຫ້ແກ່ເຫຼົ່າສິດ

ຄຳພີນີ້ຮຽກວ່າ "ປະຣິວານ" ມີທຸກເລື້ອງພ້ອມທັງລັກສະນະ ມີອັດຖະໂດຍອັດຖະໃນສັດທຳ ມີທຳໂດຍທຳໃນບັນຍັດ ຫ້ອມລ້ອມພຣະສາດສະໜາ ຄືສາຄອນອ້ອມຮອບຊົມພູທະວີບ ສັນນັ້ນ

ພຣະວິໄນທອນເມື່ອບໍ່ຮູ້ຄຳພີປະຣິວານ ເຫດໃດຈະວິນິດໄສທຳໄດ້ ຄວາມເຄືອບແຄງຂອງພຣະວິໄນທອນທີ່ເກີດໃນວິບັດ ວັດຖຸ ບັນຍັດ ອະນຸບັນຍັດ ບຸກຄົນ ເອກະໂຕບັນຍັດ ອຸພະໂຕບັນຍັດ ໂລກະວັດຊະ ແລະປັນນັດຕິວັດຊະ ຍ່ອມຂາດສິ້ນໄປດ້ວຍຄຳພີປະຣິວານ

ພຣະເຈົ້າຈັກກະພັດສະງ່າງາມໃນກອງທັບ ສັນໃດ
ໄກສອນສະງ່າງາມໃນທ່າມກາງຝູງກວາງ ສັນໃດ
ພຣະອາທິດແຜ່ຊ່ານດ້ວຍຣັດສະໝີເຈີດຈ້າ ສັນໃດ
ພຣະຈັນສ່ອງສະຫວ່າງງົດງາມໃນໝູ່ດາວ ສັນໃດ
ພຣະພົມສະງ່າງາມໃນໝູ່ພົມ ສັນໃດ
ທ່ານຜູ້ນຳສະງ່າງາມໃນທ່າມກາງໝູ່ຊົນ ສັນໃດ
ພຣະສັດທຳແລະພຣະວິໄນຍ່ອມສະງ່າງາມດ້ວຍຄຳພີປະຣິວານ ສັນນັ້ນແລ

**ຈົບບໍລິບູນ**